# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໓໕

## ພຣະອະພິທຳ

### ເຫຼັ້ມທີ ໒

### ວິພັງ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຣົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົມຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ๗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ๗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໔

# ພຣະອະພິທຳ

## ເຫຼັ້ມທີ ໔

# ວິພັງ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ໑. ຂັນທະວິພັງ

## ໑. ສຸດຕັນຕະພາຊະນີ

[໑] ຂັນ ໕ ຄື

໑. ຮູບຂັນ (ກອງຮູບ)
໔. ເວທະນາຂັນ (ກອງເວທະນາ)
໓. ສັນຍາຂັນ (ກອງສັນຍາ)
໔. ສັງຂານຂັນ (ກອງສັງຂານ)
໕. ວິນຍານຂັນ (ກອງວິນຍານ)

## ໑. ຮູບຂັນ

[໔] ບັນດາຂັນ ໕ ນັ້ນ ຮູບຂັນ ເປັນແນວໃດ?

ຮູບແນວໃດແນວໜຶ່ງ ຄື ຮູບທີ່ເປັນອະດີດ ຮູບທີ່ເປັນອະນາຄົດ ຮູບທີ່ເປັນປັດຈຸບັນ ຮູບທີ່ເປັນພາຍໃນຕົນ ຮູບທີ່ເປັນພາຍນອກຕົນ ຮູບຫຍາບ ຮູບລະອຽດ ຮູບຊັ້ນຕ່ຳ ຮູບຊັ້ນປະນີດ ຮູບໄກ ຫຼືຮູບໃກ້ ປະມວນຫຍໍ້ເຂົ້າເປັນກອງດຽວກັນ ນີ້ຮຽກວ່າ ຮູບຂັນ

[໓] ໃນຮູບຂັນນັ້ນ ຮູບທີ່ເປັນອະດີດ ເປັນແນວໃດ?

ຮູບໃດລ່ວງໄປແລ້ວ ດັບໄປແລ້ວ ປາສະຈາກໄປແລ້ວ ປ່ຽນໄປແລ້ວ ເຖິງຄວາມດັບແລ້ວ ເຖິງຄວາມດັບສິ້ນແລ້ວ ທີ່ເກີດຂຶ້ນປາສະຈາກໄປແລ້ວ ທີ່ເປັນອະດີດ ສົງເຄາະເຂົ້າກັບສ່ວນອະດີດ ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔ (ອຸປາທາຍະຮູບ) ນີ້ຮຽກວ່າ ຮູບທີ່ ເປັນອະດີດ

ຮູບທີ່ເປັນອະນາຄົດ ເປັນແນວໃດ?

ຮູບໃດຍັງບໍ່ເກີດ ຍັງບໍ່ເປັນ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດສະເພາະ ຍັງບໍ່ຜາກົດ ຍັງບໍ່ເກີດຂຶ້ນ ຍັງບໍ່ເກີດຂຶ້ນພ້ອມ ຍັງບໍ່ຕັ້ງຂຶ້ນ ຍັງບໍ່ຕັ້ງຂຶ້ນພ້ອມ ທີ່ເປັນອະນາຄົດ ສົງເຄາະເຂົ້າກັບສ່ວນອະນາຄົດ ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສ ມະຫາພູຕະຮູບ ໔ ນີ້ຮຽກວ່າ ຮູບທີ່ເປັນອະນາຄົດ

ຮູບທີ່ເປັນປັດຈຸບັນ ເປັນແນວໃດ?

ຮູບໃດເກີດຢູ່ ເປັນຢູ່ ເກີດພ້ອມ ບັງເກີດ ບັງເກີດສະເພາະ ຜາກົດ ເກີດຂຶ້ນ ເກີດຂຶ້ນພ້ອມ ຕັ້ງຂຶ້ນ ຕັ້ງຂຶ້ນພ້ອມ ທີ່ເປັນປັດຈຸບັນ ສົງເຄາະເຂົ້າກັບສ່ວນປັດຈຸບັນ ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔ ນີ້ຮຽກວ່າ ຮູບທີ່ເປັນປັດຈຸບັນ

[໔] ຮູບທີ່ເປັນພາຍໃນຕົນ ເປັນແນວໃດ?

ຮູບໃດຂອງສັດນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນ ມີສະເພາະບຸກຄົນທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ ມະຫາພູຕະຮູບ ໔ ແລະ ຮູບທີ່ອາໄສມະຫາພູຕະຮູບ ໔ ນີ້ຮຽກວ່າ ຮູບທີ່ເປັນພາຍໃນຕົນ

ຮູບທີ່ເປັນພາຍນອກຕົນ ເປັນແນວໃດ?

ຮູບໃດຂອງສັດອື່ນ ຂອງບຸກຄົນອື່ນນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນ ມີສະເພາະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔ ນີ້ຮຽກວ່າ ຮູບທີ່ເປັນພາຍນອກຕົນ

[໕] ຮູບຫຍາບ ເປັນແນວໃດ?

ຈັກຂາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ນີ້ຮຽກວ່າ ຮູບຫຍາບ

ຮູບລະອຽດ ເປັນແນວໃດ?

ອິດຖິນຊີ ຯລຯ ກະວະລິງກາຣາຫານ ນີ້ຮຽກວ່າ ຮູບລະອຽດ

[໖] ຮູບຊັ້ນຕ່ຳ ເປັນແນວໃດ?

ຮູບໃດຂອງສັດນັ້ນ ໆ ທີ່ໜ້າດູຖູກ ໜ້າຢຽດຢາມ ໜ້າກຽດຊັງ ໜ້າຕຳນິ ບໍ່ໜ້າຍ້ອງຍໍ ເປັນຊັ້ນຕ່ຳ ຮູ້ກັນວ່າເປັນຊັ້ນຕ່ຳ ສົມມຸດກັນວ່າເປັນຊັ້ນຕ່ຳ ບໍ່ໜ້າປາຖະໜາ ບໍ່ໜ້າຮັກ ບໍ່ໜ້າພໍໃຈ ໄດ້ແກ່ ຮູບ ສຽງ ກິ່ນ ຣົດ ແລະໂຜດຖັບພະ ນີ້ຮຽກວ່າ ຮູບຊັ້ນຕ່ຳ

ຮູບຊັ້ນປະນີດ ເປັນແນວໃດ?

ຮູບໃດຂອງສັດນັ້ນ ໆ ທີ່ບໍ່ໜ້າດູຖູກ ບໍ່ໜ້າຢຽດຢາມ ບໍ່ໜ້າກຽດຊັງ ບໍ່ໜ້າຕຳນິ ໜ້າຍ້ອງຍໍ ເປັນຊັ້ນປະນີດ ຮູ້ກັນວ່າເປັນຊັ້ນປະນີດ ສົມມຸດກັນວ່າເປັນຊັ້ນປະນີດໜ້າປາຖະໜາ ໜ້າຮັກ ໜ້າພໍໃຈ ໄດ້ແກ່ ຮູບ ສຽງ ກິ່ນ ຣົດ ແລະໂຜດຖັບພະ ນີ້ຮຽກວ່າ ຮູບຊັ້ນປະນີດ

ເພິ່ງຮູ້ຮູບຊັ້ນຕ່ຳ ຮູບຊັ້ນປະນີດ ໂດຍອາໄສທຽບຄຽງຮູບນັ້ນ ໆ ເປັນຊັ້ນ ໆ ໄປ

[໗] ຮູບໄກ ເປັນແນວໃດ?

ອິດຖີນຊີ ຯລຯ ກະວະລີງກາຣາຫານ ຫຼື ຮູບແມ່ນອື່ນ ມີຢູ່ໃນບ່ອນບໍ່ໃກ້ ໃນບ່ອນບໍ່ໃກ້ຊິດ ໃນບ່ອນໄກ ໃນບ່ອນບໍ່ໃກ້ ນີ້ຮຽກວ່າ ຮູບໄກ

ຮູບໃກ້ ເປັນແນວໃດ?

ຈັກຂາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຫຼື ຮູບແມ່ນອື່ນ ມີຢູ່ໃນບ່ອນໃກ້ ໃນບ່ອນໃກ້ຊິດ ໃນບ່ອນບໍ່ໄກ ໃນບ່ອນໃກ້ ນີ້ຮຽກວ່າ ຮູບໃກ້

ເພິ່ງຮູ້ຮູບໄກ ຮູບໃກ້ ໂດຍອາໄສທຽບຄຽງຮູບນັ້ນ ໆ ເປັນຊັ້ນ ໆ ໄປ

## ໔. ເວທະນາຂັນ

[໘] ບັນດາຂັນ ໕ ນັ້ນ ເວທະນາຂັນ ເປັນແນວໃດ?

ເວທະນາແນວໃດແນວໜຶ່ງ ຄື ເວທະນາທີ່ເປັນອະດີດ ເວທະນາທີ່ເປັນອະນາຄົດ ເວທະນາທີ່ເປັນປັດຈຸບັນ ເວທະນາທີ່ເປັນພາຍໃນຕົນ ເວທະນາທີ່ເປັນພາຍນອກຕົນ ເວທະນາຫຍາບ ເວທະນາລະອຽດ ເວທະນາຊັ້ນຕ່ຳ ເວທະນາຊັ້ນປະນີດ ເວທະນາໄກ ຫຼື ເວທະນາໃກ້ ປະມວນຫຍໍ້ເຂົ້າ ເປັນກອງດຽວກັນ ນີ້ຮຽກວ່າ ເວທະນາຂັນ

[໙] ໃນເວທະນາຂັນນັ້ນ ເວທະນາທີ່ເປັນອະດີດ ເປັນແນວໃດ?

ເວທະນາໃດລ່ວງໄປແລ້ວ ດັບໄປແລ້ວ ປາສະຈາກໄປແລ້ວ ປ່ຽນໄປແລ້ວ ເຖິງຄວາມດັບແລ້ວ ເຖິງຄວາມດັບສິ້ນແລ້ວ ທີ່ເກີດຂຶ້ນປາສະຈາກໄປແລ້ວ ທີ່ເປັນອະດີດ ສົງເຄາະເຂົ້າກັບສ່ວນອະດີດ ໄດ້ແກ່ ສຸກຂະເວທະນາ ທຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາ ນີ້ຮຽກວ່າ ເວທະນາທີ່ເປັນອະດີດ

ເວທະນາທີ່ເປັນອະນາຄົດ ເປັນແນວໃດ?

ເວທະນາໃດຍັງບໍ່ເກີດ ຍັງບໍ່ເປັນ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດສະເພາະ ຍັງບໍ່ຜາກົດ ຍັງບໍ່ເກີດຂຶ້ນ ຍັງບໍ່ເກີດຂຶ້ນພ້ອມ ຍັງບໍ່ຕັ້ງຂຶ້ນ ຍັງບໍ່ຕັ້ງຂຶ້ນພ້ອມ ທີ່ເປັນອະນາຄົດ ສົງເຄາະເຂົ້າກັບສ່ວນອະນາຄົດ ໄດ້ແກ່ ສຸກຂະເວທະນາ ທຸກຂະເວທະນາ ແລະ ອະທຸກຂະມະສຸຂະເວທະນາ ນີ້ຮຽກວ່າ ເວທະນາທີ່ເປັນອະນາຄົດ

ເວທະນາທີ່ເປັນປັດຈຸບັນ ເປັນແນວໃດ?

ເວທະນາໃດເກີດຢູ່ ເປັນຢູ່ ເກີດພ້ອມ ບັງເກີດ ບັງເກີດສະເພາະ ຜາກົດ ເກີດຂຶ້ນ ເກີດຂຶ້ນພ້ອມ ຕັ້ງຂຶ້ນ ຕັ້ງຂຶ້ນພ້ອມ ທີ່ເປັນປັດຈຸບັນ ສົງເຄາະເຂົ້າກັບສ່ວນປັດຈຸບັນ ໄດ້ແກ່ ສຸກຂະເວທະນາ ທຸກຂະເວທະນາແລະອະທຸກຂະມະສຸຂະເວທະນາ ນີ້ຮຽກວ່າ ເວທະນາທີ່ເປັນປັດຈຸບັນ

[໑໐] ເວທະນາທີ່ເປັນພາຍໃນຕົນ ເປັນແນວໃດ?

ເວທະນາໃດຂອງສັດນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນ ມີສະ ເພາະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ ສຸກຂະເວທະນາ ທຸກຂະເວທະນາແລະອະທຸກຂະມະສຸຂະເວທະນາ ນີ້ຮຽກວ່າ ເວທະນາທີ່ເປັນພາຍໃນຕົນ

ເວທະນາທີ່ເປັນພາຍນອກຕົນ ເປັນແນວໃດ?

ເວທະນາໃດຂອງສັດອື່ນ ຂອງບຸກຄົນອື່ນນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນ ມີສະເພາະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ສຸກຂະເວທະນາ ທຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາ ນີ້ຮຽກວ່າ ເວທະນາທີ່ເປັນພາຍນອກຕົນ

[໑໑] ເວທະນາຫຍາບ ເວທະນາລະອຽດ ເປັນແນວໃດ?

ເວທະນາທີ່ເປັນອະກຸສົນເປັນເວທະນາຫຍາບ ເວທະນາທີ່ເປັນກຸສົນແລະອັບພະຍາກະຕະເປັນເວທະນາລະອຽດ ເວທະນາທີ່ເປັນກຸສົນ ແລະອະກຸສົນເປັນເວທະນາຫຍາບ ເວທະນາທີ່ເປັນອັບພະຍາກະຕະເປັນເວທະນາລະອຽດ ທຸກຂະເວທະນາເປັນເວທະນາຫຍາບ ສຸກຂະເວທະນາແລະອະທຸກຂະມະສຸຂະເວທະນາ ເປັນເວທະນາລະອຽດ ສຸກຂະເວທະນາແລະທຸກຂະເວທະນາເປັນເວທະນາຫຍາບ ອະທຸກຂະມະສຸຂະເວທະນາເປັນເວທະນາລະອຽດ ເວທະນາຂອງຜູ້ບໍ່ເຂົ້າສະມາບັດເປັນເວທະນາຫຍາບ ເວທະນາຂອງຜູ້ເຂົ້າສະມາບັດເປັນເວທະນາລະອຽດ ເວທະນາທີ່ເປັນອາລົມຂອງອາສະວະເປັນເວທະນາຫຍາບ ເວທະນາທີ່ບໍ່ເປັນອາລົມຂອງອາສະວະເປັນເວທະນາລະອຽດ

ເພິ່ງຮູ້ເວທະນາຫຍາບ ເວທະນາລະອຽດ ໂດຍອາໄສທຽບຄຽງເວທະນານັ້ນ ໆ ເປັນຊັ້ນ ໆ ໄປ

[໑໘] ເວທະນາຊັ້ນຕ່ຳ ເວທະນາຊັ້ນປະນີດ ເປັນແນວໃດ?

ເວທະນາທີ່ເປັນອະກຸສົນເປັນເວທະນາຊັ້ນຕ່ຳ ເວທະນາທີ່ເປັນກຸສົນແລະອັບພະຍາກະຕະເປັນເວທະນາ ຊັ້ນປະນີດ ເວທະນາທີ່ເປັນກຸສົນແລະອະກຸສົນເປັນເວທະນາຊັ້ນຕ່ຳ ເວທະນາທີ່ເປັນອັບພະຍາກະຕະເປັນເວທະນາຊັ້ນປະນີດ ທຸກຂະເວທະນາເປັນເວທະນາຊັ້ນຕ່ຳ ສຸກຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນເວທະນາຊັ້ນປະນີດ ສຸກຂະເວທະນາແລະທຸກຂະເວທະນາເປັນເວທະນາຊັ້ນຕ່ຳ ອະທຸກຂະມະສຸຂະເວທະນາເປັນເວທະນາຊັ້ນປະນີດ ເວທະນາຂອງຜູ້ບໍ່ເຂົ້າສະມາບັດເປັນເວທະນາຊັ້ນຕ່ຳ ເວທະນາຂອງຜູ້ເຂົ້າສະມາບັດເປັນເວທະນາຊັ້ນປະນີດ ເວທະນາທີ່ເປັນອາລົມຂອງອາສະວະເປັນເວທະນາຊັ້ນຕ່ຳ ເວທະນາທີ່ບໍ່ເປັນອາລົມຂອງອາສະວະເປັນເວທະນາຊັ້ນປະນີດ

ເພິ່ງຮູ້ເວທະນາຊັ້ນຕ່ຳ ເວທະນາຊັ້ນປະນີດ ໂດຍອາໄສທຽບຄຽງເວທະນານັ້ນ ໆ ເປັນຊັ້ນ ໆ ໄປ

[໑໙] ເວທະນາໄກ ເປັນແນວໃດ?

ເວທະນາທີ່ເປັນອະກຸສົນເປັນເວທະນາໄກຈາກເວທະນາທີ່ເປັນກຸສົນ ແລະອັບພະຍາກະຕະ ເວທະນາທີ່ເປັນກຸສົນແລະອັບພະຍາກະຕະເປັນເວທະນາໄກຈາກເວທະນາທີ່ເປັນອະກຸສົນ ເວທະນາທີ່ເປັນກຸສົນເປັນ ເວທະນາໄກຈາກເວທະນາທີ່ເປັນອະກຸສົນແລະອັບພະຍາກະຕະ ເວທະນາທີ່ເປັນອະກຸສົນແລະອັບພະຍາກະຕະ ເປັນເວທະນາໄກຈາກເວທະນາທີ່ເປັນກຸສົນ ເວທະນາທີ່ເປັນອັບພະຍາກະຕະເປັນເວທະນາໄກຈາກເວທະນາທີ່ເປັນກຸສົນແລະອະກຸສົນ ເວທະນາທີ່ເປັນກຸສົນແລະອະກຸສົນເປັນເວທະນາໄກຈາກເວທະນາທີ່ເປັນອັບພະຍາກະຕະ ທຸກຂະເວທະນາເປັນເວທະນາໄກຈາກສຸກຂະເວທະນາແລະອະທຸກຂະມະສຸຂະເວທະນາ ສຸກຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນເວທະນາໄກຈາກທຸກຂະເວທະນາ ສຸກຂະເວທະນາເປັນເວທະນາໄກຈາກທຸກຂະເວທະນາແລະອະທຸກຂະມະສຸຂະເວທະນາ ທຸກຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນເວທະນາໄກຈາກສຸກຂະເວທະນາ ອະທຸກຂະມະສຸຂະເວທະນາເປັນເວທະນາໄກຈາກສຸກຂະເວທະນາແລະທຸກຂະເວທະນາ ສຸກຂະເວທະນາແລະທຸກຂະເວທະນາເປັນເວທະນາໄກຈາກອະທຸກຂະມະສຸຂະເວທະນາ ເວທະນາຂອງຜູ້ບໍ່ເຂົ້າສະມາບັດເປັນເວທະນາໄກຈາກເວທະນາຂອງຜູ້ເຂົ້າສະມາບັດ ເວທະນາຂອງຜູ້ເຂົ້າສະມາບັດເປັນ ເວທະນາໄກຈາກເວທະນາຂອງຜູ້ບໍ່ເຂົ້າສະມາບັດ ເວທະນາທີ່ເປັນອາລົມຂອງອາສະວະເປັນເວທະນາໄກຈາກເວທະນາທີ່ບໍ່ເປັນອາລົມຂອງອາສະວະ ເວທະນາທີ່ບໍ່ເປັນອາລົມຂອງອາສະວະເປັນເວທະນາໄກຈາກເວທະນາທີ່ເປັນອາລົມຂອງອາສະວະ ນີ້ຮຽກວ່າ ເວທະນາໄກ

ເວທະນາໃກ້ ເປັນແນວໃດ?

ເວທະນາທີ່ເປັນອະກຸສົນເປັນເວທະນາໃກ້ກັບເວທະນາທີ່ເປັນອະກຸສົນ ເວທະນາທີ່ເປັນ

ກຸສົນເປັນເວທະນາໃກ້ກັບເວທະນາທີ່ເປັນກຸສົນ ເວທະນາທີ່ເປັນອັບພະຍາກະຕະເປັນເວທະນາໃກ້ກັບເວທະນາທີ່ເປັນອັບພະຍາກະຕະ ທຸກຂະເວທະນາເປັນເວທະນາໃກ້ກັບທຸກຂະເວທະນາ ສຸກຂະເວທະນາເປັນເວທະນາໃກ້ກັບສຸກຂະເວທະນາ ອະທຸກຂະມະສຸຂະເວທະນາເປັນເວທະນາໃກ້ກັບອະທຸກຂະມະສຸຂະເວທະນາ ເວທະນາຂອງຜູ້ບໍ່ເຂົ້າສະມາບັດເປັນເວທະນາໃກ້ກັບເວທະນາຂອງຜູ້ບໍ່ເຂົ້າສະມາບັດ ເວທະນາຂອງຜູ້ເຂົ້າສະມາບັດເປັນເວທະນາໃກ້ກັບເວທະນາຂອງຜູ້ເຂົ້າສະມາບັດ ເວທະນາທີ່ເປັນອາລົມຂອງອາສະວະເປັນເວທະນາໃກ້ກັບເວທະນາທີ່ເປັນອາລົມຂອງອາສະວະ ເວທະນາທີ່ບໍ່ເປັນອາລົມຂອງອາສະວະເປັນເວທະນາໃກ້ກັບເວທະນາທີ່ບໍ່ເປັນອາລົມຂອງອາສະວະ ນີ້ຮຽກວ່າ ເວທະນາໃກ້

ເພິ່ງຮູ້ເວທະນາໄກ ເວທະນາໃກ້ ໂດຍອາໄສທຽບຄຽງເວທະນານັ້ນ ໆ ເປັນຊັ້ນ ໆ ໄປ

## ໓. ສັນຍາຂັນ

[໑໔] ບັນດາຂັນ ໕ ນັ້ນ ສັນຍາຂັນ ເປັນແນວໃດ?

ສັນຍາແນວໃດແນວໜຶ່ງ ຄື ສັນຍາທີ່ເປັນອະດີດ ສັນຍາທີ່ເປັນອະນາຄົດ ສັນຍາທີ່ເປັນປັດຈຸບັນ ສັນຍາທີ່ເປັນພາຍໃນຕົນ ສັນຍາທີ່ເປັນພາຍນອກຕົນ ສັນຍາຫຍາບ ສັນຍາລະອຽດ ສັນຍາຊັ້ນຕ່ຳ ສັນຍາຊັ້ນປະນີດ ສັນຍາໄກ ຫຼື ສັນຍາໃກ້ ປະມວນຫຍໍ້ເຂົ້າເປັນກອງດຽວກັນ ນີ້ຮຽກວ່າ ສັນຍາຂັນ

[໑໕] ໃນສັນຍາຂັນນັ້ນ ສັນຍາທີ່ເປັນອະດີດ ເປັນແນວໃດ?

ສັນຍາໃດລ່ວງໄປແລ້ວ ດັບໄປແລ້ວ ປາສະຈາກໄປແລ້ວ ປ່ຽນໄປແລ້ວ ເຖິງຄວາມດັບແລ້ວ ເຖິງຄວາມດັບສິ້ນແລ້ວ ທີ່ເກີດຂຶ້ນປາສະຈາກໄປແລ້ວ ທີ່ເປັນອະດີດ ສົງເຄາະເຂົ້າກັບສ່ວນອະດີດ ໄດ້ແກ່ ສັນຍາທີ່ເກີດຈາກຈັກຂຸສຳຜັດ ສັນຍາທີ່ເກີດຈາກໂສຕະສຳຜັດ ສັນຍາທີ່ເກີດຈາກຄານະສຳຜັດ ສັນຍາທີ່ເກີດຈາກຊິວຫາສຳຜັດ ສັນຍາທີ່ເກີດຈາກກາຍສຳຜັດ ສັນຍາທີ່ເກີດຈາກມະໂນສຳຜັດ ນີ້ຮຽກວ່າ ສັນຍາທີ່ເປັນອະດີດ

ສັນຍາທີ່ເປັນອະນາຄົດ ເປັນແນວໃດ?

ສັນຍາໃດຍັງບໍ່ເກີດ ຍັງບໍ່ເປັນ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດສະເພາະ ຍັງບໍ່ຜາກົດ ຍັງບໍ່ເກີດຂຶ້ນ ຍັງບໍ່ເກີດຂຶ້ນພ້ອມ ຍັງບໍ່ຕັ້ງຂຶ້ນ ຍັງບໍ່ຕັ້ງຂຶ້ນພ້ອມ ທີ່ເປັນອະນາຄົດ ສົງເຄາະເຂົ້າກັບສ່ວນອະນາຄົດ ໄດ້ແກ່ ສັນຍາທີ່ເກີດຈາກຈັກຂຸສຳຜັດ ຯລຯ ສັນຍາທີ່ເກີດຈາກມະໂນສຳຜັດ ນີ້ຮຽກວ່າ ສັນຍາທີ່ເປັນອະນາຄົດ

ສັນຍາທີ່ເປັນປັດຈຸບັນ ເປັນແນວໃດ?

ສັນຍາໃດເກີດຢູ່ ເປັນຢູ່ ເກີດພ້ອມ ບັງເກີດ ບັງເກີດສະເພາະ ຜາກົດ ເກີດຂຶ້ນ ເກີດ

ຂຶ້ນພ້ອມ ຕັ້ງຂຶ້ນ ຕັ້ງຂຶ້ນພ້ອມ ທີ່ເປັນປັດຈຸບັນ ສົງເຄາະເຂົ້າກັບສ່ວນປັດຈຸບັນ ໄດ້ແກ່ ສັນຍາທີ່ເກີດຈາກຈັກຂຸສຳຜັດ ຯລຯ ສັນຍາທີ່ເກີດຈາກມະໂນສຳຜັດ ນີ້ຮຽກວ່າ ສັນຍາທີ່ເປັນປັດຈຸບັນ

[໑໕] ສັນຍາທີ່ເປັນພາຍໃນຕົນ ເປັນແນວໃດ?

ສັນຍາໃດຂອງສັດນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນ ມີສະເພາະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ ສັນຍາທີ່ເກີດຈາກຈັກຂຸສຳຜັດ ຯລຯ ສັນຍາທີ່ເກີດຈາກມະໂນສຳຜັດ ນີ້ຮຽກວ່າ ສັນຍາທີ່ເປັນພາຍໃນຕົນ

ສັນຍາທີ່ເປັນພາຍນອກຕົນ ເປັນແນວໃດ?

ສັນຍາໃດຂອງສັດອື່ນ ຂອງບຸກຄົນອື່ນນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນ ມີສະເພາະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ ສັນຍາ ທີ່ເກີດຈາກຈັກຂຸສຳຜັດ ຯລຯ ສັນຍາທີ່ເກີດຈາກມະໂນສຳຜັດ ນີ້ຮຽກວ່າ ສັນຍາທີ່ເປັນພາຍນອກຕົນ

[໑໗] ສັນຍາຫຍາບ ສັນຍາລະອຽດ ເປັນແນວໃດ?

ສັນຍາທີ່ເກີດຈາກປະຕິຄະສຳຜັດ ຄືສຳຜັດທີ່ເກີດທາງປັນຈະທະວານ ເປັນສັນຍາຫຍາບ ສັນຍາທີ່ເກີດຈາກອະທິວະຈະນະສຳຜັດ ຄືສຳຜັດທີ່ເກີດທາງມະໂນທະວານ ເປັນສັນຍາລະອຽດ ສັນຍາທີ່ເປັນອະກຸສົນເປັນສັນຍາຫຍາບ ສັນຍາທີ່ເປັນກຸສົນແລະອັບພະຍາກະຕະເປັນສັນຍາລະອຽດ ສັນຍາທີ່ເປັນກຸສົນແລະອະກຸສົນເປັນສັນຍາຫຍາບ ສັນຍາທີ່ເປັນອັບພະຍາກະຕະເປັນສັນຍາລະອຽດ ສັນຍາທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນສັນຍາຫຍາບ ສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາເປັນສັນຍາລະອຽດ ສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາແລະທຸກຂະເວທະນາເປັນສັນຍາຫຍາບ ສັນຍາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນສັນຍາລະອຽດ ສັນຍາຂອງຜູ້ບໍ່ເຂົ້າສະມາບັດເປັນສັນຍາຫຍາບ ສັນຍາຂອງຜູ້ເຂົ້າສະມາບັດເປັນສັນຍາລະອຽດ ສັນຍາທີ່ເປັນອາລົມຂອງອາສະວະເປັນສັນຍາຫຍາບ ສັນຍາທີ່ບໍ່ເປັນອາລົມຂອງອາສະວະເປັນສັນຍາລະອຽດ

ເພິ່ງຮູ້ສັນຍາຫຍາບສັນຍາລະອຽດ ໂດຍອາໄສທຽບຄຽງສັນຍານັ້ນ ໆ ເປັນຊັ້ນ ໆ ໄປ

[໑໘] ສັນຍາຊັ້ນຕ່ຳ ສັນຍາຊັ້ນປະນີດ ເປັນແນວໃດ?

ສັນຍາທີ່ເປັນອະກຸສົນເປັນສັນຍາຊັ້ນຕ່ຳ ສັນຍາທີ່ເປັນກຸສົນແລະອັບພະຍາກະຕະເປັນສັນຍາຊັ້ນປະນີດ ສັນຍາທີ່ເປັນກຸສົນແລະອະກຸສົນເປັນສັນຍາຊັ້ນຕ່ຳ ສັນຍາທີ່ເປັນອັບພະຍາກະຕະເປັນສັນຍາຊັ້ນປະນີດ ສັນຍາທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນສັນຍາຊັ້ນຕ່ຳ ສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາເປັນສັນຍາຊັ້ນປະນີດ ສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະທຸກຂະເວທະນາເປັນສັນຍາຊັ້ນຕ່ຳ ສັນຍາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນສັນຍາຊັ້ນປະນີດ ສັນຍາຂອງຜູ້ບໍ່ເຂົ້າສະມາບັດເປັນສັນຍາ

ຊັ້ນຕ່ຳ ສັນຍາຂອງຜູ້ເຂົ້າສະມາບັດເປັນສັນຍາຊັ້ນປະນີດ ສັນຍາທີ່ເປັນອາລົມຂອງອາສະວະເປັນສັນຍາຊັ້ນຕ່ຳ ສັນຍາທີ່ບໍ່ເປັນອາລົມຂອງອາສະວະເປັນສັນຍາຊັ້ນປະນີດ

ເພິ່ງຮູ້ສັນຍາຊັ້ນຕ່ຳສັນຍາຊັ້ນປະນີດໂດຍອາໄສທຽບຄຽງສັນຍານັ້ນ ໆ ເປັນຊັ້ນ ໆ ໄປ

[໑໙] ສັນຍາໄກ ເປັນແນວໃດ?

ສັນຍາທີ່ເປັນອະກຸສົນເປັນສັນຍາໄກຈາກສັນຍາທີ່ເປັນກຸສົນ ແລະອັບພະຍາກະຕະ ສັນຍາທີ່ເປັນກຸສົນ ແລະອັບພະຍາກະຕະເປັນສັນຍາໄກຈາກສັນຍາທີ່ເປັນອະກຸສົນ ສັນຍາທີ່ເປັນກຸສົນເປັນສັນຍາໄກຈາກສັນຍາທີ່ເປັນອະກຸສົນແລະອັບພະຍາກະຕະ ສັນຍາທີ່ເປັນອະກຸສົນແລະອັບພະຍາກະຕະເປັນສັນຍາໄກຈາກສັນຍາທີ່ເປັນກຸສົນ ສັນຍາທີ່ເປັນອັບພະຍາກະຕະເປັນສັນຍາໄກຈາກສັນຍາທີ່ເປັນກຸສົນແລະອະກຸສົນ ສັນຍາທີ່ເປັນກຸສົນແລະອະກຸສົນເປັນສັນຍາໄກຈາກສັນຍາທີ່ເປັນອັບພະຍາກະຕະ ສັນຍາທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນສັນຍາໄກຈາກສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາ ສັນຍາທີ່ສຳປະຍຸດດ້ວຍສຸຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນສັນຍາໄກຈາກສັນຍາທີ່ສຳປະຍຸດດ້ວຍທຸກຂະເວທະນາ ສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນສັນຍາໄກຈາກສັນຍາທີ່ສຳປະຍຸດດ້ວຍທຸກຂະເວທະນາແລະອະທຸກຂະມະສຸຂະເວທະນາ ສັນຍາທີ່ສຳປະຍຸດດ້ວຍທຸກຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນສັນຍາໄກຈາກສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາ ສັນຍາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນສັນຍາໄກຈາກສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາແລະທຸກຂະເວທະນາ ສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາແລະທຸກຂະເວທະນາເປັນສັນຍາໄກຈາກສັນຍາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ສັນຍາຂອງຜູ້ບໍ່ເຂົ້າສະມາບັດເປັນສັນຍາໄກຈາກສັນຍາຂອງຜູ້ເຂົ້າສະມາບັດ ສັນຍາຂອງຜູ້ເຂົ້າສະມາບັດເປັນສັນຍາໄກຈາກສັນຍາຂອງຜູ້ບໍ່ເຂົ້າສະມາບັດ ສັນຍາທີ່ເປັນອາລົມຂອງອາສະວະເປັນສັນຍາໄກຈາກສັນຍາທີ່ບໍ່ເປັນອາລົມຂອງອາສະວະ ສັນຍາທີ່ບໍ່ເປັນອາລົມຂອງອາສະວະເປັນສັນຍາໄກຈາກສັນຍາທີ່ເປັນອາລົມຂອງອາສະວະ ນີ້ຮຽກວ່າສັນຍາໄກ

ສັນຍາໃກ້ ເປັນແນວໃດ?

ສັນຍາທີ່ເປັນອະກຸສົນເປັນສັນຍາໃກ້ກັບສັນຍາທີ່ເປັນອະກຸສົນ ສັນຍາທີ່ເປັນກຸສົນ ເປັນສັນຍາໃກ້ກັບສັນຍາທີ່ເປັນກຸສົນ ສັນຍາທີ່ເປັນອັບພະຍາກະຕະເປັນສັນຍາໃກ້ກັບສັນຍາທີ່ເປັນອັບພະຍາກະຕະ ສັນຍາທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນສັນຍາໃກ້ກັບສັນຍາທີ່ສຳປະຍຸດດ້ວຍທຸກຂະເວທະນາ ສັນຍາທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນສັນຍາໃກ້ກັບສັນຍາ ທີ່ສຳປະຍຸດດ້ວຍສຸກຂະເວທະນາ ສັນຍາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນສັນຍາໃກ້ກັບສັນຍາທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ສັນຍາຂອງຜູ້ບໍ່ເຂົ້າສະມາບັດເປັນສັນຍາໃກ້ກັບສັນຍາຂອງຜູ້ບໍ່ເຂົ້າສະມາບັດ ສັນຍາຂອງຜູ້ເຂົ້າສະມາບັດເປັນສັນຍາໃກ້ກັບສັນຍາ

ຂອງຜູ້ເຂົ້າສະມາບັດ ສັນຍາທີ່ເປັນອາລົມຂອງອາສະວະເປັນສັນຍາໃກ້ກັບສັນຍາທີ່ເປັນອາລົມຂອງອາສະວະ ສັນຍາທີ່ບໍ່ເປັນອາລົມຂອງອາສະວະເປັນສັນຍາໃກ້ກັບສັນຍາທີ່ບໍ່ເປັນອາລົມຂອງອາສະວະ ນີ້ຮຽກວ່າ ສັນຍາໃກ້

ເພິ່ງຮູ້ສັນຍາໄກ ສັນຍາໃກ້ ໂດຍອາໄສທຽບຄຽງສັນຍານັ້ນ ໆ ເປັນຊັ້ນ ໆ ໄປ

## ໔. ສັງຂານຂັນ

[໔໐] ບັນດາຂັນ ໕ ນັ້ນ ສັງຂານຂັນ ເປັນແນວໃດ?

ສັງຂານເຫຼົ່າໃດເຫຼົ່າໜຶ່ງ ຄື ສັງຂານທີ່ເປັນອະດີດ ສັງຂານທີ່ເປັນອະນາຄົດ ສັງຂານ ທີ່ເປັນປັດຈຸບັນ ສັງຂານທີ່ເປັນພາຍໃນຕົນ ສັງຂານທີ່ເປັນພາຍນອກຕົນ ສັງຂານຫຍາບ ສັງຂານລະອຽດ ສັງຂານຊັ້ນຕໍ່າ ສັງຂານຊັ້ນປະນີດ ສັງຂານໄກ ຫຼື ສັງຂານໃກ້ ປະມວນຫຍໍ້ເຂົ້າເປັນກອງດຽວກັນ ນີ້ຮຽກວ່າ ສັງຂານຂັນ

[໔໑] ໃນສັງຂານຂັນນັ້ນ ສັງຂານທີ່ເປັນອະດີດ ເປັນແນວໃດ?

ສັງຂານເຫຼົ່າໃດລ່ວງໄປແລ້ວ ດັບໄປແລ້ວ ປາສະຈາກໄປແລ້ວ ປ່ຽນໄປແລ້ວເຖິງຄວາມດັບແລ້ວ ເຖິງຄວາມດັບສິ້ນແລ້ວ ທີ່ເກີດຂຶ້ນປາສະຈາກໄປແລ້ວ ທີ່ເປັນອະດີດ ສົງເຄາະເຂົ້າກັບສ່ວນອະດີດ ໄດ້ແກ່ ເຈຕະນາທີ່ເກີດຈາກຈັກຂຸສຳຜັດ ເຈຕະນາທີ່ເກີດຈາກໂສຕະສຳຜັດ ເຈຕະນາທີ່ເກີດຈາກຄານະສຳຜັດ ເຈຕະນາທີ່ເກີດຈາກຊິວຫາສຳຜັດ ເຈຕະນາທີ່ເກີດຈາກກາຍສຳຜັດ ເຈຕະນາທີ່ເກີດຈາກມະໂນສຳຜັດ ເຫຼົ່ານີ້ຮຽກວ່າ ສັງຂານທີ່ເປັນອະດີດ

ສັງຂານທີ່ເປັນອະນາຄົດ ເປັນແນວໃດ?

ສັງຂານເຫຼົ່າໃດຍັງບໍ່ເກີດ ຍັງບໍ່ເປັນ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດສະເພາະ ຍັງບໍ່ຜາກົດ ຍັງບໍ່ເກີດຂຶ້ນ ຍັງບໍ່ເກີດຂຶ້ນພ້ອມ ຍັງບໍ່ຕັ້ງຂຶ້ນ ຍັງບໍ່ຕັ້ງຂຶ້ນພ້ອມ ທີ່ເປັນອະນາຄົດ ສົງເຄາະເຂົ້າກັບສ່ວນອະນາຄົດ ໄດ້ແກ່ ເຈຕະນາທີ່ເກີດຈາກຈັກຂຸສຳຜັດ ຯລຯ ເຈຕະນາທີ່ເກີດຈາກມະໂນສຳຜັດ ເຫຼົ່ານີ້ຮຽກວ່າ ສັງຂານທີ່ເປັນອະນາຄົດ

ສັງຂານທີ່ເປັນປັດຈຸບັນ ເປັນແນວໃດ?

ສັງຂານເຫຼົ່າໃດເກີດຢູ່ ເປັນຢູ່ ເກີດພ້ອມ ບັງເກີດ ບັງເກີດສະເພາະ ຜາກົດ ເກີດຂຶ້ນເກີດຂຶ້ນພ້ອມ ຕັ້ງຂຶ້ນ ຕັ້ງຂຶ້ນພ້ອມ ທີ່ເປັນປັດຈຸບັນ ສົງເຄາະເຂົ້າກັບສ່ວນປັດຈຸບັນ ໄດ້ແກ່ເຈຕະນາທີ່ເກີດຈາກຈັກຂຸສຳຜັດ ຯລຯ ເຈຕະນາທີ່ເກີດຈາກມະໂນສຳຜັດ ເຫຼົ່ານີ້ຮຽກວ່າ ສັງຂານທີ່ເປັນປັດຈຸບັນ

[໔໔] ສັງຂານທີ່ເປັນພາຍໃນຕົນ ເປັນແນວໃດ?

ສັງຂານເຫຼົ່າໃດຂອງສັດນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນ ມີສະເພາະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ ເຈຕະນາທີ່ເກີດຈາກຈັກຂຸສຳຜັດ ຯລຯ ເຈຕະນາທີ່ເກີດຈາກມະໂນສຳຜັດ ເຫຼົ່ານີ້ຮຽກວ່າ ສັງຂານທີ່ເປັນພາຍໃນຕົນ

ສັງຂານທີ່ເປັນພາຍນອກຕົນ ເປັນແນວໃດ?

ສັງຂານເຫຼົ່າໃດຂອງສັດອື່ນ ຂອງບຸກຄົນອື່ນນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນ ມີສະເພາະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ເຈຕະນາທີ່ເກີດຈາກຈັກຂຸສຳຜັດ ຯລຯ ເຈຕະນາທີ່ເກີດຈາກມະໂນສຳຜັດ ເຫຼົ່ານີ້ຮຽກວ່າ ສັງຂານທີ່ເປັນພາຍນອກຕົນ

[໔໓] ສັງຂານຫຍາບ ສັງຂານລະອຽດ ເປັນແນວໃດ?

ສັງຂານທີ່ເປັນອະກຸສົນເປັນສັງຂານຫຍາບ ສັງຂານທີ່ເປັນກຸສົນແລະອັບພະຍາກະຕະເປັນສັງຂານລະອຽດ ສັງຂານທີ່ເປັນກຸສົນແລະອະກຸສົນເປັນສັງຂານຫຍາບ ສັງຂານທີ່ເປັນອັບພະຍາກະຕະ ເປັນສັງຂານລະອຽດ ສັງຂານທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນສັງຂານຫຍາບ ສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາເປັນສັງຂານລະອຽດ ສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະທຸກຂະເວທະນາເປັນສັງຂານຫຍາບ ສັງຂານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ເປັນສັງຂານລະອຽດ ສັງຂານຂອງຜູ້ບໍ່ເຂົ້າສະມາບັດເປັນສັງຂານຫຍາບ ສັງຂານຂອງຜູ້ເຂົ້າສະມາບັດເປັນສັງຂານລະອຽດ ສັງຂານທີ່ເປັນອາລົມຂອງອາສະວະເປັນສັງຂານຫຍາບ ສັງຂານທີ່ບໍ່ເປັນອາລົມຂອງອາສະວະເປັນສັງຂານລະອຽດ

ເພິ່ງຮູ້ສັງຂານຫຍາບ ສັງຂານລະອຽດ ໂດຍອາໄສທຽບຄຽງສັງຂານນັ້ນ ໆ ເປັນຊັ້ນ ໆ ໄປ

[໔໔] ສັງຂານຊັ້ນຕ່ຳ ສັງຂານຊັ້ນປະນີດ ເປັນແນວໃດ?

ສັງຂານທີ່ເປັນອະກຸສົນເປັນສັງຂານຊັ້ນຕ່ຳ ສັງຂານທີ່ເປັນກຸສົນແລະອັບພະຍາກະຕະເປັນສັງຂານຊັ້ນປະນີດ ສັງຂານທີ່ເປັນກຸສົນແລະອະກຸສົນເປັນສັງຂານຊັ້ນຕ່ຳ ສັງຂານທີ່ເປັນອັບພະຍາກະຕະເປັນສັງຂານຊັ້ນປະນີດ ສັງຂານທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນສັງຂານຊັ້ນຕ່ຳ ສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນສັງຂານຊັ້ນປະນີດ ສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາແລະທຸກຂະເວທະນາເປັນສັງຂານຊັ້ນຕ່ຳ ສັງຂານທີ່ສຳປະຍຸດດ້ວຍອະທຸກຂະມະສຸກຂະເວທະນາເປັນສັງຂານຊັ້ນປະນີດ ສັງຂານຂອງຜູ້ບໍ່ເຂົ້າສະມາບັດເປັນສັງຂານຊັ້ນຕ່ຳ ສັງຂານຂອງຜູ້ເຂົ້າສະມາບັດເປັນສັງຂານຊັ້ນປະນີດ ສັງຂານທີ່ເປັນອາລົມຂອງອາສະວະເປັນສັງຂານຊັ້ນຕ່ຳ ສັງຂານທີ່ບໍ່ເປັນອາລົມຂອງອາສະວະເປັນສັງຂານຊັ້ນປະນີດ

ເພື່ອຮູ້ສັງຂານຊັ້ນຕ່ຳ ສັງຂານຊັ້ນປະນີດ ໂດຍອາໄສທຽບຄຽງສັງຂານນັ້ນ ໆ ເປັນຊັ້ນ ໆ ໄປ

[໘໕] ສັງຂານໄກ ເປັນແນວໃດ?

ສັງຂານທີ່ເປັນອະກຸສົນເປັນສັງຂານໄກຈາກສັງຂານທີ່ເປັນກຸສົນແລະອັບພະຍາກະຕະ ສັງຂານທີ່ເປັນກຸສົນແລະອັບພະຍາກະຕະເປັນສັງຂານໄກຈາກສັງຂານທີ່ເປັນອະກຸສົນ ສັງຂານທີ່ເປັນກຸສົນ ເປັນສັງຂານໄກຈາກສັງຂານທີ່ເປັນອະກຸສົນແລະອັບພະຍາກະຕະ ສັງຂານທີ່ເປັນອະກຸສົນແລະ ອັບພະຍາກະຕະເປັນສັງຂານໄກຈາກສັງຂານທີ່ເປັນກຸສົນ ສັງຂານທີ່ເປັນອັບພະຍາກະຕະເປັນສັງຂານໄກຈາກສັງຂານທີ່ເປັນກຸສົນ ແລະອະກຸສົນ ສັງຂານທີ່ເປັນກຸສົນ ແລະອະກຸສົນເປັນສັງຂານໄກຈາກສັງຂານທີ່ເປັນອັບພະຍາກະຕະ ສັງຂານທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນສັງຂານໄກຈາກສັງຂານ ທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາ ສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາແລະ ອະທຸກຂະມະສຸຂະເວທະນາເປັນສັງຂານໄກຈາກສັງຂານທີ່ສຳປະຍຸດດ້ວຍທຸກຂະເວທະນາ ສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນສັງຂານໄກຈາກສັງຂານທີ່ສຳປະຍຸດດ້ວຍທຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາ ສັງຂານທີ່ສຳປະຍຸດດ້ວຍທຸກຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນສັງຂານໄກຈາກສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາ ສັງຂານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນສັງຂານໄກຈາກສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະທຸກຂະເວທະນາ ສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະທຸກຂະເວທະນາເປັນສັງຂານໄກຈາກສັງຂານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ສັງຂານຂອງຜູ້ບໍ່ເຂົ້າສະມາບັດເປັນສັງຂານໄກຈາກສັງຂານຂອງຜູ້ເຂົ້າສະມາບັດ ສັງຂານຂອງຜູ້ເຂົ້າສະມາບັດ ເປັນສັງຂານໄກຈາກສັງຂານຂອງຜູ້ບໍ່ເຂົ້າສະມາບັດ ສັງຂານທີ່ເປັນອາລົມຂອງອາສະວະເປັນສັງຂານໄກຈາກສັງຂານທີ່ບໍ່ເປັນອາລົມຂອງອາສະວະ ສັງຂານທີ່ບໍ່ເປັນອາລົມຂອງອາສະວະ ເປັນສັງຂານໄກຈາກສັງຂານທີ່ເປັນອາລົມຂອງອາສະວະ ເຫຼົ່ານີ້ຮຽກວ່າ ສັງຂານໄກ

ສັງຂານໃກ້ ເປັນແນວໃດ?

ສັງຂານທີ່ເປັນອະກຸສົນເປັນສັງຂານໃກ້ກັບສັງຂານທີ່ເປັນອະກຸສົນ ສັງຂານທີ່ເປັນກຸສົນເປັນສັງຂານໃກ້ກັບສັງຂານທີ່ເປັນກຸສົນ ສັງຂານທີ່ເປັນອັບພະຍາກະຕະເປັນສັງຂານໃກ້ກັບສັງຂານທີ່ເປັນອັບພະຍາກະຕະ ສັງຂານທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນສັງຂານໃກ້ກັບສັງຂານທີ່ສຳປະຍຸດດ້ວຍທຸກຂະເວທະນາ ສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນສັງຂານໃກ້ກັບສັງຂານທີ່ສຳປະຍຸດດ້ວຍສຸກຂະເວທະນາ ສັງຂານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນສັງຂານໃກ້ກັບສັງຂານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາສັງຂານຂອງຜູ້ບໍ່ເຂົ້າສະມາບັດເປັນສັງຂານໃກ້ກັບສັງຂານຂອງຜູ້ບໍ່ເຂົ້າສະມາບັດ ສັງຂານຂອງຜູ້ເຂົ້າສະມາບັດເປັນສັງ

ຂານໃກ້ກັບສັງຂານຂອງຜູ້ເຂົ້າສະມາບັດ ສັງຂານທີ່ເປັນອາລົມຂອງອາສະວະເປັນສັງຂານໃກ້ກັບສັງຂານທີ່ເປັນອາລົມຂອງອາສະວະ ສັງຂານທີ່ບໍ່ເປັນອາລົມຂອງອາສະວະເປັນສັງຂານໃກ້ກັບສັງຂານທີ່ບໍ່ເປັນອາລົມຂອງອາສະວະ ເຫຼົ່ານີ້ຮຽກວ່າ ສັງຂານໃກ້

ເພິ່ງຮູ້ສັງຂານໄກ ສັງຂານໃກ້ ໂດຍອາໄສທຽບຄຽງສັງຂານນັ້ນ ໆ ເປັນຊັ້ນ ໆ ໄປ

## ໕. ວິນຍານຂັນ

[໘໖] ບັນດາຂັນ ໕ ນັ້ນ ວິນຍານຂັນ ເປັນແນວໃດ?

ວິນຍານແນວໃດແນວໜຶ່ງ ຄື ວິນຍານທີ່ເປັນອະດີດ ວິນຍານທີ່ເປັນອະນາຄົດ ວິນຍານທີ່ເປັນປັດຈຸບັນ ວິນຍານທີ່ເປັນພາຍໃນຕົນ ວິນຍານທີ່ເປັນພາຍນອກຕົນ ວິນຍານຫຍາບ ວິນຍານລະອຽດ ວິນຍານຊັ້ນຕໍ່າ ວິນຍານຊັ້ນປະນີດ ວິນຍານໄກ ຫຼື ວິນຍານໃກ້ ປະມວນຫຍໍ້ເຂົ້າເປັນກອງດຽວກັນ ນີ້ຮຽກວ່າ ວິນຍານຂັນ

[໘໗] ໃນວິນຍານຂັນນັ້ນ ວິນຍານທີ່ເປັນອະດີດ ເປັນແນວໃດ?

ວິນຍານໃດລ່ວງໄປແລ້ວ ດັບໄປແລ້ວ ປາສະຈາກໄປແລ້ວ ປ່ຽນໄປແລ້ວ ເຖິງຄວາມດັບແລ້ວ ເຖິງຄວາມດັບສິ້ນແລ້ວ ທີ່ເກີດຂຶ້ນປາສະຈາກໄປແລ້ວ ທີ່ເປັນອະດີດ ສົງເຄາະເຂົ້າກັບສ່ວນອະດີດ ໄດ້ແກ່ ຈັກຂຸວິນຍານ ໂສຕະວິນຍານ ຄານະວິນຍານ ຊິວຫາວິນຍານ ກາຍະວິນຍານ ແລະມະໂນວິນຍານ ນີ້ຮຽກວ່າ ວິນຍານທີ່ເປັນອະດີດ

ວິນຍານທີ່ເປັນອະນາຄົດ ເປັນແນວໃດ?

ວິນຍານໃດຍັງບໍ່ເກີດ ຍັງບໍ່ເປັນ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດສະເພາະ ຍັງບໍ່ຜາກົດ ຍັງບໍ່ເກີດຂຶ້ນ ຍັງບໍ່ເກີດຂຶ້ນພ້ອມ ຍັງບໍ່ຕັ້ງຂຶ້ນ ຍັງບໍ່ຕັ້ງຂຶ້ນພ້ອມ ທີ່ເປັນອະນາຄົດ ສົງເຄາະເຂົ້າກັບສ່ວນອະນາຄົດ ໄດ້ແກ່ ຈັກຂຸວິນຍານ ຯລຯ ມະໂນວິນຍານ ນີ້ຮຽກວ່າ ວິນຍານທີ່ເປັນອະນາຄົດ

ວິນຍານທີ່ເປັນປັດຈຸບັນ ເປັນແນວໃດ?

ວິນຍານໃດເກີດຢູ່ ເປັນຢູ່ ເກີດພ້ອມ ບັງເກີດ ບັງເກີດສະເພາະ ຜາກົດ ເກີດຂຶ້ນ ເກີດຂຶ້ນພ້ອມ ຕັ້ງຂຶ້ນ ຕັ້ງຂຶ້ນພ້ອມ ທີ່ເປັນປັດຈຸບັນ ສົງເຄາະເຂົ້າກັບສ່ວນປັດຈຸບັນ ໄດ້ແກ່ ຈັກຂຸວິນຍານ ຯລຯ ມະໂນວິນຍານ ນີ້ຮຽກວ່າ ວິນຍານທີ່ເປັນປັດຈຸບັນ

[໘໘] ວິນຍານທີ່ເປັນພາຍໃນຕົນ ເປັນແນວໃດ?

ວິນຍານໃດ ຂອງສັດນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນມີສະເພາະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ ຈັກຂຸວິນຍານ ຯລຯ ມະໂນວິນຍານ ນີ້ຮຽກວ່າ ວິນຍານທີ່ເປັນພາຍໃນຕົນ

ວິນຍານທີ່ເປັນພາຍນອກຕົນ ເປັນແນວໃດ?

ວິນຍານໃດຂອງສັດອື່ນ ຂອງບຸກຄົນອື່ນນັ້ນ ໆ ທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດໃນຕົນ ມີສະເພາະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ໄດ້ແກ່ ຈັກຂຸວິນຍານ ຯລຯ ມະໂນວິນຍານ ນີ້ຮຽກວ່າ ວິນຍານທີ່ເປັນພາຍນອກຕົນ

[໔໙] ວິນຍານຫຍາບ ວິນຍານລະອຽດ ເປັນແນວໃດ?

ວິນຍານທີ່ເປັນອະກຸສົນເປັນວິນຍານຫຍາບ ວິນຍານທີ່ເປັນກຸສົນແລະອັບພະຍາກະຕະເປັນວິນຍານລະອຽດ ວິນຍານທີ່ເປັນກຸສົນແລະອະກຸສົນເປັນວິນຍານຫຍາບ ວິນຍານທີ່ເປັນອັບພະຍາກະຕະເປັນວິນຍານລະອຽດ ວິນຍານທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນວິນຍານຫຍາບ ວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາເປັນວິນຍານລະອຽດ ວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະທຸກຂະເວທະນາເປັນວິນຍານຫຍາບ ວິນຍານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນວິນຍານລະອຽດ ວິນຍານຂອງຜູ້ບໍ່ເຂົ້າສະມາບັດເປັນວິນຍານຫຍາບ ວິນຍານຂອງຜູ້ເຂົ້າສະມາບັດເປັນວິນຍານລະອຽດ ວິນຍານທີ່ເປັນອາລົມຂອງອາສະວະເປັນວິນຍານຫຍາບ ວິນຍານທີ່ບໍ່ເປັນອາລົມຂອງອາສະວະເປັນວິນຍານລະອຽດ

ເພິ່ງຮູ້ວິນຍານຫຍາບ ວິນຍານລະອຽດ ໂດຍອາໄສທຽບຄຽງວິນຍານນັ້ນ ໆ ເປັນຊັ້ນ ໆ ໄປ

[໕໐] ວິນຍານຊັ້ນຕ່ຳ ວິນຍານຊັ້ນປະນີດ ເປັນແນວໃດ?

ວິນຍານທີ່ເປັນອະກຸສົນເປັນວິນຍານຊັ້ນຕ່ຳ ວິນຍານທີ່ເປັນກຸສົນ ແລະອັບພະຍາກະຕະເປັນວິນຍານຊັ້ນປະນີດ ວິນຍານທີ່ເປັນກຸສົນ ແລະອະກຸສົນເປັນວິນຍານຊັ້ນຕ່ຳ ວິນຍານທີ່ເປັນອັບພະຍາກະຕະເປັນວິນຍານຊັ້ນປະນີດ ວິນຍານທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນວິນຍານຊັ້ນຕ່ຳ ວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນວິນຍານຊັ້ນປະນີດ ວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາແລະທຸກຂະເວທະນາເປັນວິນຍານຊັ້ນຕ່ຳ ວິນຍານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນວິນຍານຊັ້ນປະນີດ ວິນຍານຂອງຜູ້ບໍ່ເຂົ້າສະມາບັດເປັນວິນຍານຊັ້ນຕ່ຳ ວິນຍານຂອງຜູ້ເຂົ້າສະມາບັດເປັນວິນຍານຊັ້ນປະນີດ ວິນຍານທີ່ເປັນອາລົມຂອງອາສະວະເປັນວິນຍານຊັ້ນຕ່ຳ ວິນຍານທີ່ບໍ່ເປັນອາລົມຂອງອາສະວະເປັນວິນຍານຊັ້ນປະນີດ

ເພິ່ງຮູ້ວິນຍານຊັ້ນຕ່ຳ ວິນຍານຊັ້ນປະນີດ ໂດຍອາໄສທຽບຄຽງວິນຍານນັ້ນ ໆ ເປັນຊັ້ນ ໆ ໄປ

[໕໑] ວິນຍານໄກ ເປັນແນວໃດ?

ວິນຍານທີ່ເປັນອະກຸສົນເປັນວິນຍານໄກຈາກວິນຍານທີ່ເປັນກຸສົນ ແລະອັບພະຍາກະຕະ ວິນຍານທີ່ເປັນກຸສົນແລະອັບພະຍາກະຕະເປັນວິນຍານໄກຈາກວິນຍານທີ່ເປັນອະກຸສົນ ວິນຍານ

ທີ່ເປັນກຸສົນເປັນວິນຍານໄກຈາກວິນຍານທີ່ເປັນອະກຸສົນແລະອັບພະຍາກະຕະ ວິນຍານທີ່ເປັນອະກຸສົນແລະອັບພະຍາກະຕະເປັນວິນຍານໄກຈາກວິນຍານທີ່ເປັນກຸສົນ ວິນຍານທີ່ເປັນອັບພະຍາກະຕະເປັນວິນຍານໄກຈາກວິນຍານທີ່ເປັນກຸສົນແລະອະກຸສົນ ວິນຍານທີ່ເປັນກຸສົນແລະອະກຸສົນເປັນວິນຍານໄກຈາກວິນຍານທີ່ເປັນອັບພະຍາກະຕະ ວິນຍານທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນວິນຍານໄກຈາກວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາ ແລະອະທຸກຂະມະສຸຂະເວທະນາ ວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນວິນຍານໄກຈາກວິນຍານທີ່ສຳປະຍຸດດ້ວຍທຸກຂະເວທະນາ ວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນວິນຍານໄກຈາກວິນຍານທີ່ສຳປະຍຸດດ້ວຍທຸກຂະເວທະນາແລະອະທຸກຂະມະສຸຂະເວທະນາ ວິນຍານທີ່ສຳປະຍຸດດ້ວຍ ທຸກຂະເວທະນາແລະອະທຸກຂະມະສຸຂະເວທະນາເປັນວິນຍານໄກຈາກວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາ ວິນຍານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນວິນຍານໄກຈາກວິນຍານທີ່ສຳປະຍຸດດ້ວຍ ສຸກຂະເວທະນາແລະທຸກຂະເວທະນາ ວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາແລະທຸກຂະເວທະນາເປັນວິນຍານໄກຈາກວິນຍານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ວິນຍານຂອງຜູ້ບໍ່ເຂົ້າສະມາບັດເປັນວິນຍານໄກຈາກວິນຍານຂອງຜູ້ເຂົ້າສະມາບັດ ວິນຍານຂອງຜູ້ເຂົ້າສະມາບັດເປັນວິນຍານໄກຈາກວິນຍານຂອງຜູ້ບໍ່ເຂົ້າສະມາບັດ ວິນຍານທີ່ເປັນອາລົມຂອງອາສະວະເປັນວິນຍານໄກຈາກວິນຍານທີ່ບໍ່ເປັນອາລົມຂອງອາສະວະ ວິນຍານທີ່ບໍ່ເປັນອາລົມຂອງອາສະວະເປັນວິນຍານໄກຈາກວິນຍານທີ່ເປັນອາລົມຂອງອາສະວະ ນີ້ຮຽກວ່າ ວິນຍານໄກ

ວິນຍານໃກ້ ເປັນແນວໃດ?

ວິນຍານທີ່ເປັນອະກຸສົນເປັນວິນຍານໃກ້ກັບວິນຍານທີ່ເປັນອະກຸສົນ ວິນຍານທີ່ເປັນກຸສົນເປັນວິນຍານໃກ້ກັບວິນຍານທີ່ເປັນກຸສົນ ວິນຍານທີ່ເປັນອັບພະຍາກະຕະເປັນວິນຍານໃກ້ກັບວິນຍານທີ່ເປັນອັບພະຍາກະຕະ ວິນຍານທີ່ສຳປະຍຸດດ້ວຍທຸກຂະເວທະນາເປັນວິນຍານໃກ້ກັບວິນຍານທີ່ສຳປະຍຸດດ້ວຍທຸກຂະເວທະນາ ວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາເປັນວິນຍານໃກ້ກັບວິນຍານທີ່ສຳປະຍຸດດ້ວຍສຸກຂະເວທະນາ ວິນຍານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາເປັນວິນຍານໃກ້ກັບວິນຍານທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ວິນຍານຂອງຜູ້ບໍ່ເຂົ້າສະມາບັດເປັນວິນຍານໃກ້ກັບວິນຍານຂອງຜູ້ບໍ່ເຂົ້າສະມາບັດ ວິນຍານຂອງຜູ້ເຂົ້າສະມາບັດເປັນວິນຍານໃກ້ກັບວິນຍານຂອງຜູ້ເຂົ້າສະມາບັດ ວິນຍານທີ່ເປັນອາລົມຂອງອາສະວະເປັນວິນຍານໃກ້ກັບວິນຍານທີ່ເປັນອາລົມຂອງອາສະວະ ວິນຍານທີ່ບໍ່ເປັນອາລົມຂອງອາສະວະເປັນວິນຍານໃກ້ກັບວິນຍານທີ່ບໍ່ເປັນອາລົມຂອງອາສະວະ ນີ້ຮຽກວ່າວິນຍານໃກ້

ເພິ່ງຮູ້ວິນຍານໄກ ວິນຍານໃກ້ ໂດຍອາໄສທຽບຄຽງວິນຍານນັ້ນ ໆ ເປັນຊັ້ນ ໆ ໄປ

**ສຸດຕັນຕະພາຊະນີ ຈົບ**

# ໔. ອະພິທຳມະພາຊະນີ

[໓໔] ຂັນ ໕ ຄື

໑. ຮູບຂັນ (ກອງຮູບ)
໒. ເວທະນາຂັນ (ກອງເວທະນາ)
໓. ສັນຍາຂັນ (ກອງສັນຍາ)
໔. ສັງຂານຂັນ (ກອງສັງຂານ)
໕. ວິນຍານຂັນ (ກອງວິນຍານ)

## ໑. ຮູບຂັນ

[໓໓] ບັນດາຂັນ ໕ ນັ້ນ ຮູບຂັນ ເປັນແນວໃດ?

ຮູບຂັນໝວດລະ ໑ ໄດ້ແກ່ ຮູບທັງໝົດ ບໍ່ເປັນເຫດ ບໍ່ມີເຫດ ວິບປະຍຸດຈາກເຫດ ມີປັດໄຈປຸງແຕ່ງ ຖືກປັດໄຈປຸງແຕ່ງ ເປັນຮູບ ເປັນໂລກິຍະ ເປັນອາລົມຂອງອາສະວະ ເປັນອາລົມຂອງສັງໂຍດ ເປັນອາລົມຂອງຄັນຖະ ເປັນອາລົມຂອງໂອຄະ ເປັນອາລົມຂອງ ໂຍຄະ ເປັນອາລົມຂອງນິວອນ ເປັນອາລົມຂອງປະຣາມາດ ເປັນອາລົມຂອງອຸປາທານເປັນອາລົມຂອງກິເລດ ເປັນອັບພະຍາກະຕະ ຮັບຮູ້ອາລົມບໍ່ໄດ້ ບໍ່ເປັນເຈຕະສິກ ວິບປະຍຸດຈາກຈິດ ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ ບໍ່ແມ່ນມີທັງວິຕົກແລະວິຈານ ບໍ່ແມ່ນບໍ່ມີວິຕົກມີພຽງວິຈານ ບໍ່ມີທັງວິຕົກແລະວິຈານ ບໍ່ປະກອບດ້ວຍປີຕິ ບໍ່ປະກອບດ້ວຍສຸກ ບໍ່ປະກອບດ້ວຍອຸເປກຂາ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ບໍ່ເປັນເຫດໃຫ້ເຖິງປະຕິສົນທິຈຸຕິ ແລະນິບພານ ບໍ່ເປັນຂອງເສຂະບຸກຄົນ ແລະອະເສຂະບຸກຄົນ ເປັນປະຣິດຕະ ເປັນກາມາວະຈອນ ບໍ່ເປັນອະຮູບປາວະຈອນ ບໍ່ເປັນອະຮູບປາວະຈອນ ນັບເນື່ອງໃນວັດຕະທຸກ ບໍ່ແມ່ນບໍ່ນັບເນື່ອງໃນວັດຕະທຸກ ເປັນສະພາວະບໍ່ແນ່ນອນ ບໍ່ເປັນເຫດນຳອອກຈາກວັດຕະທຸກ ເປັນທຳທີ່ເກີດຂຶ້ນ ອັນວິນຍານ ໖ ຮູ້ໄດ້ ເປັນຂອງບໍ່ທ່ຽງ ຖືກຊະຣາຄອບງຳ

ຮູບຂັນໝວດລະ ໑ ມີດ້ວຍອາການແບບນີ້

## ທຸກະໄນ

### ປະກິນນະກະທຸກະ

ຮູບຂັນໝວດລະ ໒ ໄດ້ແກ່ ຮູບທີ່ເປັນອຸປາທາຍະຮູບກໍມີ ທີ່ບໍ່ເປັນອຸປາທາຍະຮູບກໍມີ

ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືກໍມີ

ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ

ຮູບທີ່ເຫັນໄດ້ກໍມີ ທີ່ເຫັນບໍ່ໄດ້ກໍມີ

ຮູບທີ່ກະທົບໄດ້ກໍມີ ທີ່ກະທົບບໍ່ໄດ້ກໍມີ

ຮູບທີ່ເປັນອິນຊີກໍມີ ທີ່ບໍ່ເປັນອິນຊີກໍມີ

ຮູບທີ່ເປັນມະຫາພູຕະຮູບກໍມີ ທີ່ບໍ່ເປັນມະຫາພູຕະຮູບກໍມີ

ຮູບທີ່ເປັນວິນຍັດຕິຮູບກໍມີ ທີ່ບໍ່ເປັນວິນຍັດຕິຮູບກໍມີ

ຮູບທີ່ມີຈິດເປັນສະມຸດຖານກໍມີ ທີ່ບໍ່ມີຈິດເປັນສະມຸດຖານກໍມີ

ຮູບທີ່ເກີດພ້ອມກັບຈິດກໍມີ ທີ່ບໍ່ເກີດພ້ອມກັບຈິດກໍມີ

ຮູບທີ່ເປັນໄປຕາມຈິດກໍມີ ທີ່ບໍ່ເປັນໄປຕາມຈິດກໍມີ

ຮູບທີ່ເປັນພາຍໃນກໍມີ ທີ່ເປັນພາຍນອກກໍມີ

ຮູບທີ່ຫຍາບກໍມີ ທີ່ລະອຽດກໍມີ

ຮູບທີ່ໄກກໍມີ ທີ່ໃກ້ກໍມີ ໗ລ໗

ຮູບທີ່ເປັນກະວະລິງກາຣາຫານກໍມີ ທີ່ບໍ່ເປັນກະວະລິງກາຣາຫານກໍມີ

ຮູບຂັນໝວດລະ ໔ ມີດ້ວຍອາການແນວນີ້

(ໃນບ່ອນນີ້ກໍເພິ່ງຈຳແນກຮູບຂັນທີ່ເຫຼືອເໝືອນໃນຮູບກັນ)

**ສຸຂຸມະຮູບທຸກະ ຈົບ**

# ຕິກະໄນ

## ປະກິນນະກະຕິກາກະ

## ອັດຊັດຕິກະອຸປາທາຕິກາກະ

ຮູບຂັນໝວດລະ ໓ ໄດ້ແກ່ ຮູບທີ່ເປັນພາຍໃນເປັນອຸປາທາຍະຮູບ ຮູບທີ່ເປັນພາຍ ນອກທີ່ເປັນອຸປາທາຍະຮູບກໍມີ ທີ່ບໍ່ເປັນອຸປາທາຍະຮູບກໍມີ

## ອັດຊັດຕິກະອຸປາທິນນະຕິກະ

ຮູບທີ່ເປັນພາຍໃນເປັນຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ຮູບທີ່ເປັນພາຍນອກທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືກໍມີ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືກໍມີ

ຮູບທີ່ເປັນພາຍໃນເປັນຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ ຮູບທີ່ເປັນພາຍນອກທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖື ແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ແຕ່ເປັນອາລົມຂອງອຸປາທານກໍມີ

໗໑໗

ຮູບທີ່ເປັນພາຍໃນບໍ່ເປັນກະວະລິງກາຣາຫານ ຮູບທີ່ເປັນພາຍນອກທີ່ເປັນກະວະລິງກາຣາຫານກໍມີ ທີ່ບໍ່ເປັນກະວະລິງກາຣາຫານກໍມີ

ຮູບຂັນໝວດລະ ໓ ມີດ້ວຍອາການແນວນີ້

**ສຸຂຸມະຮູບຕິກະ ຈົບ**

## ຈະຕຸກກະໄນ

## ອຸປາທິນນະຈະຕຸກກະ

ຮູບຂັນໝວດລະ ໔ ໄດ້ແກ່ ຮູບທີ່ເປັນອຸປາທາຍະຮູບ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືກໍມີ ຮູບທີ່ບໍ່ເປັນອຸປາທາຍະຮູບ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືກໍມີ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືກໍມີ

## ອຸປາທາອຸປາທິນນຸປາທານິຍະຈະຕຸກກະ

ຮູບທີ່ເປັນອຸປາທາຍະຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ແຕ່ເປັນອາລົມຂອງອຸປາທານກໍມີ ຮູບທີ່ບໍ່ເປັນອຸປາທາຍະຮູບທີ່ກຳອັນປະກອບດ້ວຍຕັນຫາແລະ ທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ

## ອຸປາທາສັບປະຕິຄະຈະຕຸກກະ

ຮູບທີ່ເປັນອຸປາທາຍະຮູບທີ່ກະທົບໄດ້ກໍມີ ທີ່ກະທົບບໍ່ໄດ້ກໍມີ ຮູບທີ່ບໍ່ເປັນອຸປາທາຍະຮູບທີ່ກະທົບໄດ້ກໍມີ ທີ່ກະທົບບໍ່ໄດ້ກໍມີ

## ອຸປາທາໂອລາຣິກະຈະຕຸກກະ

ຮູບທີ່ເປັນອຸປາທາຍະຮູບທີ່ເປັນຮູບຫຍາບກໍມີ ທີ່ເປັນຮູບລະອຽດກໍມີ ຮູບທີ່ບໍ່ເປັນອຸປາທາຍະຮູບທີ່ເປັນຮູບຫຍາບກໍມີ ທີ່ເປັນຮູບລະອຽດກໍມີ

## ອຸປາທາທູເຣຈະຕຸກກະ

ຮູບທີ່ເປັນອຸປາທາຍະຮູບທີ່ເປັນຮູບໄກກໍມີ ທີ່ເປັນຮູບໃກ້ກໍມີ ຮູບທີ່ບໍ່ເປັນອຸປາທາຍະຮູບທີ່ເປັນຮູບໄກກໍມີ ທີ່ເປັນຮູບໃກ້ກໍມີ

ຯລຯ

## ທິດຖາທິຈະຕຸກກະ

ຮູບເປັນຮູບທີ່ເຫັນໄດ້ ເປັນຮູບທີ່ສະດັບໄດ້ ເປັນຮູບທີ່ຮູ້ໄດ້ ເປັນຮູບທີ່ຮູ້ແຈ້ງໄດ້

ຮູບຂັນໝວດລະ ໔ ມີດ້ວຍອາການແນວນີ້

## ປັນຈະກະໄນ

ຮູບຂັນໝວດລະ ໕ ໄດ້ແກ່ ຮູບທີ່ເປັນປະຖະວີທາດ ຮູບທີ່ເປັນອາໂປທາດ ຮູບທີ່ເປັນເຕໂຊທາດ ຮູບທີ່ເປັນວາໂຍທາດ ຮູບທີ່ເປັນອຸປາທາຍະຮູບ

ຮູບຂັນໝວດລະ ໕ ມີດ້ວຍອາການແນວນີ້

## ສັກກະໄນ

ຮູບຂັນໝວດລະ ໖ ໄດ້ແກ່ ຮູບທີ່ຈັກຂຸວິນຍານຮູ້ໄດ້ ຮູບທີ່ໂສຕະວິນຍານຮູ້ໄດ້ ຮູບທີ່ຄານະວິນຍານຮູ້ໄດ້ ຮູບທີ່ຊິວຫາວິນຍານຮູ້ໄດ້ ຮູບທີ່ກາຍະວິນຍານຮູ້ໄດ້ ຮູບທີ່ມະໂນວິນຍານຮູ້ໄດ້

ຮູບຂັນໝວດລະ ໖ ມີດ້ວຍອາການແນວນີ້

## ສັດຕະກະໄນ

ຮູບຂັນໝວດລະ ໗ ໄດ້ແກ່ ຮູບທີ່ຈັກຂຸວິນຍານຮູ້ໄດ້ ຯລຯ ຮູບທີ່ມະໂນທາດຮູ້ໄດ້ ຮູບທີ່ມະໂນວິນຍານທາດຮູ້ໄດ້

ຮູບຂັນໝວດລະ ໗ ມີດ້ວຍອາການແນວນີ້

## ອັດຖະກະໄນ

ຮູບຂັນໝວດລະ ໘ ໄດ້ແກ່ ຮູບທີ່ຈັກຂຸວິນຍານຮູ້ໄດ້ ຯລຯ ຮູບທີ່ກາຍະວິນຍານ

ຮູ້ໄດ້ ທີ່ມີສຳຜັດເປັນສຸກກໍມີ ທີ່ມີສຳຜັດເປັນທຸກກໍມີ ຮູບທີ່ມະໂນທາດຮູ້ໄດ້ ຮູບທີ່ມະໂນວິຍານທາດຮູ້ໄດ້

ຮູບຂັນໝວດລະ ໘ ມີດ້ວຍອາການແນວນີ້

### ນະວະກະໄນ

ຮູບຂັນໝວດລະ ๙ ໄດ້ແກ່ ຮູບທີ່ເປັນຈັກຂຸນຊີ ໂສຕິນຊີ ຄານິນຊີ ຊິວຫິນຊີ ກາຍິນຊີ ອິດຖິນຊີ ປຸຣິສິນຊີ ຊີວິຕິນຊີ ແລະຮູບທີ່ບໍ່ເປັນອິນຊີ

ຮູບຂັນໝວດລະ ๙ ມີດ້ວຍອາການແນວນີ້

### ທະສະກະໄນ

ຮູບຂັນໝວດລະ ໑໐ ໄດ້ແກ່ ຮູບທີ່ເປັນຈັກຂຸນຊີ ๆລๆ ຊີວິຕິນຊີ ແລະຮູບທີ່ບໍ່ເປັນອິນຊີ ທີ່ກະທົບໄດ້ກໍມີ ທີ່ກະທົບບໍ່ໄດ້ກໍມີ

ຮູບຂັນໝວດລະ ໑໐ ມີດ້ວຍອາການແນວນີ້

### ເອກາທະສະກະໄນ

ຮູບຂັນໝວດລະ ໑໑ ໄດ້ແກ່ ຮູບທີ່ເປັນຈັກຂາຍະຕະນະ ໂສຕາຍະຕະນະ ຄານາຍະຕະນະ ຊິວຫາຍະຕະນະ ກາຍາຍະຕະນະ ຮູປາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ໂຜດຖັບພາຍະຕະນະ ແລະຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ ເຊິ່ງນັບເນື່ອງໃນທຳມາຍະຕະນະ

ຮູບຂັນໝວດລະ ໑໑ ມີດ້ວຍອາການແນວນີ້

ນີ້ຮຽກວ່າ ຮູບຂັນ

## ໒. ເວທະນາຂັນ

### ທຸກະມູລະກະວາຣະ

[໓໔] ບັນດາຂັນ ໕ ນັ້ນ ເວທະນາຂັນ ເປັນແນວໃດ?

ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ມີເຫດກໍມີ ທີ່ບໍ່ມີເຫດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ເປັນກາມາວະຈອນກໍມີ ທີ່ເປັນຮູບປາວະຈອນກໍມີ ທີ່ເປັນອະຮູບປາວະຈອນກໍມີ ທີ່ບໍ່ນັບເນື່ອງໃນວັດຕະທຸກາກໍມີ

ເວທະນາຂັນໝວດລະ ໕ ໄດ້ແກ່ ເວທະນາຂັນທີ່ເປັນສຸຂິນຊີກໍມີ ທີ່ເປັນທຸກຂິນຊີກໍມີ ທີ່ເປັນໂສມະນັດສິນຊີກໍມີ ທີ່ເປັນໂທມະນັດສິນຊີກໍມີ ທີ່ເປັນອຸເປກຂິນຊີກໍມີ

ເວທະນາຂັນໝວດລະ ໕ ມີດ້ວຍອາການແນວນີ້

ເວທະນາຂັນໝວດລະ ໖ ໄດ້ແກ່ ເວທະນາທີ່ເກີດຈາກຈັກຂຸສຳຜັດ ເວທະນາທີ່ເກີດຈາກໂສຕະສຳຜັດ ເວທະນາທີ່ເກີດຈາກຄານະສຳຜັດ ເວທະນາທີ່ເກີດຈາກຊິວຫາສຳຜັດ ເວທະນາທີ່ເກີດຈາກກາຍສຳຜັດ ເວທະນາທີ່ເກີດຈາກມະໂນສຳຜັດ

ເວທະນາຂັນໝວດລະ ໖ ມີດ້ວຍອາການແບບນີ້

ເວທະນາຂັນໝວດລະ ໗ ໄດ້ແກ່ ເວທະນາທີ່ເກີດຈາກຈັກຂຸສຳຜັດ ຯລຯ ເວທະນາທີ່ເກີດຈາກກາຍສຳຜັດ ເວທະນາທີ່ເກີດຈາກມະໂນທາດສຳຜັດ ເວທະນາທີ່ເກີດຈາກມະໂນວິນຍານທາດສຳຜັດ

ເວທະນາຂັນໝວດລະ ໗ ມີດ້ວຍອາການແບບນີ້

ເວທະນາຂັນໝວດລະ ໘ ໄດ້ແກ່ ເວທະນາທີ່ເກີດຈາກຈັກຂຸສຳຜັດ ຯລຯ ເວທະນາທີ່ເກີດຈາກກາຍສຳຜັດ ທີ່ເປັນສຸກກຳມີ ທີ່ເປັນທຸກກຳມີ ເວທະນາທີ່ເກີດຈາກມະໂນທາດສຳຜັດ ເວທະນາທີ່ເກີດຈາກມະໂນວິນຍານທາດສຳຜັດ

ເວທະນາຂັນໝວດລະ ໘ ມີດ້ວຍອາການແບບນີ້

ເວທະນາຂັນໝວດລະ ໙ ໄດ້ແກ່ ເວທະນາທີ່ເກີດຈາກຈັກຂຸສຳຜັດ ຯລຯ ເວທະນາ ທີ່ເກີດຈາກກາຍສຳຜັດ ເວທະນາທີ່ເກີດຈາກມະໂນທາດສຳຜັດ ເວທະນາທີ່ເກີດຈາກມະໂນວິນຍານທາດສຳຜັດ ທີ່ເປັນກຸສົນກຳມີ ທີ່ເປັນອະກຸສົນກຳມີ ທີ່ເປັນອັບພະຍາກະຕະກຳມີ

ເວທະນາຂັນໝວດລະ ໙ ມີດ້ວຍອາການແບບນີ້

ເວທະນາຂັນໝວດລະ ໑໐ ໄດ້ແກ່ ເວທະນາທີ່ເກີດຈາກຈັກຂຸສຳຜັດ ຯລຯ ເວທະນາທີ່ເກີດຈາກກາຍສຳຜັດທີ່ເປັນສຸກກຳມີ ທີ່ເປັນທຸກກຳມີ ເວທະນາທີ່ເກີດຈາກມະໂນທາດສຳຜັດ ເວທະນາທີ່ເກີດຈາກມະໂນວິນຍານທາດສຳຜັດ ທີ່ເປັນກຸສົນກຳມີ ທີ່ເປັນອະກຸສົນກຳມີທີ່ເປັນອັບພະຍາກະຕະກຳມີ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແບບນີ້

[໖໕] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ມີເຫດກຳມີ ທີ່ບໍ່ມີເຫດກຳມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນວິບາກກຳມີ ທີ່ເປັນເຫດໃຫ້ເກີດວິບາກກຳມີ ທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກກຳມີ

ເວທະນາຂັນທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ແລະເປັນອາລົມຂອງອຸປາທານກຳມີ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານກຳມີ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຢຶດຖືແລະບໍ່ເປັນອາລົມຂອງອຸປາທານກຳມີ

ເວທະນາຂັນທີ່ກິເລດເຮັດໃຫ້ເສົ້າໝອງ ແລະເປັນອາລົມຂອງກິເລດກຳມີ ທີ່ກິເລດບໍ່ເຮັດ

ໃຫ້ເສົ້າໝອງ ແຕ່ເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງ ແລະບໍ່ເປັນອາລົມຂອງກິເລດກໍມີ

ເວທະນາຂັນທີ່ມີທັງວິຕົກ ແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

ເວທະນາຂັນທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ກໍມີ

ເວທະນາຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ກໍມີ

ເວທະນາຂັນທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິກໍມີ ທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

ເວທະນາຂັນທີ່ເປັນຂອງເສຂະບຸກຄົນກໍມີ ທີ່ເປັນຂອງອະເສຂະບຸກຄົນກໍມີ ທີ່ບໍ່ເປັນຂອງເສຂະບຸກຄົນ ແລະອະເສຂະບຸກຄົນກໍມີ

ເວທະນາຂັນທີ່ເປັນປະຣິດຕະ (ກາມາວະຈອນ) ກໍມີ ທີ່ເປັນມະຫັກຄະຕະ (ຣູບປາວະຈອນແລະອະຣູບປາວະຈອນ) ກໍມີ ທີ່ເປັນອັບປະມານະ (ໂລກຸດຕະຣະ) ກໍມີ

ເວທະນາຂັນທີ່ມີປະຣິດຕະເປັນອາລົມກໍມີ ທີ່ມີມະຫັກຄະຕະເປັນອາລົມກໍມີ ທີ່ມີອັບປະມານະເປັນອາລົມກໍມີ

ເວທະນາຂັນທີ່ເປັນຊັ້ນຕໍ່າກໍມີ ທີ່ເປັນຊັ້ນກາງກໍມີ ທີ່ເປັນຊັ້ນປະນີດກໍມີ

ເວທະນາຂັນທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນກໍມີ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີ ທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນກໍມີ

ເວທະນາຂັນທີ່ມີມັກເປັນອາລົມກໍມີ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ

ເວທະນາຂັນທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ

ເວທະນາຂັນທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ

ເວທະນາຂັນທີ່ມີອະດີດທໍາເປັນອາລົມກໍມີ ທີ່ມີອະນາຄົດທໍາເປັນອາລົມກໍມີ ທີ່ມີປັດຈຸບັນທໍາເປັນອາລົມກໍມີ

ເວທະນາຂັນທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

ເວທະນາຂັນທີ່ມີທໍາພາຍໃນຕົນເປັນອາລົມກໍມີ ທີ່ມີທໍາພາຍນອກຕົນເປັນອາລົມກໍມີ ທີ່ມີທໍາພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ

໗໑໗

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໓໖] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍເຫດກໍມີ ທີ່ວິບປະຍຸດຈາກເຫດກໍມີ

ເວທະນາຂັນທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ

ເວທະນາຂັນທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ເວທະນາຂັນທີ່ຈິດບາງດວງຮູ້ໄດ້ກໍມີ ທີ່ຈິດບາງດວງຮູ້ບໍ່ໄດ້ກໍມີ

ເວທະນາຂັນທີ່ເປັນອາລົມຂອງອາສະວະກໍມີ ທີ່ບໍ່ເປັນອາລົມຂອງອາສະວະກໍມີ

ເວທະນາຂັນທີ່ສຳປະຍຸດດ້ວຍອາສະວະກໍມີ ທີ່ວິບປະຍຸດຈາກອາສະວະກໍມີ

ເວທະນາຂັນທີ່ວິບປະຍຸດຈາກອາສະວະ ແຕ່ເປັນອາລົມຂອງອາສະວະກໍມີ ທີ່ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ

ເວທະນາຂັນທີ່ເປັນອາລົມຂອງສັງໂຍດກໍມີ ທີ່ບໍ່ເປັນອາລົມຂອງສັງໂຍດກໍມີ

ເວທະນາຂັນທີ່ສຳປະຍຸດດ້ວຍສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດກໍມີ

ເວທະນາຂັນທີ່ວິບປະຍຸດຈາກສັງໂຍດ ແຕ່ເປັນອາລົມຂອງສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ

ເວທະນາຂັນທີ່ເປັນອາລົມຂອງຄັນຖະກໍມີ ທີ່ບໍ່ເປັນອາລົມຂອງຄັນຖະກໍມີ

ເວທະນາຂັນທີ່ສຳປະຍຸດດ້ວຍຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະກໍມີ

ເວທະນາຂັນທີ່ວິບປະຍຸດຈາກຄັນຖະ ແຕ່ເປັນອາລົມຂອງຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະກໍມີ

ເວທະນາຂັນທີ່ເປັນອາລົມຂອງໂອຄະກໍມີ ທີ່ບໍ່ເປັນອາລົມຂອງໂອຄະກໍມີ

ເວທະນາຂັນທີ່ສຳປະຍຸດດ້ວຍໂອຄະກໍມີ ທີ່ວິບປະຍຸດຈາກໂອຄະກໍມີ

ເວທະນາຂັນທີ່ວິບປະຍຸດຈາກໂອຄະ ແຕ່ເປັນອາລົມຂອງໂອຄະກໍມີ ທີ່ວິບປະຍຸດຈາກໂອຄະແລະບໍ່ເປັນອາລົມຂອງໂອຄະກໍມີ

ເວທະນາຂັນທີ່ເປັນອາລົມຂອງໂຍຄະກໍມີ ທີ່ບໍ່ເປັນອາລົມຂອງໂຍຄະກໍມີ

ເວທະນາຂັນທີ່ສຳປະຍຸດດ້ວຍໂຍຄະກໍມີ ທີ່ວິບປະຍຸດຈາກໂຍຄະກໍມີ

ເວທະນາຂັນທີ່ວິບປະຍຸດຈາກໂຍຄະ ແຕ່ເປັນອາລົມຂອງໂຍຄະກໍມີ ທີ່ວິບປະຍຸດຈາກໂຍຄະແລະບໍ່ເປັນອາລົມຂອງໂຍຄະກໍມີ

ເວທະນາຂັນທີ່ເປັນອາລົມຂອງນິວອນກໍມີ ທີ່ບໍ່ເປັນອາລົມຂອງນິວອນກໍມີ

ເວທະນາຂັນທີ່ສຳປະຍຸດດ້ວຍນິວອນກໍມີ ທີ່ວິບປະຍຸດຈາກນິວອນກໍມີ

ເວທະນາຂັນທີ່ວິບປະຍຸດຈາກນິວອນ ແຕ່ເປັນອາລົມຂອງນິວອນກໍມີ ທີ່ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນກໍມີ

ເວທະນາຂັນທີ່ເປັນອາລົມຂອງປະຣາມາດກໍມີ ທີ່ບໍ່ເປັນອາລົມຂອງປະຣາມາດກໍມີ

ເວທະນາຂັນທີ່ສຳປະຍຸດດ້ວຍປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດກໍມີ

ເວທະນາຂັນທີ່ວິບປະຍຸດຈາກປະຣາມາດ ແຕ່ເປັນອາລົມຂອງປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດກໍມີ

ເວທະນາຂັນທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຢຶດຖືກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືກໍມີ

ເວທະນາຂັນທີ່ເປັນອາລົມຂອງອຸປາທານກໍມີ ທີ່ບໍ່ເປັນອາລົມຂອງອຸປາທານກໍມີ

ເວທະນາຂັນທີ່ສໍາປະຍຸດດ້ວຍອຸປາທານກໍມີ ທີ່ວິບປະຍຸດຈາກອຸປາທານກໍມີ

ເວທະນາຂັນທີ່ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານກໍມີ ທີ່ວິບປະຍຸດຈາກອຸປາທານແລະບໍ່ເປັນອາລົມຂອງອຸປາທານກໍມີ

ເວທະນາຂັນທີ່ເປັນອາລົມຂອງກິເລດກໍມີ ທີ່ບໍ່ເປັນອາລົມຂອງກິເລດກໍມີ

ເວທະນາຂັນທີ່ກິເລດເຮັດໃຫ້ເສົ້າໝອງກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງກໍມີ

ເວທະນາຂັນທີ່ສໍາປະຍຸດດ້ວຍກິເລດກໍມີ ທີ່ວິບປະຍຸດຈາກກິເລດກໍມີ

ເວທະນາຂັນທີ່ວິບປະຍຸດຈາກກິເລດ ແຕ່ເປັນອາລົມຂອງກິເລດກໍມີ ທີ່ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດກໍມີ

ເວທະນາຂັນທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ຕ້ອງປະຫານດ້ວຍ ໂສດາປັດຕິມັກກໍມີ

ເວທະນາຂັນທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

ເວທະນາຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ

ເວທະນາຂັນທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

ເວທະນາຂັນທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ

ເວທະນາຂັນທີ່ມີວິຈານກໍມີ ທີ່ບໍ່ມີວິຈານກໍມີ

ເວທະນາຂັນທີ່ມີປີຕິກໍມີ ທີ່ບໍ່ມີປີຕິກໍມີ

ເວທະນາຂັນທີ່ປະກອບດ້ວຍປີຕິກໍມີ ທີ່ບໍ່ປະກອບດ້ວຍປີຕິກໍມີ

ເວທະນາຂັນທີ່ເປັນກາມາວະຈອນກໍມີ ທີ່ບໍ່ເປັນກາມາວະຈອນກໍມີ

ເວທະນາຂັນທີ່ເປັນອະຮູບປາວະຈອນກໍມີ ທີ່ບໍ່ເປັນອະຮູບປາວະຈອນກໍມີ

ເວທະນາຂັນທີ່ເປັນອະຮູບປາວະຈອນກໍມີ ທີ່ບໍ່ເປັນອະຮູບປາວະຈອນກໍມີ

ເວທະນາຂັນທີ່ນັບເນື່ອງໃນວັດຕະທຸກກໍມີ ທີ່ບໍ່ນັບເນື່ອງໃນວັດຕະທຸກກໍມີ

ເວທະນາຂັນທີ່ເປັນເຫດນໍາອອກຈາກວັດຕະທຸກກໍມີ ທີ່ບໍ່ເປັນເຫດນໍາອອກຈາກວັດຕະທຸກກໍມີ

ເວທະນາຂັນທີ່ໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ເວທະນາຂັນທີ່ມີທຳອື່ນຍິ່ງກວ່າກໍມີ ທີ່ບໍ່ມີທຳອື່ນຍິ່ງກວ່າກໍມີ

ເວທະນາຂັນທີ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ ທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໓໗] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ ທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

ເວທະນາຂັນທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖື ແລະເປັນອາລົມຂອງອຸປາທານກໍມີ

ຯລຯ

ເວທະນາຂັນທີ່ມີທຳພາຍໃນຕົນເປັນອາລົມກໍມີ ທີ່ມີທຳພາຍນອກຕົນເປັນອາລົມກໍມີ ທີ່ມີທຳພາຍໃນຕົນ ແລະພາຍນອກຕົນເປັນອາລົມກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

**ທຸກະມູລະກະວາຣະ ຈົບ**

## ຕິກະມູລະກະວາຣະ

[໓໘] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ມີເຫດກໍມີ ທີ່ບໍ່ມີເຫດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໓໙] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍເຫດກໍມີ ທີ່ວິບປະຍຸດຈາກເຫດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໔໐] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ

ເວທະນາຂັນທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ເວທະນາຂັນທີ່ຈິດບາງດວງຮູ້ໄດ້ກໍມີ ທີ່ຈິດບາງດວງຮູ້ບໍ່ໄດ້ກໍມີ

ເວທະນາຂັນທີ່ເປັນອາລົມຂອງອາສະວະກໍມີ ທີ່ບໍ່ເປັນອາລົມຂອງອາສະວະກໍມີ

ເວທະນາຂັນທີ່ສຳປະຍຸດດ້ວຍອາສະວະກໍມີ ທີ່ວິບປະຍຸດຈາກອາສະວະກໍມີ

ເວທະນາຂັນທີ່ວິບປະຍຸດຈາກອາສະວະ ແຕ່ເປັນອາລົມຂອງອາສະວະກໍມີ ທີ່ວິບປະຍຸດຈາກ ອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ

ຯລຯ

ເວທະນາຂັນທີ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ ທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໔໑] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ມີເຫດກໍມີ ທີ່ບໍ່ມີເຫດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

ເວທະນາຂັນທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ

ເວທະນາຂັນທີ່ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດກໍມີ

ເວທະນາຂັນທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

ເວທະນາຂັນທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

ເວທະນາຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

ເວທະນາຂັນທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິກໍມີ ທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

ເວທະນາຂັນທີ່ເປັນຂອງເສຂະບຸກຄົນກໍມີ ທີ່ເປັນຂອງອະເສຂະບຸກຄົນກໍມີ ທີ່ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນກໍມີ

ເວທະນາຂັນທີ່ເປັນປະຣິດຕະກໍມີ ທີ່ເປັນມະຫັກຄະຕະກໍມີ ທີ່ເປັນອັບປະມານະກໍມີ

ເວທະນາຂັນທີ່ມີປະຣິດຕະເປັນອາລົມກໍມີ ທີ່ມີມະຫັກຄະຕະເປັນອາລົມກໍມີ ທີ່ມີອັບປະມານະເປັນອາລົມກໍມີ

ເວທະນາຂັນທີ່ເປັນຊັ້ນຕ່ຳກໍມີ ທີ່ເປັນຊັ້ນກາງກໍມີ ທີ່ເປັນຊັ້ນປະນີດກໍມີ

ເວທະນາຂັນທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນກໍມີ ທີ່ມີສະພາວະຊອບແລະໃຫ້ຜົນແນ່ນອນກໍມີ ທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນກໍມີ

ເວທະນາຂັນທີ່ມີມັກເປັນອາລົມກໍມີ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ

ເວທະນາຂັນທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ

ເວທະນາຂັນທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ

ເວທະນາຂັນທີ່ມີອະດີດທຳເປັນອາລົມກໍມີ ທີ່ມີອະນາຄົດທຳເປັນອາລົມກໍມີ ທີ່ມີປັດຈຸບັນທຳເປັນອາລົມກໍມີ

ເວທະນາຂັນທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນ ແລະພາຍນອກຕົນກໍມີ

ເວທະນາຂັນທີ່ມີທຳພາຍໃນຕົນເປັນອາລົມກໍມີ ທີ່ມີທຳພາຍນອກຕົນເປັນອາລົມກໍມີ ທີ່ມີທຳພາຍໃນຕົນ ແລະພາຍນອກຕົນເປັນອາລົມກໍມີ

ໆລໆ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໔໘] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍເຫດກໍມີ ທີ່ວິບປະຍຸດຈາກເຫດກໍມີ

ເວທະນາຂັນທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ

ເວທະນາຂັນທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ເວທະນາຂັນທີ່ຈິດບາງດວງຮູ້ໄດ້ກໍມີ ທີ່ຈິດບາງດວງຮູ້ບໍ່ໄດ້ກໍມີ

ເວທະນາຂັນທີ່ເປັນອາລົມຂອງອາສະວະກໍມີ ທີ່ບໍ່ເປັນອາລົມຂອງອາສະວະກໍມີ

ເວທະນາຂັນທີ່ສຳປະຍຸດດ້ວຍອາສະວະກໍມີ ທີ່ວິບປະຍຸດຈາກອາສະວະກໍມີ

ເວທະນາຂັນທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະກໍມີ ທີ່ວິບປະຍຸດຈາກ ອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ

ເວທະນາຂັນທີ່ເປັນອາລົມຂອງສັງໂຍດກໍມີ ທີ່ບໍ່ເປັນອາລົມຂອງສັງໂຍດກໍມີ

ฯລฯ

ເວທະນາຂັນທີ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ ທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ມີທຳພາຍໃນຕົນເປັນອາລົມກໍມີ ທີ່ມີທຳພາຍນອກຕົນເປັນອາລົມກໍມີ ທີ່ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ

ฯລฯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

**ຕິກະມູລະກະວາຣະ ຈົບ**

## ອຸພະໂຕວັດຖຸກະວາຣະ

[໔໓] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ມີເຫດກໍມີ ທີ່ບໍ່ມີເຫດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ฯລฯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໔໔] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍເຫດກໍມີ ທີ່ວິບປະຍຸດຈາກເຫດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

ฯລฯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໔໕] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຢຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໔໕] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະ ກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໔໖] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ຈິດບາງດວງຮູ້ໄດ້ກໍມີ ທີ່ຈິດບາງດວງຮູ້ບໍ່ໄດ້ກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໔໗] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ເປັນອາລົມຂອງອາສະວະກໍມີທີ່ບໍ່ເປັນອາລົມຂອງອາສະວະກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ຕ້ອງປະຫານດ້ວຍໂສດາປັດຕິມັກ ກໍມີທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໔໙] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍອາສະວະກໍມີທີ່ວິບປະຍຸດຈາກອາສະວະກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໕໐] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະກໍມີ ທີ່ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິກໍມີ ທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໕໑] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ເປັນອາລົມຂອງສັງໂຍດກໍມີທີ່ບໍ່ເປັນອາລົມຂອງສັງໂຍດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນຂອງເສຂະບຸກຄົນກໍມີທີ່ເປັນຂອງອະເສຂະບຸກຄົນກໍມີ ທີ່ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໕໒] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໒ ໄດ້ແກ່ ເວທະນາຂັນທີ່ສໍາປະຍຸດດ້ວຍສັງໂຍດກໍມີທີ່ວິບປະຍຸດຈາກສັງໂຍດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນປະຣິດຕະກໍມີ ທີ່ເປັນມະຫັກຄະຕະກໍມີ ທີ່ເປັນອັບປະມານະກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໕໓] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ມີປະຣິດຕະເປັນອາລົມກໍມີ ທີ່ມີມະຫັກຄະຕະເປັນອາລົມກໍມີ ທີ່ມີອັບປະມານະເປັນອາລົມກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໕໔] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ເປັນອາລົມຂອງຄັນຖະກໍມີ ທີ່ບໍ່ເປັນອາລົມຂອງຄັນຖະກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນຊັ້ນຕ່ຳກໍມີ ທີ່ເປັນຊັ້ນກາງກໍມີ ທີ່ເປັນຊັ້ນປະນີດກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໕໕] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນກໍມີ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີ ທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໕໖] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະ ແລະບໍ່ເປັນອາລົມຂອງຄັນຖະກໍມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ມີມັກເປັນອາລົມກໍມີ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

[໕໗] ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

ຯລຯ

ເວທະນາຂັນໝວດລະຫຼາຍຢ່າງມີດ້ວຍອາການແນວນີ້ ນີ້ຮຽກວ່າ ເວທະນາຂັນ (໑)

ສັນຍາຂັນ ເປັນແນວໃດ?

ສັນຍາຂັນໝວດລະ ໑ ໄດ້ແກ່ ສັນຍາຂັນທີ່ສຳປະຍຸດດ້ວຍຜັດສະ

ຯລຯ

ສັນຍາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

ຯລຯ

ສັນຍາຂັນໝວດລະຫຼາຍຢ່າງມີດ້ວຍອາການແນວນີ້

ນີ້ຮຽກວ່າ ສັນຍາຂັນ (໒)

ສັງຂານຂັນ ເປັນແນວໃດ?

ສັງຂານຂັນໝວດລະ ໑ ໄດ້ແກ່ ສັງຂານຂັນທີ່ສຳປະຍຸດດ້ວຍຈິດ

ຯລຯ

ສັງຂານຂັນໝວດລະ ໑໐ ມີດ້ວຍອາການແນວນີ້

ຯລຯ

ສັງຂານຂັນໝວດລະຫຼາຍຢ່າງມີດ້ວຍອາການແນວນີ້

ນີ້ຮຽກວ່າ ສັງຂານຂັນ (໓)

ຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ເຊິ່ງນັບເນື່ອງໃນທຳມາຍະຕະນະ ເປັນແນວໃດ?

ອິດຖິນຊີ ຯລຯ ກະວະລິງກາຣາຫານ ນີ້ຮຽກວ່າ ຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ ເຊິ່ງນັບເນື່ອງໃນທຳມາຍະຕະນະ (໔)

ທາດທີ່ປັດໄຈບໍ່ປຸງແຕ່ງ ເປັນແນວໃດ?

ສະພາວະທຳເປັນທີ່ສິ້ນຣາຄະ ເປັນທີ່ສິ້ນໂທສະ ເປັນທີ່ສິ້ນໂມຫະ ນີ້ຮຽກວ່າ ທາດທີ່ປັດໄຈບໍ່ປຸງແຕ່ງ (໕)

ນີ້ຮຽກວ່າ ທຳມາຍະຕະນະ

**ອະພິທຳມະພາຊະນີ ຈົບ**

# ໓. ປັນຫາປຸດສະກະ

[໑໖໘] ອາຍະຕະນະ ໑໒ ຄື

໑. ຈັກຂາຍະຕະນະ ໒. ຣູປາຍະຕະນະ

ຯລຯ

໑໑. ມະນາຍະຕະນະ ໑໒. ທຳມາຍະຕະນະ

[໑໖໙] ບັນດາອາຍະຕະນະ ໑໒ ອາຍະຕະນະເທົ່າໃດ?ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

## ໑. ຕິກະມາຕິກາວິສັດຊະນາ

### ໑. ກຸສະລະຕິກະວິສັດຊະນາ

[໑໗໐] ອາຍະຕະນະ ໑໐ ເປັນອັບພະຍາກະຕະ ອາຍະຕະນະ ໒ ທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

### ໒. ເວທະນາຕິກະວິສັດຊະນາ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ມະນາຍະຕະນະທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທຳມາຍະຕະນະທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ

### ໓. ວິປາກະຕິກະວິສັດຊະນາ

ອາຍະຕະນະ ໑໐ ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ອາຍະຕະນະ ໒ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກ ກໍມີ

### ໔. ອຸປາທິນນະຕິກະວິສັດຊະນາ

ອາຍະຕະນະ ໕ ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖືແລະເປັນອາລົມຂອງອຸປາທານ ສັດທາຍະຕະນະກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາ

ທານ ອາຍະຕະນະ ໔ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ບໍ່ເປັນອາລົມຂອງອຸປາທານກໍມີ ອາຍະຕະນະ ໘ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ

## ໕. ສັງກິລິດຖະຕິກະວິສັດຊະນາ

ອາຍະຕະນະ ໑໐ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ ອາຍະຕະນະ ໘ ທີ່ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດກໍມີ

## ໖. ສະວິຕັກກະຕິກະວິສັດຊະນາ

ອາຍະຕະນະ ໑໐ ບໍ່ມີທັງວິຕົກແລະວິຈານ ມະນາຍະຕະນະທີ່ມີທັງວິຕົກແລະວິຈານ ກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທຳມາຍະຕະນະທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທີ່ກ່າວບໍ່ໄດ້ວ່າ ມີທັງວິຕົກແລະວິຈານ ບໍ່ມີວິຕົກມີພຽງວິຈານ ຫຼື ບໍ່ມີທັງວິຕົກແລະວິຈານກໍມີ

## ໗. ປີຕິຕິກະວິສັດຊະນາ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ປະກອບດ້ວຍປີຕິ ປະກອບດ້ວຍສຸກ ຫຼືປະກອບດ້ວຍ ອຸເປກຂາ ອາຍະຕະນະ ໘ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍ ອຸເປກຂາກໍມີ ທີ່ກ່າວບໍ່ໄດ້ວ່າ ປະກອບດ້ວຍປີຕິ ປະກອບດ້ວຍສຸກ ຫຼື ປະກອບດ້ວຍ ອຸເປກຂາກໍມີ

## ໘. ທັດສະນະຕິກະວິສັດຊະນາ

ອາຍະຕະນະ ໑໐ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ອາຍະຕະນະ ໘ ທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

## ໙. ທັດສະນະເຫຕຸຕິກະວິສັດຊະນາ

ອາຍະຕະນະ ໑໐ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ອາຍະຕະນະ ໒ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

## ໑໐. ອາຈະຍະຄາມີຕິກະວິສັດຊະນາ

ອາຍະຕະນະ ໑໐ ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານ ອາຍະຕະນະ ໒ ທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິກໍມີ ທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

## ໑໑. ເສຂະຕິກະວິສັດຊະນາ

ອາຍະຕະນະ ໑໐ ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ ອາຍະຕະນະ ໒ ທີ່ເປັນຂອງເສຂະບຸກຄົນກໍມີ ທີ່ເປັນຂອງອະເສຂະບຸກຄົນກໍມີ ທີ່ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນກໍມີ

## ໑໒. ປະຣິດຕະຕິກະວິສັດຊະນາ

ອາຍະຕະນະ ໑໐ ເປັນປະຣິດຕະ ອາຍະຕະນະ ໒ ທີ່ເປັນປະຣິດຕະກໍມີ ທີ່ເປັນມະຫັກຄະຕະກໍມີ ທີ່ເປັນອັບປະມານະກໍມີ

## ໑໓. ປະຣິດຕາຣຳມະນະຕິກະວິສັດຊະນາ

ອາຍະຕະນະ ໑໐ ຮັບຮູ້ອາລົມບໍ່ໄດ້ ອາຍະຕະນະ ໒ ທີ່ມີປະຣິດຕະເປັນອາລົມກໍມີທີ່ມີມະຫັກຄະຕະເປັນອາລົມກໍມີ ທີ່ມີອັບປະມານະເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ມີມະຫັກຄະຕະເປັນອາລົມ ຫຼື ມີອັບປະມານະເປັນອາລົມກໍມີ

## ໑໔. ຫີນະຕິກະວິສັດຊະນາ

ອາຍະຕະນະ ໑໐ ເປັນຊັ້ນກາງ ອາຍະຕະນະ ໒ ທີ່ເປັນຊັ້ນຕ່ຳກໍມີ ທີ່ເປັນຊັ້ນກາງກໍມີ ທີ່ເປັນຊັ້ນປະນີດກໍມີ

## ໑໕. ນິດສັດຕະຕິກະວິສັດຊະນາ

ອາຍະຕະນະ ໑໐ ເປັນທຳມະຊາດບໍ່ແນ່ນອນໂດຍອາການທັງສອງນັ້ນ ອາຍະຕະນະ ໒ ທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນກໍມີ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີ ທີ່ເປັນທຳມະຊາດບໍ່ແນ່ນອນໂດຍອາການທັງສອງນັ້ນກໍມີ

## ໑໖. ມັກຄາຣຳມະນະຕິກະວິສັດຊະນາ

ອາຍະຕະນະ ໑໐ ຮັບຮູ້ອາລົມບໍ່ໄດ້ ອາຍະຕະນະ ໒ ທີ່ມີມັກເປັນອາລົມກໍມີ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດຫຼືມີມັກເປັນອະທິບໍດີກໍມີ

## ໑໗. ອຸປັນນະຕິກະວິສັດຊະນາ

ອາຍະຕະນະ ໕ ທີ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ ທີ່ກ່າວບໍ່ໄດ້ວ່າ ຍັງບໍ່ເກີດຂຶ້ນກໍມີ ສັດທາຍະຕະນະທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ກ່າວບໍ່ໄດ້ວ່າ ຈັກເກີດຂຶ້ນແນ່ນອນກໍມີ ອາຍະຕະນະ ໕ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ ທຳມາຍະຕະນະທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ ທີ່ກ່າວບໍ່ໄດ້ວ່າ ເກີດຂຶ້ນ ຍັງບໍ່ເກີດຂຶ້ນ ຫຼື ຈັກເກີດຂຶ້ນແນ່ນອນກໍມີ

## ໑໘. ອະຕີຕະຕິກະວິສັດຊະນາ

ອາຍະຕະນະ ໑໑ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ ທຳມາຍະຕະນະທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອະດີດ ເປັນອະນາຄົດ ຫຼື ເປັນປັດຈຸບັນກໍມີ

## ໑໙. ອະຕີຕາຣຳມະນະຕິກະວິສັດຊະນາ

ອາຍະຕະນະ ໑໐ ຮັບຮູ້ອາລົມບໍ່ໄດ້ ອາຍະຕະນະ ໒ ທີ່ມີອະດີດທຳເປັນອາລົມກໍມີທີ່ມີອະນາຄົດທຳເປັນອາລົມກໍມີ ທີ່ມີປັດຈຸບັນທຳເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມກໍມີ

## ໒໐. ອັດຊັດຕະຕິກະວິສັດຊະນາ

ອາຍະຕະນະ ໑໒ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

### ໔໑. ອັດຊັດຕາຮໍາມະປະຕິກະວິສັດຊະນາ

ອາຍະຕະນະ ໑໐ ຮັບຮູ້ອາລົມບໍ່ໄດ້ ອາຍະຕະນະ ໔ ທີ່ມີທໍາພາຍໃນຕົນເປັນອາລົມ ກໍມີ ທີ່ມີທໍາພາຍນອກຕົນເປັນອາລົມກໍມີ ທີ່ມີທໍາພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີທໍາພາຍໃນຕົນເປັນອາລົມ ມີທໍາພາຍນອກຕົນເປັນອາລົມ ຫຼື ມີທໍາພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ

### ໔໔. ສະນິທັດສະນະຕິກະວິສັດຊະນາ

ຮູປາຍະຕະນະເຫັນໄດ້ແລະກະທົບໄດ້ ອາຍະຕະນະ ໗ ເຫັນບໍ່ໄດ້ແຕ່ກະທົບໄດ້ ອາຍະຕະນະ ໔ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

**ຕິກະມາຕິກາວິສັດຊະນາ ຈົບ**

## ໔. ທຸກະມາຕິກາວິສັດຊະນາ

### ໑. ເຫຕຸໂຄດສະກະວິສັດຊະນາ

[໑໗໑] ອາຍະຕະນະ ໑໑ ບໍ່ເປັນເຫດ ທໍາມາຍະຕະນະທີ່ເປັນເຫດກໍມີ ທີ່ບໍ່ເປັນເຫດກໍມີ

ອາຍະຕະນະ ໑໐ ບໍ່ມີເຫດ ອາຍະຕະນະ ໔ ທີ່ມີເຫດກໍມີ ທີ່ບໍ່ມີເຫດກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກເຫດ ອາຍະຕະນະ ໔ ທີ່ສໍາປະຍຸດດ້ວຍເຫດກໍມີທີ່ວິບປະຍຸດຈາກເຫດກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ຫຼື ມີເຫດແຕ່ບໍ່ເປັນເຫດມະນາຍະຕະນະ ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ທີ່ມີເຫດແຕ່ບໍ່ເປັນເຫດກໍມີ ທີ່ກ່າວບໍ່ໄດ້ ວ່າມີເຫດແຕ່ບໍ່ເປັນເຫດກໍມີ ທໍາມາຍະຕະນະທີ່ເປັນເຫດແລະມີເຫດກໍມີ ທີ່ມີເຫດແຕ່ບໍ່ເປັນເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ຫຼື ມີເຫດແຕ່ບໍ່ເປັນເຫດກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນເຫດແລະສໍາປະຍຸດດ້ວຍເຫດ ຫຼື ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນເຫດແລະສໍາປະຍຸດດ້ວຍເຫດທີ່ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ ທໍາມາຍະຕະນະທີ່ເປັນເຫດແລະສໍາປະຍຸດດ້ວຍເຫດກໍມີ ທີ່ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນເຫດແລະສໍາປະຍຸດດ້ວຍເຫດ ຫຼື ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ກໍມີ

ອາຍະຕະນະ ໑໐ ບໍ່ເປັນເຫດແລະບໍ່ມີເຫດ ມະນາຍະຕະນະທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ ທໍາມາຍະຕະນະທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດ ຫຼື ບໍ່ເປັນເຫດແລະບໍ່ມີເຫດກໍມີ

## ໔. ຈູລັນຕະຣະທຸກະວິສັດຊະນາ

ອາຍະຕະນະ ໑໑ ມີປັດໄຈປຸງແຕ່ງ ທຳມາຍະຕະນະທີ່ມີປັດໄຈປຸງແຕ່ງກໍມີ ທີ່ບໍ່ມີປັດໄຈປຸງແຕ່ງກໍມີ

ອາຍະຕະນະ ໑໑ ຖືກປັດໄຈປຸງແຕ່ງ ທຳມາຍະຕະນະທີ່ຖືກປັດໄຈປຸງແຕ່ງກໍມີ ທີ່ບໍ່ຖືກປັດໄຈປຸງແຕ່ງກໍມີ

ຣູປາຍະຕະນະເຫັນໄດ້ ອາຍະຕະນະ ໑໑ ເຫັນບໍ່ໄດ້

ອາຍະຕະນະ ໑໐ ກະທົບໄດ້ ອາຍະຕະນະ ໘ ກະທົບບໍ່ໄດ້

ອາຍະຕະນະ ໑໐ ເປັນຣູບ ມະນາຍະຕະນະບໍ່ເປັນຣູບ ທຳມາຍະຕະນະທີ່ເປັນຣູບກໍມີ ທີ່ບໍ່ເປັນຣູບກໍມີ

ອາຍະຕະນະ ໑໐ ເປັນໂລກິຍະ ອາຍະຕະນະ ໘ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ອາຍະຕະນະ ໑໘ ທີ່ຈິດບາງດວງຮູ້ໄດ້ກໍມີ ທີ່ຈິດບາງດວງຮູ້ບໍ່ໄດ້ກໍມີ

## ໕. ອາສະວະໂຄດສະກະວິສັດຊະນາ

ອາຍະຕະນະ ໑໑ ບໍ່ເປັນອາສະວະ ທຳມາຍະຕະນະທີ່ເປັນອາສະວະກໍມີ ທີ່ບໍ່ເປັນອາສະວະກໍມີ

ອາຍະຕະນະ ໑໐ ເປັນອາລົມຂອງອາສະວະ ອາຍະຕະນະ ໘ ທີ່ເປັນອາລົມຂອງອາສະວະກໍມີ ທີ່ບໍ່ເປັນອາລົມຂອງອາສະວະກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກອາສະວະ ອາຍະຕະນະ ໘ ທີ່ສຳປະຍຸດດ້ວຍອາສະວະກໍມີ ທີ່ວິບປະຍຸດຈາກອາສະວະກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ທີ່ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ ທຳມາຍະຕະນະທີ່ເປັນອາສະວະແລະເປັນອາລົມຂອງອາສະວະກໍມີ ທີ່ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ທີ່ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍ ອາສະວະແຕ່ບໍ່ເປັນອາສະວະກໍມີ ທຳມາຍະຕະນະທີ່ເປັນອາສະວະແລະສຳປະຍຸດ

ດ້ວຍອາສະວະກໍມີ ທີ່ສໍາປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາສະວະແລະສໍາປະຍຸດດ້ວຍອາສະວະ ຫຼື ສໍາປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ ອາຍະຕະນະ ໘ ທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະກໍມີ ທີ່ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ ຫຼື ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ

## ໔. ສັນໂຍຊະນະໂຄດສະກະວິສັດຊະນາ

ອາຍະຕະນະ ໑໑ ບໍ່ເປັນສັງໂຍດ ທໍາມາຍະຕະນະທີ່ເປັນສັງໂຍດກໍມີ ທີ່ບໍ່ເປັນສັງໂຍດກໍມີ ອາຍະຕະນະ ໑໐ ເປັນອາລົມຂອງສັງໂຍດ ອາຍະຕະນະ ໘ ທີ່ເປັນອາລົມຂອງສັງໂຍດກໍມີ ທີ່ບໍ່ເປັນອາລົມຂອງສັງໂຍດກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກສັງໂຍດ ອາຍະຕະນະ ໘ ທີ່ສໍາປະຍຸດດ້ວຍສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ຫຼື ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ທີ່ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທໍາມາຍະຕະນະທີ່ເປັນສັງໂຍດແລະເປັນອາລົມຂອງສັງໂຍດກໍມີ ທີ່ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ຫຼື ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສໍາປະຍຸດດ້ວຍສັງໂຍດ ຫຼື ສໍາປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສໍາປະຍຸດດ້ວຍສັງໂຍດ ທີ່ສໍາປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ສໍາປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທໍາມາຍະຕະນະທີ່ເປັນສັງໂຍດແລະສໍາປະຍຸດດ້ວຍສັງໂຍດກໍມີ ທີ່ສໍາປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສໍາປະຍຸດດ້ວຍສັງໂຍດ ຫຼື ສໍາປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ອາຍະຕະນະ ໘ ທີ່ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ຫຼື ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ

## ໔. ຄັນຖະໂຄດສະກະວິສັດຊະນາ

ອາຍະຕະນະ ໑໑ ບໍ່ເປັນຄັນຖະທຳມາຍະຕະນະທີ່ເປັນຄັນຖະກໍມີ ທີ່ບໍ່ເປັນຄັນຖະກໍມີ

ອາຍະຕະນະ ໑໐ ເປັນອາລົມຂອງຄັນຖະ ອາຍະຕະນະ ໘ ທີ່ເປັນອາລົມຂອງຄັນຖະກໍມີ ທີ່ບໍ່ເປັນອາລົມຂອງຄັນຖະກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກຄັນຖະ ອາຍະຕະນະ ໘ ທີ່ສຳປະຍຸດດ້ວຍຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ ຫຼືເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ ທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ ທຳມາຍະຕະນະທີ່ເປັນຄັນຖະແລະເປັນອາລົມຂອງຄັນຖະກໍມີທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ ຫຼືເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ຫຼືສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ ທຳມາຍະຕະນະທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະກໍມີ ທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ຫຼືສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະ ອາຍະຕະນະ ໘ ທີ່ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະຫຼືວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະກໍມີ

## ໖. ໂອຄະໂຄດສະກາທິວິສັດຊະນາ

ອາຍະຕະນະ ໑໑ ບໍ່ເປັນໂອຄະ ໗ລ໗ ບໍ່ເປັນໂຍຄະ ໗ລ໗ ບໍ່ເປັນນິວອນ ທຳມາຍະຕະນະທີ່ເປັນນິວອນກໍມີ ທີ່ບໍ່ເປັນນິວອນກໍມີ

ອາຍະຕະນະ ໑໐ ເປັນອາລົມຂອງນິວອນ ອາຍະຕະນະ ໘ ທີ່ເປັນອາລົມຂອງນິວອນ ກໍມີ ທີ່ບໍ່ເປັນອາລົມຂອງນິວອນກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກນິວອນ ອາຍະຕະນະ ໔ ທີ່ສຳປະຍຸດດ້ວຍນິວອນກໍມີ ທີ່ວິບປະຍຸດຈາກນິວອນກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ຫຼື ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ທີ່ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ ທຳມາຍະຕະນະທີ່ເປັນນິວອນແລະເປັນອາລົມຂອງນິວອນກໍມີ ທີ່ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ຫຼື ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ຫຼື ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ທີ່ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ ທຳມາຍະຕະນະທີ່ເປັນນິວອນແລະສຳປະຍຸດດ້ວຍນິວອນກໍມີ ທີ່ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ຫຼື ທີ່ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ ອາຍະຕະນະ ໔ ທີ່ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນກໍມີ ທີ່ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນຫຼືວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນກໍມີ

## ໗. ປະຣາມາສະໂຄດສະກະວິສັດຊະນາ

ອາຍະຕະນະ ໑໑ ບໍ່ເປັນປະຣາມາດ ທຳມາຍະຕະນະທີ່ເປັນປະຣາມາດກໍມີ ທີ່ບໍ່ເປັນປະຣາມາດກໍມີ

ອາຍະຕະນະ ໑໐ ເປັນອາລົມຂອງປະຣາມາດ ອາຍະຕະນະ ໔ ທີ່ເປັນອາລົມຂອງປະຣາມາດກໍມີ ທີ່ບໍ່ເປັນອາລົມຂອງປະຣາມາດກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກປະຣາມາດ ມະນາຍະຕະນະທີ່ສຳປະຍຸດດ້ວຍປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດກໍມີ ທຳມາຍະຕະນະທີ່ສຳປະຍຸດດ້ວຍປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍປະຣາມາດ ຫຼື ວິບປະຍຸດຈາກປະຣາມາດກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ຫຼື ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ທີ່ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ ທຳມາຍະຕະນະທີ່ເປັນປະຣາມາດແລະເປັນອາລົມຂອງປະຣາມາດກໍມີ ທີ່ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ຫຼື ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດ ອາຍະຕະນະ ໘ ທີ່ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດແລະ ບໍ່ເປັນອາລົມຂອງປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດ ຫຼື ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດກໍມີ

## ໑໐. ມະຫັນຕະຣະທຸກະວິສັດຊະນາ

ອາຍະຕະນະ ໑໐ ຮັບຮູ້ອາລົມບໍ່ໄດ້ ມະນາຍະຕະນະຮັບຮູ້ອາລົມໄດ້ ທຳມາຍະຕະນະທີ່ຮັບຮູ້ອາລົມໄດ້ກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ

ມະນາຍະຕະນະເປັນຈິດ ອາຍະຕະນະ ໑໑ ບໍ່ເປັນຈິດ

ອາຍະຕະນະ ໑໑ ບໍ່ເປັນເຈຕະສິກ ທຳມາຍະຕະນະທີ່ເປັນເຈຕະສິກກໍມີ ທີ່ບໍ່ເປັນເຈຕະສິກກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກຈິດ ທຳມາຍະຕະນະທີ່ສຳປະຍຸດດ້ວຍຈິດກໍມີ ທີ່ວິບປະຍຸດຈາກຈິດກໍມີ ມະນາຍະຕະນະກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍຈິດ ຫຼືວິບປະຍຸດຈາກຈິດ

ອາຍະຕະນະ ໑໐ ບໍ່ປະປົນກັບຈິດ ທຳມາຍະຕະນະທີ່ປະປົນກັບຈິດກໍມີ ທີ່ບໍ່ປະປົນກັບຈິດກໍມີ ມະນາຍະຕະນະກ່າວບໍ່ໄດ້ວ່າ ປະປົນກັບຈິດ ຫຼືບໍ່ປະປົນກັບຈິດ

ອາຍະຕະນະ ໖ ບໍ່ມີຈິດເປັນສະມຸດຖານ ອາຍະຕະນະ ໖ ທີ່ມີຈິດເປັນສະມຸດຖານກໍມີ ທີ່ບໍ່ມີຈິດເປັນສະມຸດຖານກໍມີ

ອາຍະຕະນະ ໑໑ ບໍ່ເກີດພ້ອມກັບຈິດ ທຳມາຍະຕະນະທີ່ເກີດພ້ອມກັບຈິດກໍມີ ທີ່ບໍ່ເກີດພ້ອມກັບຈິດກໍມີ

ອາຍະຕະນະ ໑໑ ບໍ່ເປັນໄປຕາມຈິດ ທຳມາຍະຕະນະທີ່ເປັນໄປຕາມຈິດກໍມີ ທີ່ບໍ່ເປັນໄປຕາມຈິດກໍມີ

ອາຍະຕະນະ ໑໑ ບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານ ທຳມາຍະຕະນະທີ່ປະປົນກັບຈິດແລະມີຈິດເປັນສະມຸດຖານກໍມີ ທີ່ບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານກໍມີ

ອາຍະຕະນະ ໑໑ ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ ທຳມາຍະຕະນະທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດກໍມີ ທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດກໍມີ

ອາຍະຕະນະ ໑໑ ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ທຳມາຍະຕະນະທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດກໍມີ ທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດກໍມີ

ອາຍະຕະນະ ໖ ເປັນພາຍໃນ ອາຍະຕະນະ ໖ ເປັນພາຍນອກ

ອາຍະຕະນະ ໗ ເປັນອຸປາທາຍະຮູບ ອາຍະຕະນະ ໔ ບໍ່ເປັນອຸປາທາຍະຮູບ ທຳມາຍະຕະນະທີ່ເປັນອຸປາທາຍະຮູບກໍມີ ທີ່ບໍ່ເປັນອຸປາທາຍະຮູບກໍມີ

## ໑໑. ອຸປາທານໂຄດສະກະວິສັດຊະນາ

ອາຍະຕະນະ ໕ ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ສັດທາຍະຕະນະກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ອາຍະຕະນະ ໖ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືກໍມີ

ອາຍະຕະນະ ໑໑ ບໍ່ເປັນອຸປາທານ ທຳມາຍະຕະນະທີ່ເປັນອຸປາທານກໍມີ ທີ່ບໍ່ເປັນອຸປາທານກໍມີ

ອາຍະຕະນະ ໑໐ ເປັນອາລົມຂອງອຸປາທານ ອາຍະຕະນະ ໔ ທີ່ເປັນອາລົມຂອງອຸປາທານກໍມີ ທີ່ບໍ່ເປັນອາລົມຂອງອຸປາທານກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກອຸປາທານ ອາຍະຕະນະ ໔ ທີ່ສຳປະຍຸດດ້ວຍອຸປາທານກໍມີ ທີ່ວິບປະຍຸດຈາກອຸປາທານກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະເປັນອາລົມຂອງອຸປາທານ ຫຼືເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນອຸປາທານແລະເປັນອາລົມຂອງອຸປາທານ ທີ່ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ ທຳມາຍະຕະນະທີ່ເປັນອຸປາທານແລະເປັນອາລົມຂອງອຸປາທານກໍມີ ທີ່ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າເປັນອຸປາທານແລະເປັນອາລົມຂອງອຸປາທານ ຫຼື ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະສຳປະຍຸດດ້ວຍອຸປາທານຫຼືສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນອາລົມຂອງອຸປາທານແລະສຳປະຍຸດດ້ວຍອຸປາທານ ທີ່ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ ທຳມາຍະຕະນະທີ່ເປັນອຸປາທານແລະ

ສຳປະຍຸດດ້ວຍອຸປາທານກໍມີ ທີ່ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີທີ່ກ່າວບໍ່ໄດ້ວ່າ ເປັນອຸປາທານແລະສຳປະຍຸດດ້ວຍອຸປາທານ ຫຼື ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານອາຍະຕະນະ ໘ ທີ່ສຳປະຍຸດດ້ວຍອຸປາທານແລະເປັນອາລົມຂອງອຸປາທານກໍມີ ທີ່ວິບປະຍຸດຈາກອຸປາທານແລະບໍ່ເປັນອາລົມຂອງອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານ ຫຼື ວິບປະຍຸດຈາກອຸປາທານແລະບໍ່ເປັນອາລົມຂອງອຸປາທານກໍມີ

## ໑໘. ກິເລດໂຄດສະກະວິສັດຊະນາ

ອາຍະຕະນະ ໑໑ ບໍ່ເປັນກິເລດ ທຳມາຍະຕະນະທີ່ເປັນກິເລດກໍມີ ທີ່ບໍ່ເປັນກິເລດກໍມີ

ອາຍະຕະນະ ໑໐ ເປັນອາລົມຂອງກິເລດ ອາຍະຕະນະ ໘ ທີ່ເປັນອາລົມຂອງກິເລດ ກໍມີ ທີ່ບໍ່ເປັນອາລົມຂອງກິເລດກໍມີ

ອາຍະຕະນະ ໑໐ ກິເລດບໍ່ເຮັດໃຫ້ເສົ້າໝອງ ອາຍະຕະນະ ໘ ທີ່ກິເລດເຮັດໃຫ້ເສົ້າໝອງກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກກິເລດ ອາຍະຕະນະ ໘ ທີ່ສຳປະຍຸດດ້ວຍກິເລດກໍມີ ທີ່ວິບປະຍຸດຈາກກິເລດກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດ ຫຼື ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດ ທີ່ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ ທຳມາຍະຕະນະທີ່ເປັນກິເລດແລະເປັນອາລົມຂອງກິເລດກໍມີ ທີ່ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດ ຫຼືເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ຫຼື ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ຫຼື ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ ທຳມາຍະຕະນະທີ່ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງກໍມີ ທີ່ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ຫຼື ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ເປັນກິເລດແລະສຳປະຍຸດດ້ວຍກິເລດ ຫຼື ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ ມະນາຍະຕະນະກ່າວບໍ່ໄດ້ວ່າ ເປັນກິເລດແລະສຳປະຍຸດດ້ວຍກິເລດ ທີ່ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ ທຳມາຍະຕະນະທີ່ເປັນກິເລດແລະສຳປະຍຸດດ້ວຍກິເລດກໍມີ ທີ່ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນກິເລດແລະສຳປະຍຸດດ້ວຍກິເລດ ຫຼື ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ

ອາຍະຕະນະ ໑໐ ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດອາຍະຕະນະ ໒ ທີ່ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດກໍມີ ທີ່ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ ຫຼື ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດກໍມີ

## ໑໓. ປິດຖິທຸກະວິສັດຊະນາ

ອາຍະຕະນະ ໑໐ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ອາຍະຕະນະ ໒ ທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ

ອາຍະຕະນະ ໑໐ ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ອາຍະຕະນະ ໒ ທີ່ຕ້ອງປະຫານ ດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

ອາຍະຕະນະ ໑໐ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ອາຍະຕະນະ ໒ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ

ອາຍະຕະນະ ໑໐ ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ອາຍະຕະນະ ໒ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

ອາຍະຕະນະ ໑໐ ບໍ່ມີວິຕົກ ອາຍະຕະນະ ໒ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ

ອາຍະຕະນະ ໑໐ ບໍ່ມີວິຈານ ອາຍະຕະນະ ໒ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານກໍມີ

ອາຍະຕະນະ ໑໐ ບໍ່ມີປິຕິ ອາຍະຕະນະ ໒ ທີ່ມີປິຕິກໍມີ ທີ່ບໍ່ມີປິຕິກໍມີ

ອາຍະຕະນະ ໑໐ ບໍ່ປະກອບດ້ວຍປິຕິ ອາຍະຕະນະ ໒ ທີ່ປະກອບດ້ວຍປິຕິກໍມີ ທີ່ບໍ່ປະກອບດ້ວຍປິຕິກໍມີ

ອາຍະຕະນະ ໑໐ ບໍ່ປະກອບດ້ວຍສຸກ ອາຍະຕະນະ ໒ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ

ອາຍະຕະນະ ໑໐ ບໍ່ປະກອບດ້ວຍອຸເປກຂາ ອາຍະຕະນະ ໒ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ອາຍະຕະນະ ໑໐ ເປັນກາມາວະຈອນ ອາຍະຕະນະ ໒ ທີ່ເປັນກາມາວະຈອນກໍມີ ທີ່ບໍ່ເປັນກາມາວະຈອນກໍມີ

ອາຍະຕະນະ ໑໐ ບໍ່ເປັນອະຣູບປາວະຈອນ ອາຍະຕະນະ ໒ ທີ່ເປັນອະຣູບປາວະຈອນກໍມີ ທີ່ບໍ່ເປັນອະຣູບປາວະຈອນກໍມີ

ອາຍະຕະນະ ໑໐ ບໍ່ເປັນອະຣູບປາວະຈອນ ອາຍະຕະນະ ໒ ທີ່ເປັນອະຣູບປາວະຈອນ ກໍມີ ທີ່ບໍ່ເປັນອະຣູບປາວະຈອນກໍມີ

ອາຍະຕະນະ ໑໐ ນັບເນື່ອງໃນວັດຕະທຸກ ອາຍະຕະນະ ໒ ທີ່ນັບເນື່ອງໃນວັດຕະທຸກກໍມີ ທີ່ບໍ່ນັບເນື່ອງໃນວັດຕະທຸກກໍມີ

ອາຍະຕະນະ ໑໐ ບໍ່ເປັນເຫດນຳອອກຈາກວັດຕະທຸກ ອາຍະຕະນະ ໒ ທີ່ເປັນເຫດນຳອອກຈາກວັດຕະທຸກກໍມີ ທີ່ບໍ່ເປັນເຫດນຳອອກຈາກວັດຕະທຸກກໍມີ

ອາຍະຕະນະ ໑໐ ໃຫ້ຜົນບໍ່ແນ່ນອນ ອາຍະຕະນະ ໒ ທີ່ໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ອາຍະຕະນະ ໑໐ ມີທຳອື່ນຍິ່ງກວ່າ ອາຍະຕະນະ ໒ ທີ່ມີທຳອື່ນຍິ່ງກວ່າກໍມີ ທີ່ບໍ່ມີທຳອື່ນຍິ່ງກວ່າກໍມີ

ອາຍະຕະນະ ໑໐ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ ອາຍະຕະນະ ໒ ທີ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ ທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ

**ປັນຫາປຸດສະກະ ຈົບ**

**ອາຍະຕະນະວິພັງ ຈົບບໍລິບູນ**

# ໓. ທາດວິພັງ

## ໑. ສຸດຕັນຕະພາຊະນີ

[໑໗໔] ທາດ ໖ ຄື

໑. ປະຖະວີທາດ (ທາດດິນ)
໒. ອາໂປທາດ (ທາດນໍ້າ)
໓. ເຕໂຊທາດ (ທາດໄຟ)
໔. ວາໂຍທາດ (ທາດລົມ)
໕. ອາກາດທາດ (ທາດຄືບ່ອນວ່າງ)
໖. ວິນຍານທາດ (ທາດຄືວິນຍານ)

[໑໗໓] ບັນດາທາດ ໖ ນັ້ນ ປະຖະວີທາດ ເປັນແນວໃດ?

ປະຖະວີທາດມີ ໒ ຢ່າງ ຄື ປະຖະວີທາດທີ່ເປັນພາຍໃນກໍມີ ທີ່ເປັນພາຍນອກກໍມີ

ໃນປະຖະວີທາດ ໒ ຢ່າງນັ້ນ ປະຖະວີທາດທີ່ເປັນພາຍໃນ ເປັນແນວໃດ?

ທຳມະຊາດທີ່ແຂງ ທຳມະຊາດທີ່ກະດ້າງ ຄວາມແຂງ ພາວະທີ່ແຂງ ເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ເຊັ່ນ ຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ຫຼືທຳມະຊາດທີ່ແຂງ ທຳມະຊາດທີ່ກະດ້າງ ຄວາມແຂງ ພາວະທີ່ແຂງ ເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ແມ່ນອື່ນໃດມີຢູ່ ນີ້ຮຽກວ່າ ປະຖະວີທາດທີ່ເປັນພາຍໃນ

ປະຖະວີທາດທີ່ເປັນພາຍນອກ ເປັນແນວໃດ?

ທຳມະຊາດທີ່ແຂງ ທຳມະຊາດທີ່ກະດ້າງ ຄວາມແຂງ ພາວະທີ່ແຂງ ເປັນພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເຊິ່ງເປັນພາຍນອກຕົນ ເຊັ່ນ ເຫຼັກ ໂລຫະ ດີບຸກຂາວ ດີບຸກດຳ ເງິນ ແກ້ວມຸກດາ ແກ້ວມະນີ ແກ້ວໄພທູນ ຫອຍສັງ ສີລາ ແກ້ວປະພານ ເງິນຕູາ ຄຳ ແກ້ວມະນີແດງ ແກ້ວມະນີລາຍ ຫຍ້າ ທ່ອນໄມ້ ກ້ອນຫີນ ກະເບື້ອງ ແຜ່ນດິນ ແຜ່ນຫີນ ພູເຂົາ ຫຼື ທຳມະຊາດທີ່ແຂງ ທຳມະຊາດທີ່ກະດ້າງ ຄວາມແຂງ ພາວະທີ່ແຂງ ເປັນພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເຊິ່ງເປັນພາຍນອກຕົນ ແມ່ນອື່ນໃດມີຢູ່ ນີ້ຮຽກວ່າ ປະຖະວີທາດທີ່ເປັນພາຍນອກ

ປະມວນຫຍໍ້ປະຖະວີທາດທີ່ເປັນພາຍໃນແລະປະຖະວີທາດທີ່ເປັນພາຍນອກເຂົ້າເປັນໝວດດຽວກັນ ນີ້ຮຽກວ່າ ປະຖະວີທາດ (໑)

[໑໗໔] ອາໂປທາດ ເປັນແນວໃດ?

ອາໂປທາດມີ ໔ ຢ່າງ ຄື ອາໂປທາດທີ່ເປັນພາຍໃນກໍມີ ທີ່ເປັນພາຍນອກກໍມີ

ໃນອາໂປທາດ ໔ ຢ່າງນັ້ນ ອາໂປທາດທີ່ເປັນພາຍໃນ ເປັນແນວໃດ?

ຄວາມເອີບອາບ ທຳມະຊາດທີ່ເອີບອາບ ຄວາມໜຽວ ທຳມະຊາດທີ່ໜຽວ ທຳມະຊາດເປັນເຄື່ອງເກາະກຸມຮູບ ເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະ ທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ເຊັ່ນ ບີ ສະເລດ ໜອງ ເລືອດ ເຫື່ອ ມັນຂຸ້ນ  ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ ຫຼື ຄວາມເອີບອາບ ທຳມະຊາດທີ່ເອີບອາບ ຄວາມໜຽວ ທຳມະຊາດທີ່ໜຽວ ທຳມະຊາດເປັນເຄື່ອງເກາະກຸມຮູບ ເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ແມ່ນອື່ນໃດມີຢູ່ ນີ້ຮຽກວ່າ ອາໂປທາດທີ່ເປັນພາຍໃນ

ອາໂປທາດທີ່ເປັນພາຍນອກ ເປັນແນວໃດ?

ຄວາມເອີບອາບ ທຳມະຊາດທີ່ເອີບອາບ ຄວາມໜຽວ ທຳມະຊາດທີ່ໜຽວ ທຳມະຊາດເປັນເຄື່ອງເກາະກຸມຮູບ ເປັນພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເຊິ່ງເປັນພາຍນອກຕົນ ເຊັ່ນນ້ຳຮາກໄມ້ ນ້ຳລຳຕົ້ນ ນ້ຳເປືອກໄມ້ ນ້ຳໃບໄມ້ ນ້ຳດອກໄມ້ ນ້ຳໝາກໄມ້ ນົມສົດ ນົມສົ້ມ ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜິ້ງ ນ້ຳອ້ອຍ ນ້ຳໃນພື້ນດິນ ນ້ຳໃນອາກາດ ຫຼື ຄວາມເອີບອາບ ທຳມະຊາດທີ່ຊຶມຊາບ ຄວາມໜຽວ ທຳມະຊາດທີ່ໜຽວ ທຳມະຊາດເປັນເຄື່ອງເກາະກຸມຮູບ ເປັນພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເຊິ່ງເປັນພາຍນອກຕົນ ແມ່ນອື່ນໃດມີຢູ່ ນີ້ຮຽກວ່າ ອາໂປທາດທີ່ເປັນພາຍນອກ

ປະມວນຫຍໍ້ອາໂປທາດທີ່ເປັນພາຍໃນແລະອາໂປທາດທີ່ເປັນພາຍນອກເຂົ້າເປັນໝວດດຽວກັນ ນີ້ຮຽກວ່າ ອາໂປທາດ (໔)

[໑໗໕] ເຕໂຊທາດ ເປັນແນວໃດ?

ເຕໂຊທາດມີ ໔ ຢ່າງ ຄື ເຕໂຊທາດທີ່ເປັນພາຍໃນກໍມີ ທີ່ເປັນພາຍນອກກໍມີ

ໃນເຕໂຊທາດ ໔ ຢ່າງນັ້ນ ເຕໂຊທາດທີ່ເປັນພາຍໃນ ເປັນແນວໃດ?

ຄວາມຮ້ອນ ທຳມະຊາດທີ່ຮ້ອນ ຄວາມອຸ່ນ ທຳມະຊາດທີ່ອຸ່ນ ຄວາມອົບອຸ່ນ ທຳມະຊາດທີ່ອົບອຸ່ນ ເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ເຊັ່ນເຕໂຊທາດທີ່ເຮັດໃຫ້ຮ່າງກາຍອົບອຸ່ນ ທີ່ເຮັດໃຫ້ຮ່າງກາຍຊຸດໂຊມ ທີ່ເຮັດໃຫ້ຮ້ອນຮົນແລະທີ່ເຮັດໃຫ້ຂອງກິນຂອງດື່ມ ຂອງຫຍໍ້າ ຂອງຊີມ ເຖິງຄວາມຍ່ອຍໄປດ້ວຍດີ ຫຼື ຄວາມຮ້ອນ ທຳມະຊາດທີ່ຮ້ອນ ຄວາມອຸ່ນ ທຳມະຊາດທີ່ອຸ່ນ ຄວາມອົບອຸ່ນ ທຳມະຊາດທີ່ອົບ

ອຸ່ນ ເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ແມ່ນອື່ນໃດມີຢູ່ ນີ້ຮຽກວ່າ ເຕໂຊທາດທີ່ເປັນພາຍໃນ

ເຕໂຊທາດທີ່ເປັນພາຍນອກ ເປັນແນວໃດ?

ຄວາມຮ້ອນ ທຳມະຊາດທີ່ຮ້ອນ ຄວາມອຸ່ນ ທຳມະຊາດທີ່ອຸ່ນ ຄວາມອົບອຸ່ນ ທຳມະຊາດທີ່ອົບອຸ່ນ ເປັນພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເຊິ່ງເປັນພາຍນອກຕົນ ເຊັ່ນໄຟຟືນ ໄຟເກັດໄມ້ ໄຟຫຍ້າ ໄຟມູນງົວ ໄຟແກບ ໄຟຂີ້ເຫຍື່ອ ໄຟອະສະນິບາດ ຄວາມຮ້ອນແຫ່ງໄຟ ຄວາມຮ້ອນແຫ່ງດວງອາທິດ ຄວາມຮ້ອນແຫ່ງກອງຟືນ ຄວາມຮ້ອນແຫ່ງກອງຫຍ້າ ຄວາມຮ້ອນແຫ່ງກອງເຂົ້າເປືອກ ຄວາມຮ້ອນແຫ່ງກອງຂີ້ເຖົ່າ ຫຼື ຄວາມຮ້ອນ ທຳມະຊາດທີ່ຮ້ອນ ຄວາມອົບອຸ່ນ ທຳມະຊາດທີ່ອົບອຸ່ນ ເປັນພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເຊິ່ງເປັນພາຍນອກຕົນ ແມ່ນອື່ນໃດມີຢູ່ ນີ້ຮຽກວ່າ ເຕໂຊທາດທີ່ເປັນພາຍນອກ

ປະມວນຫຍໍ້ເຕໂຊທາດທີ່ເປັນພາຍໃນ ແລະເຕໂຊທາດທີ່ເປັນພາຍນອກເຂົ້າເປັນໝວດດຽວກັນ ນີ້ຮຽກວ່າ ເຕໂຊທາດ (໓)

[໑໗໖] ວາໂຍທາດ ເປັນແນວໃດ?

ວາໂຍທາດມີ ໒ ຢ່າງ ຄື ວາໂຍທາດທີ່ເປັນພາຍໃນກໍມີ ທີ່ເປັນພາຍນອກກໍມີ

ໃນວາໂຍທາດ ໒ ຢ່າງນັ້ນ ວາໂຍທາດທີ່ເປັນພາຍໃນ ເປັນແນວໃດ?

ຄວາມພັດໄປມາ ທຳມະຊາດທີ່ພັດໄປມາ ທຳມະຊາດເຄື່ອງຄ້ຳຈຸນຮູບ ເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ເຊັ່ນ ລົມພັດຂຶ້ນເບື້ອງເທິງ ລົມພັດລົງເບື້ອງຕ່ຳ ລົມໃນທ້ອງ ລົມໃນໄສ້ ລົມພັດໄປຕາມຕົວ ລົມອາວຸດ ລົມມີດແຖ ລົມເພີກຫົວໃຈ ລົມຫາຍໃຈເຂົ້າ ລົມຫາຍໃຈອອກ ຫຼືຄວາມພັດໄປມາ ທຳມະຊາດທີ່ພັດໄປມາ ທຳມະຊາດເຄື່ອງຄ້ຳຈຸນຮູບເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ແມ່ນອື່ນໃດມີຢູ່ ນີ້ຮຽກວ່າ ວາໂຍທາດທີ່ເປັນພາຍໃນ

ວາໂຍທາດທີ່ເປັນພາຍນອກ ເປັນແນວໃດ?

ຄວາມພັດໄປມາ ທຳມະຊາດທີ່ພັດໄປມາ ຄວາມຕຶງແຫ່ງຮູບ ເປັນພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເຊິ່ງເປັນພາຍນອກຕົນ ເຊັ່ນ ລົມຕາເວັນອອກ ລົມຕາເວັນຕົກ ລົມເໜືອ ລົມໃຕ້ ລົມມີຝຸ່ນລະອອງ ລົມບໍ່ມີຝຸ່ນລະອອງ ລົມໜາວ ລົມຮ້ອນ ລົມອ່ອນ ລົມແຮງ ລົມດຳ ລົມເທິງ ລົມພັດປີກ ລົມປີກຄຸດ ລົມໃບກັງຫັນ ລົມພັດໂບກ ຫຼື ຄວາມພັດໄປມາ ທຳມະຊາດທີ່ພັດໄປມາ ທຳມະຊາດເຄື່ອງຄ້ຳຈຸນຮູບ ເປັນພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເຊິ່ງເປັນພາຍນອກຕົນ ແມ່ນອື່ນໃດມີຢູ່ ນີ້ຮຽກວ່າ ວາໂຍທາດທີ່ເປັນພາຍນອກ

ປະມວນຫຍໍ້ອາໂຍທາດທີ່ເປັນພາຍໃນ ແລະອາໂຍທາດທີ່ເປັນພາຍນອກເຂົ້າເປັນໝວດດຽວກັນ ນີ້ຮຽກວ່າ ອາໂຍທາດ (໔)

[໑໗໗] ອາກາດທາດ ເປັນແນວໃດ?

ອາກາດທາດມີ ໒ ຢ່າງ ຄື ອາກາດທາດທີ່ເປັນພາຍໃນກໍມີ ທີ່ເປັນພາຍນອກກໍມີ

ໃນອາກາດທາດ ໒ ຢ່າງນັ້ນ ອາກາດທາດທີ່ເປັນພາຍໃນ ເປັນແນວໃດ?

ອາກາດ ທຳມະຊາດທີ່ນັບວ່າອາກາດ ຄວາມວ່າງເປົ່າ ທຳມະຊາດທີ່ນັບວ່າຄວາມ ວ່າງເປົ່າ ຊ່ອງວ່າງ ທຳມະຊາດທີ່ນັບວ່າຊ່ອງວ່າງ ເຊິ່ງຊີ້ນແລະເລືອດບໍ່ຖືກຕ້ອງແລ້ວເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ເຊັ່ນ ຊ່ອງຫູ ຊ່ອງດັງ ຊ່ອງປາກ ຊ່ອງສຳລັບກືນຂອງກິນ ຂອງດື່ມ ຂອງຫຍໍ້າ ຂອງຊີມ ຊ່ອງທີ່ພັກຢູ່ແຫ່ງຂອງກິນ ຂອງດື່ມ ຂອງຫຍໍ້າ ຂອງຊີມແລະຊ່ອງສຳລັບຂອງກິນ ຂອງດື່ມ ຂອງຫຍໍ້າ ຂອງຊີມໄຫຼລົງເບື້ອງຕໍ່າ ຫຼື ອາກາດທຳມະຊາດທີ່ນັບວ່າອາກາດ ຄວາມວ່າງເປົ່າ ທຳມະຊາດທີ່ນັບວ່າຄວາມວ່າງເປົ່າ ຊ່ອງວ່າງ ທຳມະຊາດທີ່ນັບວ່າຊ່ອງວ່າງ ເຊິ່ງຊີ້ນແລະເລືອດບໍ່ຖືກຕ້ອງແລ້ວເປັນພາຍໃນຕົນ ມີສະເພາະຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເຊິ່ງເປັນພາຍໃນຕົນ ແມ່ນອື່ນໃດມີຢູ່ ນີ້ຮຽກວ່າ ອາກາດທາດທີ່ເປັນພາຍໃນ

ອາກາດທາດທີ່ເປັນພາຍນອກ ເປັນແນວໃດ?

ອາກາດ ທຳມະຊາດທີ່ນັບວ່າອາກາດ ຄວາມວ່າງເປົ່າ ທຳມະຊາດທີ່ນັບວ່າຄວາມວ່າງເປົ່າ ຊ່ອງວ່າງ ທຳມະຊາດທີ່ນັບວ່າຊ່ອງວ່າງເຊິ່ງມະຫາພູຕະຮູບ ໔ ບໍ່ຖືກຕ້ອງແລ້ວ ເປັນພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເຊິ່ງເປັນພາຍນອກຕົນ

ນີ້ຮຽກວ່າ ອາກາດທາດທີ່ເປັນພາຍນອກ

ປະມວນຫຍໍ້ອາກາດທາດທີ່ເປັນພາຍໃນ ແລະອາກາດທາດທີ່ເປັນພາຍນອກເຂົ້າເປັນໝວດດຽວກັນ ນີ້ຮຽກວ່າ ອາກາດທາດ (໕)

[໑໗໘] ວິນຍານທາດ ເປັນແນວໃດ?

ຈັກຂຸວິນຍານທາດ ໂສຕະວິນຍານທາດ ຄານະວິນຍານທາດ ຊິວຫາວິນຍານທາດ ກາຍະວິນຍານທາດ ແລະມະໂນວິນຍານທາດ ນີ້ຮຽກວ່າ ວິນຍານທາດ (໖)

ເຫຼົ່ານີ້ຮຽກວ່າ ທາດ ໖

[໑໗໙] ທາດ ໖ ອີກໄນໜຶ່ງ ຄື

໑. ສຸຂະທາດ
໒. ທຸກຂະທາດ
໓. ໂສມະນັດສະທາດ
໔. ໂທມະນັດສະທາດ
໕. ອຸເປກຂາທາດ
໖. ອະວິດຊາທາດ

[໑໗໐] ບັນດາທາດ ໖ ນັ້ນ ສຸຂະທາດ ເປັນແນວໃດ?

ຄວາມສຳຣານທາງກາຍ ຄວາມສຸກທາງກາຍ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກກາຍສຳຜັດນີ້ ຮຽກວ່າ ສຸຂະທາດ (໑)

ທຸກຂະທາດ ເປັນແນວໃດ?

ຄວາມບໍ່ສະບາຍທາງກາຍ ຄວາມທຸກທາງກາຍ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ນີ້ຮຽກວ່າ ທຸກຂະທາດ (໒)

ໂສມະນັດສະທາດ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ

ນີ້ຮຽກວ່າ ໂສມະນັດສະທາດ (໓)

ໂທມະນັດສະທາດ ເປັນແນວໃດ?

ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ໂທມະນັດສະທາດ (໔)

ອຸເປກຂາທາດ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ອຸເປກຂາທາດ (໕)

ອະວິດຊາທາດ ເປັນແນວໃດ?

ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຮູ້ ຄວາມບໍ່ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມຄວາມເປັນຈິງ ຄວາມບໍ່ແທງຕະຫຼອດ ຄວາມບໍ່ຖືເອົາໃຫ້ຖືກຕ້ອງ ຄວາມບໍ່ຢັ່ງລົງຢ່າງຮອບຄອບ ຄວາມບໍ່ພິຈາຣະນາ ຄວາມບໍ່ຮິ່ນຕອງ ຄວາມບໍ່ເຮັດໃຫ້ປະຈັກ ຄວາມດ້ອຍປັນຍາ ຄວາມໂງ່ຈ້າ ຄວາມບໍ່ຮູ້ແຈ້ງ ຄວາມຫຼົງ ຄວາມລຸ້ມຫຼົງ ຄວາມຫຼົງໃຫຼ ອະວິດຊາ ໂອຄະຄືອະວິດຊາ ໂຍຄະຄືອະວິດຊາ ອະນຸໄສຄືອະວິດຊາ ປະຣິຍຸດຖານຄືອະວິດຊາ ຫຼີ້ມຄືອະວິດຊາ ອະກຸສົນມູນ ຄືໂມຫະ ນີ້ຮຽກວ່າ ອະວິດຊາທາດ (໖)

ເຫຼົ່ານີ້ຮຽກວ່າ ທາດ ໖

[໑໗໑] ທາດ ໖ ອີກໄນໜຶ່ງ ຄື

໑. ກາມທາດ ໔. ພະຍາປາທະທາດ
໓. ວິຫິງສາທາດ ໔. ເນກຂຳມະທາດ
໕. ອັບພະຍາປາທະທາດ ໖. ອະວິຫິງສາທາດ

[໑໗໔] ບັນດາທາດ ໖ ນັ້ນ ກາມທາດ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິ ຄວາມທີ່ຈິດແນບແໜ້ນໃນອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່ອາລົມ ມິດສາສັງກັບປະທີ່ປະກອບດ້ວຍກາມ ນີ້ຮຽກວ່າ ກາມທາດ

ຂັນ ທາດ ອາຍະຕະນະ ຮູບ ເວທະນາ ສັນຍາ ສັງຂານ ວິນຍານ ທີ່ທ່ອງທ່ຽວນັບເນື່ອງຢູ່ໃນລະຫວ່າງນີ້ ຊັ້ນຕ່ຳມີອະເວຈີນະຮົກເປັນບ່ອນສຸດ ຊັ້ນສູງມີເທບຊັ້ນປະຣະນິມມິຕະວະສະວັດຕີເປັນບ່ອນສຸດ ນີ້ຮຽກວ່າ ກາມທາດ (໑)

ພະຍາປາທະທາດ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຯລຯ ມິດສາສັງກັບປະທີ່ປະກອບດ້ວຍພະຍາບາດ ນີ້ຮຽກວ່າ ພະຍາປາທະທາດ

ອີກໄນໜຶ່ງ ຄວາມທີ່ຈິດອາຄາດໃນອາຄາດວັດຖຸ ໑໐ ຄວາມອາຄາດທີ່ຮຸນແຮງ ຄວາມກະທົບກະທັ່ງ ຄວາມແຄ້ນ ຄວາມພິໂຣດຕອບ ຄວາມກຳເຣີບ ຄວາມກຳເຣີບໜັກ ຄວາມກຳເຣີບໜັກຂຶ້ນ ຄວາມຄິດຮ້າຍ ຄວາມຄິດປະທຸດສະຮ້າຍ ຄວາມຄິດປະທຸດສະຮ້າຍແຮງກ້າ ຄວາມທີ່ຈິດຄິດພະຍາບາດ ຄວາມທີ່ຈິດຄິດປະທຸດສະຮ້າຍ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພະຍາບາດ ກິຣິຍາທີ່ພະຍາບາດ ພາວະທີ່ພະຍາບາດ ຄວາມພິໂຣດ ຄວາມພິໂຣດຕອບ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມທີ່ຈິດບໍ່ແຊ່ມຊື່ນ ນີ້ຮຽກວ່າ ພະຍາປາທະທາດ (໔)

ວິຫິງສາທາດ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຯລຯ ມິດສາສັງກັບປະທີ່ປະກອບດ້ວຍວິຫິງສາ ນີ້ຮຽກວ່າ ວິຫິງສາທາດ

ບຸກຄົນບາງຄົນໃນໂລກນີ້ ຍ່ອມໃຊ້ຝ່າມື ກ້ອນດິນ ທ່ອນໄມ້ ອາວຸດ ຫຼື ເຊືອກ ແນວໃດແນວໜຶ່ງບຽດບຽນສັດ ຄວາມບຽດບຽນ ກິຣິຍາທີ່ບຽດບຽນ ຄວາມຂົ່ມເຫງ ກິຣິຍາທີ່ຂົ່ມເຫງ ຄວາມຮຸນແຮງ ກິຣິຍາທີ່ກະທົບກະທັ່ງຢ່າງຮຸນແຮງ ຄວາມເຂົ້າໄປ ບຽດບຽນສັດອື່ນເຫັນປານນີ້ ນີ້ຮຽກວ່າ ວິຫິງສາທາດ (໓)

ເນກຂຳມະທາດ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຯລຯ ສຳມາສັງກັປປະທີ່ປະກອບດ້ວຍເນກຂຳມະ ນີ້ຮຽກວ່າ ເນກຂຳມະທາດ

ສະພາວະທຳທີ່ເປັນກຸສົນທັງໝົດຊື່ວ່າ ເນກຂຳມະທາດ (໔)

ອັບພະຍາປາທະທາດ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຯລຯ ສຳມາສັງກັປປະທີ່ປະກອບດ້ວຍອັບພະຍາບາດ ນີ້ຮຽກວ່າ ອັບພະຍາປາທະທາດ

ຄວາມມີໄມຕີ ຄວາມຈະເລີນເມດຕາ ພາວະທີ່ແຜ່ເມດຕາໃນສັດທັງຫຼາຍ ເມດຕາ ເຈໂຕວິມຸດຕິ (ຄວາມຫຼຸດພົ້ນທາງໃຈທີ່ມີເມດຕາເປັນອາລົມ) ນີ້ຮຽກວ່າ ອັບພະຍາປາທະທາດ (໕)

ອະວິຫິງສາທາດ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິທີ່ປະກອບດ້ວຍອະວິຫິງສາຄວາມທີ່ຈິດແນບແໜ້ນໃນອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່

ອາລົມ ສຳມາສັງກັປປະ ນີ້ຮຽກວ່າ ອະວິຫິງສາທາດ

ກະຣຸນາ ຄວາມຈະເລີນກະຣຸນາ ພາວະທີ່ແຜ່ກະຣຸນາໃນສັດທັງຫຼາຍ ກະຣຸນາເຈໂຕວິມຸດຕິ (ຄວາມຫຼຸດພົ້ນທາງໃຈທີ່ມີກະຣຸນາເປັນອາລົມ) ນີ້ຮຽກວ່າ ອະວິຫິງສາທາດ (໖)

ເຫຼົ່ານີ້ຮຽກວ່າ ທາດ ໖

ປະມວນຫຍໍ້ທາດ ໖ ສາມໝວດນີ້ເຂົ້າເປັນໝວດດຽວກັນຈຶ່ງເປັນທາດ ໑໘ ດ້ວຍອາການແນວນີ້

**ສຸດຕັນຕະພາຊະນີ ຈົບ**

## ໒. ອະພິທຳມະພາຊະນີ

[໑໘໓] ທາດ ໑໘ ຄື

໑. ຈັກຂຸທາດ

໒. ຮູບທາດ

໓. ຈັກຂຸວິນຍານທາດ

໔. ໂສຕະທາດ

໕. ສັດທະທາດ

໖. ໂສຕະວິນຍານທາດ

໗. ຄານະທາດ

໘. ຄັນທະທາດ

໙. ຄານະວິນຍານທາດ

໑໐. ຊິວຫາທາດ

໑໑. ຣະສະທາດ

໑໒. ຊິວຫາວິນຍານທາດ

໑໓. ກາຍະທາດ

໑໔. ໂຜດຖັບພະທາດ

໑໕. ກາຍະວິນຍານທາດ

໑໖. ມະໂນທາດ

໑໗. ທຳມະທາດ

໑໘. ມະໂນວິນຍານທາດ

[໑໗໔] ບັນດາທາດ ໑໗ ນັ້ນ ຈັກຂຸທາດ ເປັນແນວໃດ?

ຈັກຂຸໃດເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ໆລໆ ນີ້ຊື່ວ່າ ເຮືອນວ່າງແດ່ ນີ້ຮຽກວ່າ ຈັກຂຸທາດ (໑)

ຮູບທາດ ເປັນແນວໃດ?

ຮູບໃດເປັນສີຕ່າງ ໆ ອາໄສມະຫາພູຕະຮູບ ໔ ໆລໆ ນີ້ຊື່ວ່າຮູບທາດແດ່ນີ້ຮຽກວ່າ ຮູບທາດ (໒)

ຈັກຂຸວິນຍານທາດ ເປັນແນວໃດ?

ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ຈັກຂຸວິນຍານທາດທີ່ເໝາະສົມກັນ ອາໄສຈັກຂຸແລະຮູບເກີດຂຶ້ນ ນີ້ຮຽກວ່າ ຈັກຂຸວິນຍານທາດ (໓)

ໂສຕະທາດ ເປັນແນວໃດ?

ໂສຕະໃດເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ໆລໆ ນີ້ຊື່ວ່າເຮືອນວ່າງແດ່ນີ້ຮຽກວ່າ ໂສຕະທາດ (໔)

ສັດທະທາດ ເປັນແນວໃດ?

ສັດທະ (ສຽງ) ໃດອາໄສມະຫາພູຕະຮູບ ໔ ເປັນຮູບທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໆລໆ ນີ້ຊື່ສັດທະທາດແດ່ ນີ້ຮຽກວ່າ ສັດທະທາດ (໕)

ໂສຕະວິນຍານທາດ ເປັນແນວໃດ?

ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ໂສຕະວິນຍານທາດທີ່ເໝາະສົມກັນ ອາໄສໂສຕະ (ຫູ) ໆລໆ ເກີດຂຶ້ນ ນີ້ຮຽກວ່າ ໂສຕະວິນຍານທາດ (໖)

ຄານະທາດ ເປັນແນວໃດ?

ຄານະ (ດັງ) ໃດເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ໆລໆ ນີ້ຊື່ວ່າເຮືອນວ່າງແດ່ ນີ້ຮຽກວ່າ ຄານະທາດ (໗)

ຄັນທະທາດ ເປັນແນວໃດ?

ຄັນທະ (ກິ່ນ) ໃດອາໄສມະຫາພູຕະຮູບ ໔ ເປັນຮູບທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໆລໆ ນີ້ຊື່ວ່າ ຄັນທະທາດແດ່ ນີ້ຮຽກວ່າ ຄັນທະທາດ (໘)

ຄານະວິນຍານທາດ ເປັນແນວໃດ?

ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ຄານະວິນຍານທາດທີ່ເໝາະສົມກັນ ອາໄສຄານະແລະກິ່ນເກີດຂຶ້ນ ນີ້ຮຽກວ່າ ຄານະວິນຍານທາດ (໗)

ຊິວຫາທາດ ເປັນແນວໃດ?

ຊິວຫາ (ລີ້ນ) ໃດເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ຯລຯ ນີ້ຊື່ວ່າເຮືອນວ່າງແດ່ ນີ້ຮຽກວ່າ ຊິວຫາທາດ (໑໐)

ຣະສະທາດ ເປັນແນວໃດ?

ຣົດໃດອາໄສມະຫາພູຕະຮູບ ໔ ເປັນຮູບທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຯລຯ ນີ້ຊື່ວ່າຣະສະທາດແດ່ ນີ້ຮຽກວ່າ ຣະສະທາດ (໑໑)

ຊິວຫາວິນຍານທາດ ເປັນແນວໃດ?

ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ຊິວຫາວິນຍານທາດທີ່ເໝາະສົມກັນ ອາໄສຊິວຫາແລະຣົດເກີດຂຶ້ນ ນີ້ຮຽກ ວ່າ ຊິວຫາວິນຍານທາດ (໑໔)

ກາຍະທາດ ເປັນແນວໃດ?

ກາຍໃດເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ຯລຯ ນີ້ຊື່ວ່າເຮືອນວ່າງແດ່ ນີ້ຮຽກວ່າ ກາຍະທາດ (໑໓)

ໂຜດຖັບພະທາດ ເປັນແນວໃດ?

ປະຖະວີທາດ ຯລຯ ນີ້ຊື່ວ່າໂຜດຖັບພະທາດແດ່ ນີ້ຮຽກວ່າ ໂຜດຖັບພະທາດ (໑໔)

ກາຍະວິນຍານທາດ ເປັນແນວໃດ?

ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ກາຍະວິນຍານທາດທີ່ເໝາະສົມກັນ ອາໄສກາຍແລະໂຜດຖັບພະເກີດຂຶ້ນ ນີ້ຮຽກວ່າ ກາຍະວິນຍານທາດ (໑໕)

ມະໂນທາດ ເປັນແນວໃດ?

ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນທາດທີ່ເໝາະສົມກັນ ເກີດຂຶ້ນໃນລຳດັບແຫ່ງການເກີດດັບແຫ່ງຈັກຂຸວິນຍານທາດ ຯລຯ ໂສຕະວິນຍານທາດ ຯລຯ ຄານະວິນຍານທາດ ຯລຯ ຊິວຫາວິນຍານທາດ ຯລຯ

ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນທາດທີ່ເໝາະສົມກັນ ເກີດຂຶ້ນໃນລຳດັບແຫ່ງການເກີດດັບແຫ່ງກາຍວິນຍານທາດ ຫຼື ການພິຈາລະນາອາລົມຄັ້ງທຳອິດໃນສະພາວະທຳທັງປວງ ຈິດ ມະໂນ ມານັດ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນທາດທີ່ເໝາະສົມກັນເກີດຂຶ້ນ

ນີ້ຮຽກວ່າ ມະໂນທາດ (໑໗)

ທຳມະທາດ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ສັງຂານຂັນ ຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ ເຊິ່ງນັບເນື່ອງໃນທຳມາຍະຕະນະ ແລະທາດທີ່ປັດໄຈບໍ່ປຸງແຕ່ງ

ບັນດາທຳມະທາດນັ້ນ ເວທະນາຂັນ ເປັນແນວໃດ?

ເວທະນາຂັນໝວດລະ ໑ ໄດ້ແກ່ ເວທະນາຂັນທີ່ສຳປະຍຸດດ້ວຍຜັດສະ

ເວທະນາຂັນໝວດລະ ໔ ໄດ້ແກ່ ເວທະນາຂັນທີ່ມີເຫດກຳມີ ທີ່ບໍ່ມີເຫດກຳມີ

ເວທະນາຂັນໝວດລະ ໓ ໄດ້ແກ່ ເວທະນາຂັນທີ່ເປັນກຸສົນກຳມີ ທີ່ເປັນອະກຸສົນກຳມີ ທີ່ເປັນອັບພະຍາກະຕະກຳມີ

ຯລຯ

ເວທະນາຂັນໝວດລະ ໑໐ ມີດ້ວຍອາການແນວນີ້

ຯລຯ

ເວທະນາຂັນໝວດລະຫຼາຍຢ່າງມີດ້ວຍອາການແນວນີ້ ນີ້ຮຽກວ່າ ເວທະນາຂັນ (໑)

ສັນຍາຂັນ ເປັນແນວໃດ?

ສັນຍາຂັນໝວດລະ ໑ ໄດ້ແກ່ ສັນຍາຂັນທີ່ສຳປະຍຸດດ້ວຍຜັດສະ

ສັນຍາຂັນໝວດລະ ໔ ໄດ້ແກ່ ສັນຍາຂັນທີ່ມີເຫດກຳມີ ທີ່ບໍ່ມີເຫດກຳມີ

ສັນຍາຂັນໝວດລະ ໓ ໄດ້ແກ່ ສັນຍາຂັນທີ່ເປັນກຸສົນກຳມີ ທີ່ເປັນອະກຸສົນກຳມີ ທີ່ເປັນອັບພະຍາກະຕະກຳມີ

ຯລຯ

ສັນຍາຂັນໝວດລະຫຼາຍຢ່າງມີດ້ວຍອາການແນວນີ້ ນີ້ຮຽກວ່າ ສັນຍາຂັນ (໔)

ສັງຂານຂັນ ເປັນແນວໃດ?

ສັງຂານຂັນໝວດລະ ໑ ໄດ້ແກ່ ສັງຂານຂັນທີ່ສຳປະຍຸດດ້ວຍຈິດ

ສັງຂານຂັນໝວດລະ ໔ ໄດ້ແກ່ ສັງຂານຂັນທີ່ເປັນເຫດກຳມີ ທີ່ບໍ່ເປັນເຫດກຳມີ

ສັງຂານຂັນໝວດລະ ໓ ໄດ້ແກ່ ສັງຂານຂັນທີ່ເປັນກຸສົນກຳມີ ທີ່ເປັນອະກຸສົນກຳມີ ທີ່ເປັນອັບພະຍາກະຕະກຳມີ

ຯລຯ

ສັງຂານຂັນໝວດລະ ໑໐ ມີດ້ວຍອາການແນວນີ້

ຯລຯ

ສັງຂານຂັນໝວດລະຫຼາຍຢ່າງມີດ້ວຍອາການແນວນີ້ ນີ້ຮຽກວ່າ ສັງຂານຂັນ (໓)

ຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ເຊິ່ງນັບເນື່ອງໃນທຳມາຍະຕະນະ ເປັນແນວໃດ?

ອິດຖິນຊີ ຯລຯ ກະວະລິງກາຣາຫານ ນີ້ຮຽກວ່າ ຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ ເຊິ່ງນັບເນື່ອງໃນທຳມາຍະຕະນະ (໔)

ທາດທີ່ປັດໃຈບໍ່ປຸງແຕ່ງ ເປັນແນວໃດ?

ສະພາວະທຳເປັນທີ່ສິ້ນໄປແຫ່ງຣາຄະ ເປັນທີ່ສິ້ນໄປແຫ່ງໂທສະແລະເປັນທີ່ສິ້ນໄປແຫ່ງໂມຫະ ນີ້ຮຽກວ່າ ທາດທີ່ປັດໃຈບໍ່ປຸງແຕ່ງ ນີ້ຮຽກວ່າ ທຳມະທາດ (໕-໑໗)

ມະໂນວິນຍານທາດ ເປັນແນວໃດ?

ມະໂນທາດເກີດຂຶ້ນໃນລຳດັບແຫ່ງການເກີດດັບແຫ່ງຈັກຂຸວິນຍານທາດ

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ເກີດຂຶ້ນໃນລຳດັບແຫ່ງການເກີດດັບແຫ່ງມະໂນທາດ

ມະໂນທາດເກີດຂຶ້ນໃນລຳດັບແຫ່ງການເກີດດັບແຫ່ງຈັກຂຸວິນຍານທາດ ຯລຯ ໂສຕະວິນຍານທາດ ຯລຯ ຄານະວິນຍານທາດ ຯລຯ ຊິວຫາວິນຍານທາດ ຯລຯ

## ກາຍະວິນຍານທາດ

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ເກີດຂຶ້ນໃນລຳດັບແຫ່ງການເກີດດັບແມ່ນແຫ່ງມະໂນທາດ

ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ

ວິນຍານຂັນ ມະໂນວິນຍານທາດທີ່ເໝາະສົມກັນ ອາໄສພະວັງຄະຈິດ ແລະທຳມາຣົມເກີດຂຶ້ນ

ນີ້ຮຽກວ່າ ມະໂນວິນຍານທາດ (໑໘)

**ອະພິທຳມະພາຊະນີ ຈົບ**

# ໒. ປັນຫາປຸດສະກະ

[໑໗໕] ທາດ ໑໘ ຄື

| | |
|---|---|
| ໑. ຈັກຂຸທາດ | ໔. ຣູບທາດ |
| ໒. ຈັກຂຸວິນຍານທາດ | ໘. ໂສຕະທາດ |
| ໕. ສັດທະທາດ | ໖. ໂສຕະວິນຍານທາດ |
| ໗. ຄານະທາດ | ໙. ຄັນທະທາດ |
| ໓. ຄານະວິນຍານທາດ | ໑໐. ຊິວຫາທາດ |
| ໑໑. ຣະສະທາດ | ໑໔. ຊິວຫາວິນຍານທາດ |
| ໑໒. ກາຍະທາດ | ໑໘. ໂຜດຖັບພະທາດ |
| ໑໕. ກາຍະວິນຍານທາດ | ໑໖. ມະໂນທາດ |
| ໑໗. ທຳມະທາດ | ໑໙. ມະໂນວິນຍານທາດ |

## ໑. ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[໑໗໖] ບັນດາທາດ ໑໙ ທາດເທົ່າໃດເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

## ໑. ຕິກະມາຕິກາວິສັດຊະນາ

### ໑. ກຸສະລະຕິກະວິສັດຊະນາ

[໑໗໗] ທາດ ໑໖ ເປັນອັບພະຍາກະຕະ ທາດ ໔ ທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

### ໔. ເວທະນາຕິກະວິສັດຊະນາ

ທາດ ໑໐ ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ທາດ ໕ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ກາຍະວິນຍານທາດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ມະໂນວິນຍານທາດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທຳມະທາດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະ

ນາກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ

### ໓. ວິປາກະຕິກະວິສັດຊະນາ

ທາດ ໑໐ ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ທາດ ໕ ເປັນວິບາກ ມະໂນທາດທີ່ເປັນວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ ທາດ ໔ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

### ໔. ອຸປາທິນນະຕິກະວິສັດຊະນາ

ທາດ ໑໐ ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານສັດທະທາດ ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ທາດ ໕ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທາດ ໔ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ

### ໕. ສັງກິລິດຖະຕິກະວິສັດຊະນາ

ທາດ ໑໖ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ ທາດ ໔ ທີ່ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດກໍມີ

### ໖. ສະວິຕັກກະຕິກະວິສັດຊະນາ

ທາດ ໑໕ ບໍ່ມີທັງວິຕົກແລະວິຈານ ມະໂນທາດມີທັງວິຕົກແລະວິຈານ ມະໂນວິນຍານທາດ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທຳມະທາດທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທີ່ກ່າວບໍ່ໄດ້ວ່າ ມີທັງວິຕົກແລະວິຈານ ບໍ່ມີວິຕົກມີພຽງວິຈານ ຫຼື ບໍ່ມີທັງວິຕົກແລະວິຈານກໍມີ

### ໗. ປີຕິຕິກະວິສັດຊະນາ

ທາດ ໑໐ ກ່າວບໍ່ໄດ້ວ່າ ປະກອບດ້ວຍປີຕິ ປະກອບດ້ວຍສຸກ ຫຼື ປະກອບດ້ວຍອຸເປກຂາ ທາດ ໕ ປະກອບດ້ວຍອຸເປກຂາ ກາຍະວິນຍານທາດບໍ່ປະກອບດ້ວຍປີຕິ ທີ່ປະກອບດ້ວຍ

ສຸກແຕ່ບໍ່ປະກອບດ້ວຍອຸເປກຂາກໍມີ ທີ່ກ່າວບໍ່ໄດ້ວ່າ ປະກອບດ້ວຍສຸກກໍມີ ທາດ ໔ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ກ່າວບໍ່ໄດ້ວ່າ ປະກອບດ້ວຍປີຕິ ປະກອບດ້ວຍສຸກ ຫຼື ປະກອບດ້ວຍອຸເປກຂາກໍມີ

### ໘. ທັດສະນະຕິກະວິສັດຊະນາ

ທາດ ໑໗ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ທາດ ໔ ທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

### ໙. ທັດສະນະເຫຕຸຕິກະວິສັດຊະນາ

ທາດ ໑໗ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ທາດ ໔ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

### ໑໐. ອາຈະຍະຄາມິຕິກະວິສັດຊະນາ

ທາດ ໑໗ ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານ ທາດ ໔ ທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິກໍມີ ທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິຈຸຕິ ແລະນິບພານກໍມີ

### ໑໑. ເສກຂະຕິກະວິສັດຊະນາ

ທາດ ໑໗ ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ ທາດ ໔ ທີ່ເປັນຂອງເສຂະບຸກຄົນກໍມີ ທີ່ເປັນຂອງອະເສຂະບຸກຄົນກໍມີ ທີ່ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນກໍມີ

### ໑໔. ປະຣິດຕະຕິກະວິສັດຊະນາ

ທາດ ໑໗ ເປັນປະຣິດຕະ ທາດ ໔ ທີ່ເປັນປະຣິດຕະກໍມີ ທີ່ເປັນມະຫັກຄະຕະກໍມີ ທີ່ເປັນອັບປະມານະກໍມີ

### ໑໓. ປະຣິດຕາຣໍາມະນະຕິກະວິສັດຊະນາ

ທາດ ໑໐ ຮັບຮູ້ອາລົມບໍ່ໄດ້ ທາດ ໗ ມີປະຣິດຕະເປັນອາລົມ ທາດ ໔ ທີ່ມີປະຣິດຕະເປັນອາລົມກໍມີ ທີ່ມີມະຫັກຄະຕະເປັນອາລົມກໍມີ ທີ່ມີອັບປະມານະເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າມີປະຣິດຕະເປັນອາລົມ ມີມະຫັກຄະຕະເປັນອາລົມ ຫຼື ມີອັບປະມານະເປັນອາລົມກໍມີ

## ໑໔. ຫີນະຕິກະວິສັດຊະນາ

ທາດ ໑໖ ເປັນຊັ້ນກາງ ທາດ ໔ ທີ່ເປັນຊັ້ນຕ່ຳກໍມີ ທີ່ເປັນຊັ້ນກາງກໍມີທີ່ເປັນຊັ້ນປະນີດກໍມີ

## ໑໕. ມິດສັດຕະຕິກະວິສັດຊະນາ

ທາດ ໑໖ ເປັນທຳມະຊາດບໍ່ແນ່ນອນໂດຍອາການທັງສອງນັ້ນ ທາດ ໔ ທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນກໍມີ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີ ທີ່ເປັນທຳມະຊາດບໍ່ແນ່ນອນໂດຍອາການທັງສອງນັ້ນກໍມີ

## ໑໖. ມັກຄາຣຳມະນະຕິກະວິສັດຊະນາ

ທາດ ໑໐ ຮັບຮູ້ອາລົມບໍ່ໄດ້ ທາດ ໖ ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີ ທາດ ໔ ທີ່ມີມັກເປັນອາລົມກໍມີ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີທີ່ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດ ຫຼືມີມັກເປັນອະທິບໍດີກໍມີ

## ໑໗. ອຸປັນນະຕິກະວິສັດຊະນາ

ທາດ ໑໐ ທີ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ ທີ່ກ່າວບໍ່ໄດ້ວ່າ ຍັງບໍ່ເກີດຂຶ້ນກໍມີສັດທະທາດທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ກ່າວບໍ່ໄດ້ວ່າ ຈັກເກີດຂຶ້ນແນ່ນອນກໍມີ ທາດ ໖ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ ທຳມະທາດທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ ທີ່ກ່າວບໍ່ໄດ້ວ່າ ເກີດຂຶ້ນ ຍັງບໍ່ເກີດຂຶ້ນ ຫຼື ຈັກເກີດຂຶ້ນແນ່ນອນກໍມີ

## ໑໘. ອະຕີຕະຕິກະວິສັດຊະນາ

ທາດ ໑໗ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ ທຳມະທາດທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອະດີດ ເປັນອະນາຄົດ ຫຼື ເປັນປັດຈຸບັນກໍມີ

## ໑໙. ອະຕີຕາຣຳມະນະຕິກະວິສັດຊະນາ

ທາດ ໑໐ ຮັບຮູ້ອາລົມບໍ່ໄດ້ ທາດ ໖ ມີປັດຈຸບັນທຳເປັນອາລົມ ທາດ ໔ ທີ່ມີອະດີດທຳເປັນອາລົມກໍມີ ທີ່ມີອະນາຄົດທຳເປັນອາລົມກໍມີ ທີ່ມີປັດຈຸບັນທຳເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມກໍມີ

### ໔໐. ອັດຊັດຕະຕິກະວິສັດຊະນາ

ທາດ ໑໗ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

### ໔໑. ອັດຊັດຕາຣໍາມະນະຕິກະວິສັດຊະນາ

ທາດ ໑໐ ຮັບຮູ້ອາລົມບໍ່ໄດ້ ທາດ ໖ ທີ່ມີທໍາພາຍໃນຕົນເປັນອາລົມກໍມີ ທີ່ມີທໍາພາຍນອກຕົນເປັນອາລົມກໍມີ ທີ່ມີທໍາພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ ທາດ ໔ ທີ່ມີທໍາພາຍໃນຕົນເປັນອາລົມກໍມີ ທີ່ມີທໍາພາຍນອກຕົນເປັນອາລົມກໍມີ ທີ່ມີທໍາພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີທໍາພາຍໃນຕົນເປັນອາລົມ ມີທໍາພາຍນອກຕົນເປັນອາລົມ ຫຼື ມີທໍາພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ

### ໔໔. ສະນິທັດສະນະຕິກະວິສັດຊະນາ

ຮູບທາດເຫັນໄດ້ແລະກະທົບໄດ້ ທາດ ໙ ເຫັນບໍ່ໄດ້ແຕ່ກະທົບໄດ້ ທາດ ໗ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

## ໔. ທຸກະມາຕິກາວິສັດຊະນາ

### ໑. ເຫຕຸໂຄດສະກະວິສັດຊະນາ

[໑໗໗] ທາດ ໑໗ ບໍ່ເປັນເຫດ ທໍາມະທາດທີ່ເປັນເຫດກໍມີ ທີ່ບໍ່ເປັນເຫດກໍມີ

ທາດ ໑໖ ບໍ່ມີເຫດ ທາດ ໔ ທີ່ມີເຫດກໍມີ ທີ່ບໍ່ມີເຫດກໍມີ

ທາດ ໑໖ ວິບປະຍຸດຈາກເຫດ ທາດ ໔ ທີ່ສໍາປະຍຸດດ້ວຍເຫດກໍມີ ທີ່ວິບປະຍຸດຈາກເຫດກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ຫຼື ມີເຫດແຕ່ບໍ່ເປັນເຫດ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ທີ່ມີເຫດແຕ່ບໍ່ເປັນເຫດກໍມີ ທີ່ກ່າວບໍ່ໄດ້ວ່າມີເຫດແຕ່ບໍ່ເປັນເຫດກໍມີ ທໍາມະທາດທີ່ເປັນເຫດແລະມີເຫດກໍມີ ທີ່ມີເຫດແຕ່ບໍ່ເປັນເຫດກໍມີທີ່ກ່າວບໍ່ໄດ້ວ່າເປັນເຫດແລະມີເຫດ ຫຼື ມີເຫດແຕ່ບໍ່ເປັນເຫດກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນເຫດແລະສໍາປະຍຸດດ້ວຍເຫດ ຫຼື ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນເຫດແລະສໍາປະຍຸດດ້ວຍເຫດ ທີ່ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ ທໍາມະທາດທີ່ເປັນເຫດແລະສໍາປະຍຸດດ້ວຍເຫດກໍມີ ທີ່ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີທີ່ກ່າວບໍ່ໄດ້ວ່າເປັນເຫດແລະສໍາປະຍຸດດ້ວຍເຫດ ຫຼື ສໍາປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ

ທາດ ໑໖ ບໍ່ເປັນເຫດແລະບໍ່ມີເຫດ ມະໂນວິນຍານທາດທີ່ບໍ່ເປັນເຫດແຕ່ມີເຫດກໍມີທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ ທຳມະທາດທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດ ຫຼື ບໍ່ເປັນເຫດແລະບໍ່ມີເຫດກໍມີ

## ໔. ຈູລັນຕະຣະທຸກະວິສັດຊະນາ

ທາດ ໑໗ ມີປັດໄຈປຸງແຕ່ງ ທຳມະທາດທີ່ມີປັດໄຈປຸງແຕ່ງກໍມີ ທີ່ບໍ່ມີປັດໄຈປຸງແຕ່ງ ກໍມີ

ທາດ ໑໗ ຖືກປັດໄຈປຸງແຕ່ງ ທຳມະທາດທີ່ຖືກປັດໄຈປຸງແຕ່ງກໍມີ ທີ່ບໍ່ຖືກປັດໄຈປຸງແຕ່ງກໍມີ

ຮູບທາດເຫັນໄດ້ ທາດ ໑໗ ເຫັນບໍ່ໄດ້

ທາດ ໑໐ ກະທົບໄດ້ ທາດ ໘ ກະທົບບໍ່ໄດ້

ທາດ ໑໐ ເປັນຮູບ ທາດ ໗ ບໍ່ເປັນຮູບ ທຳມະທາດທີ່ເປັນຮູບກໍມີ ທີ່ບໍ່ເປັນຮູບກໍມີ

ທາດ ໑໖ ເປັນໂລກິຍະ ທາດ ໔ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ທາດ ໑໘ ທີ່ຈິດບາງດວງຮູ້ໄດ້ກໍມີ ທີ່ຈິດບາງດວງຮູ້ບໍ່ໄດ້ກໍມີ

## ໕. ອາສະວະໂຄດສະກະວິສັດຊະນາ

ທາດ ໑໗ ບໍ່ເປັນອາສະວະ ທຳມະທາດທີ່ເປັນອາສະວະກໍມີ ທີ່ບໍ່ເປັນອາສະວະກໍມີ

ທາດ ໑໖ ເປັນອາລົມຂອງອາສະວະ ທາດ ໔ ທີ່ເປັນອາລົມຂອງອາສະວະກໍມີ ທີ່ບໍ່ເປັນອາລົມຂອງອາສະວະກໍມີ

ທາດ ໑໖ ວິບປະຍຸດຈາກອາສະວະ ທາດ ໔ ທີ່ສຳປະຍຸດດ້ວຍອາສະວະກໍມີ ທີ່ວິບປະຍຸດຈາກອາສະວະກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ທີ່ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ ທຳມະທາດທີ່ເປັນອາສະວະແລະເປັນອາລົມຂອງອາສະວະກໍມີ ທີ່ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼືເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ທີ່ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ ທຳມະທາດທີ່ເປັນອາສະວະແລະສຳປະຍຸດດ້ວຍ

ອາສະວະກໍມີ ທີ່ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ

ທາດ ໑໖ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ ທາດ ໔ ທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະກໍມີ ທີ່ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະຫຼືວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ

## ໔. ສັນໂຍຊະນະໂຄດສະກະວິສັດຊະນາ

ທາດ ໑໗ ບໍ່ເປັນສັງໂຍດ ທຳມະທາດທີ່ເປັນສັງໂຍດກໍມີ ທີ່ບໍ່ເປັນສັງໂຍດກໍມີ

ທາດ ໑໖ ເປັນອາລົມຂອງສັງໂຍດ ທາດ ໔ ທີ່ເປັນອາລົມຂອງສັງໂຍດກໍມີ ທີ່ບໍ່ເປັນອາລົມຂອງສັງໂຍດກໍມີ

ທາດ ໑໖ ວິບປະຍຸດຈາກສັງໂຍດ ທາດ ໔ ທີ່ສຳປະຍຸດດ້ວຍສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ຫຼືເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດ ມະໂນວິຍານທາດກ່າວບໍ່ໄດ້ວ່າ ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ທີ່ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທຳມະທາດທີ່ເປັນສັງໂຍດແລະເປັນອາລົມຂອງສັງໂຍດກໍມີ ທີ່ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ຫຼື ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ ຫຼື ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ ທີ່ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທຳມະທາດທີ່ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດກໍມີ ທີ່ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ ຫຼື ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ

ທາດ ໑໖ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ທາດ ໔ ທີ່ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ຫຼືວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ

## ៤. ຄັນຖະໂຄດສະກະວິສັດຊະນາ

ທາດ ໑໗ ບໍ່ເປັນຄັນຖະ ທຳມະທາດທີ່ເປັນຄັນຖະກໍມີ ທີ່ບໍ່ເປັນຄັນຖະກໍມີ

ທາດ ໑໘ ເປັນອາລົມຂອງຄັນຖະ ທາດ ໔ ທີ່ເປັນອາລົມຂອງຄັນຖະກໍມີ ທີ່ບໍ່ເປັນອາລົມຂອງຄັນຖະກໍມີ

ທາດ ໑໘ ວິບປະຍຸດຈາກຄັນຖະ ທາດ ໔ ທີ່ສຳປະຍຸດດ້ວຍຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະກໍມີ

ທາດ ໑໘ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ ຫຼື ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ ທຳມະທາດທີ່ເປັນຄັນຖະແລະເປັນອາລົມຂອງຄັນຖະກໍມີ ທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ ຫຼືເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ

ທາດ ໑໘ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ຫຼື ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ ທຳມະທາດທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະກໍມີ ທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ຫຼືສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ

ທາດ ໑໘ ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະ ທາດ ໔ ທີ່ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະກໍມີທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະ ຫຼື ວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະກໍມີ

## ໖. ໂອຄະໂຄດສະກາທິວິສັດຊະນາ

ທາດ ໑໗ ບໍ່ເປັນໂອຄະ ຯລຯ ບໍ່ເປັນໂຍຄະ ຯລຯ ບໍ່ເປັນນິວອນທຳມະທາດທີ່ເປັນນິວອນກໍມີ ທີ່ບໍ່ເປັນນິວອນກໍມີ

ທາດ ໑໘ ເປັນອາລົມຂອງນິວອນ ທາດ ໔ ທີ່ເປັນອາລົມຂອງນິວອນກໍມີ ທີ່ບໍ່ເປັນອາລົມຂອງນິວອນກໍມີ

ທາດ ໑໖ ວິບປະຍຸດຈາກນິວອນ ທາດ ៤ ທີ່ສຳປະຍຸດດ້ວຍນິວອນກໍມີ ທີ່ວິບປະຍຸດຈາກນິວອນກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ຫຼື ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ທີ່ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ ທຳມະທາດທີ່ເປັນນິວອນແລະເປັນອາລົມຂອງນິວອນກໍມີ ທີ່ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ຫຼືເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ຫຼື ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ທີ່ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ ທຳມະທາດທີ່ເປັນນິວອນແລະສຳປະຍຸດດ້ວຍນິວອນກໍມີ ທີ່ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ຫຼືສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ

ທາດ ໑໖ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ ທາດ ៤ ທີ່ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນກໍມີ ທີ່ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ ຫຼື ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນກໍມີ

## ໗. ປະຣາມາສະໂຄດສະກະວິສັດຊະນາ

ທາດ ໑໗ ບໍ່ເປັນປະຣາມາດ ທຳມະທາດທີ່ເປັນປະຣາມາດກໍມີ ທີ່ບໍ່ເປັນປະຣາມາດກໍມີ

ທາດ ໑໖ ເປັນອາລົມຂອງປະຣາມາດ ທາດ ៤ ທີ່ເປັນອາລົມຂອງປະຣາມາດກໍມີ ທີ່ບໍ່ເປັນອາລົມຂອງປະຣາມາດກໍມີ

ທາດ ໑໖ ວິບປະຍຸດຈາກປະຣາມາດ ມະໂນວິນຍານທາດທີ່ສຳປະຍຸດດ້ວຍປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດກໍມີ ທຳມະທາດທີ່ສຳປະຍຸດດ້ວຍປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍປະຣາມາດ ຫຼື ວິບປະຍຸດຈາກປະຣາມາດກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ຫຼືເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນປະຣາມາດແລະ

ເປັນອາລົມຂອງປະຣາມາດ ທີ່ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ ທຳມະທາດທີ່ເປັນປະຣາມາດແລະເປັນອາລົມຂອງປະຣາມາດກໍມີ ທີ່ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ ກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ຫຼື ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ

ທາດ ໑໖ ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດ ທາດ ໒ ທີ່ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດ ຫຼື ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດກໍມີ

## ໑໐. ມະຫັນຕະຣະທຸກະວິສັດຊະນາ

ທາດ ໑໐ ຮັບຮູ້ອາລົມບໍ່ໄດ້ ທາດ ໗ ຮັບຮູ້ອາລົມໄດ້ ທຳມະທາດທີ່ຮັບຮູ້ອາລົມໄດ້ກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ

ທາດ ໗ ເປັນຈິດ ທາດ ໑໑ ບໍ່ເປັນຈິດ

ທາດ ໑໗ ບໍ່ເປັນເຈຕະສິກ ທຳມະທາດທີ່ເປັນເຈຕະສິກກໍມີ ທີ່ບໍ່ເປັນເຈຕະສິກກໍມີ

ທາດ ໑໐ ວິບປະຍຸດຈາກຈິດ ທຳມະທາດທີ່ສຳປະຍຸດດ້ວຍຈິດກໍມີ ທີ່ວິບປະຍຸດຈາກຈິດກໍມີ ທາດ ໗ ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍຈິດ ຫຼື ວິບປະຍຸດຈາກຈິດ

ທາດ ໑໐ ບໍ່ປະປົນກັບຈິດ ທຳມະທາດທີ່ປະປົນກັບຈິດກໍມີ ທີ່ບໍ່ປະປົນກັບຈິດກໍມີ ທາດ ໗ ກ່າວບໍ່ໄດ້ວ່າ ປະປົນກັບຈິດ ຫຼື ບໍ່ປະປົນກັບຈິດ

ທາດ ໑໘ ບໍ່ມີຈິດເປັນສະມຸດຖານ ທາດ ໖ ທີ່ມີຈິດເປັນສະມຸດຖານກໍມີ ທີ່ບໍ່ມີຈິດເປັນສະມຸດຖານກໍມີ

ທາດ ໑໗ ບໍ່ເກີດພ້ອມກັບຈິດ ທຳມະທາດທີ່ເກີດພ້ອມກັບຈິດກໍມີ ທີ່ບໍ່ເກີດພ້ອມກັບ ຈິດກໍມີ

ທາດ ໑໗ ບໍ່ເປັນໄປຕາມຈິດ ທຳມະທາດທີ່ເປັນໄປຕາມຈິດກໍມີ ທີ່ບໍ່ເປັນໄປຕາມຈິດກໍມີ

ທາດ ໑໗ ບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານ ທຳມະທາດທີ່ປະປົນກັບຈິດແລະມີຈິດເປັນສະມຸດຖານກໍມີ ທີ່ບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານກໍມີ

ທາດ ໑໗ ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ ທຳມະທາດທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດກໍມີ ທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດກໍມີ

ທາດ ໑໗ ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ທຳມະທາດທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດກໍມີ ທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດກໍມີ

ທາດ ໑໔ ເປັນພາຍໃນ ທາດ ໒ ເປັນພາຍນອກ

ທາດ ໙ ເປັນອຸປາທາຍະຣູບ ທາດ ໗ ບໍ່ເປັນອຸປາທາຍະຣູບ ທຳມະທາດທີ່ເປັນ ອຸປາທາຍະຣູບກໍມີ ທີ່ບໍ່ເປັນອຸປາທາຍະຣູບກໍມີ

## ໑໑. ອຸປາທານະໂຄດສະກະວິສັດຊະນາ

ທາດ ໑໐ ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ສັດທະທາດກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືທາດ ໗ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖືກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືກໍມີ

ທາດ ໑໗ ບໍ່ເປັນອຸປາທານ ທຳມະທາດທີ່ເປັນອຸປາທານກໍມີ ທີ່ບໍ່ເປັນອຸປາທານກໍມີ

ທາດ ໑໖ ເປັນອາລົມຂອງອຸປາທານ ທາດ ໔ ທີ່ເປັນອາລົມຂອງອຸປາທານກໍມີ ທີ່ບໍ່ເປັນອາລົມຂອງອຸປາທານກໍມີ

ທາດ ໑໖ ວິບປະຍຸດຈາກອຸປາທານ ທາດ ໔ ທີ່ສຳປະຍຸດດ້ວຍອຸປາທານກໍມີ ທີ່ວິບປະຍຸດຈາກອຸປາທານກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະເປັນອາລົມຂອງອຸປາທານ ຫຼື ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນອຸປາທານແລະເປັນອາລົມຂອງອຸປາທານ ທີ່ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ ທຳມະທາດທີ່ເປັນອຸປາທານ ແລະເປັນອາລົມຂອງອຸປາທານກໍມີ ທີ່ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອຸປາທານແລະເປັນອາລົມຂອງອຸປາທານ ຫຼື ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ

ທາດ ໑໖ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະສຳປະຍຸດດ້ວຍອຸປາທານ ຫຼື ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນອຸປາທານ ແລະສຳປະຍຸດດ້ວຍອຸປາທານ ທີ່ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍອຸປາທານ ແຕ່ບໍ່ເປັນອຸປາທານກໍມີ ທຳມະທາດທີ່ເປັນອຸປາທານ ແລະສຳປະຍຸດດ້ວຍອຸປະທານກໍມີ ທີ່ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອຸປາທານແລະສຳປະຍຸດດ້ວຍອຸປາທານ ຫຼື ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ

ທາດ ໑໖ ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານ ທາດ ໔ ທີ່ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານກໍມີ ທີ່ວິບປະຍຸດຈາກອຸປາທານ ແລະບໍ່ເປັນອາລົມ

ຂອງອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານ ຫຼື ວິບປະຍຸດຈາກອຸປາທານ ແລະບໍ່ເປັນອາລົມຂອງອຸປາທານກໍມີ

## ໑໘. ກິເລດໂຄດສະກະວິສັດຊະນາ

ທາດ ໑໗ ບໍ່ເປັນກິເລດ ທໍາມະທາດທີ່ເປັນກິເລດກໍມີ ທີ່ບໍ່ເປັນກິເລດກໍມີ

ທາດ ໑໙ ເປັນອາລົມຂອງກິເລດ ທາດ ໔ ທີ່ເປັນອາລົມຂອງກິເລດກໍມີ ທີ່ບໍ່ເປັນອາລົມຂອງກິເລດກໍມີ

ທາດ ໑໙ ກິເລດບໍ່ເຮັດໃຫ້ເສົ້າໝອງ ທາດ ໔ ທີ່ກິເລດເຮັດໃຫ້ເສົ້າໝອງກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງກໍມີ

ທາດ ໑໙ ວິບປະຍຸດຈາກກິເລດ ທາດ ໔ ທີ່ສໍາປະຍຸດດ້ວຍກິເລດກໍມີ ທີ່ວິບປະຍຸດຈາກກິເລດກໍມີ

ທາດ ໑໙ ກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດ ຫຼື ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດທີ່ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ ທໍາມະທາດທີ່ເປັນກິເລດແລະເປັນອາລົມຂອງກິເລດກໍມີ ທີ່ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດ ຫຼື ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ

ທາດ ໑໙ ກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ຫຼື ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງທີ່ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ ທໍາມະທາດທີ່ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງກໍມີ ທີ່ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ຫຼືກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ

ທາດ ໑໙ ກ່າວບໍ່ໄດ້ວ່າ ເປັນກິເລດແລະສໍາປະຍຸດດ້ວຍກິເລດ ຫຼື ສໍາປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ ມະໂນວິນຍານທາດກ່າວບໍ່ໄດ້ວ່າ ເປັນກິເລດແລະສໍາປະຍຸດດ້ວຍກິເລດ ທີ່ສໍາປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ສໍາປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ ທໍາມະທາດທີ່ເປັນກິເລດແລະສໍາປະຍຸດດ້ວຍກິເລດກໍມີ ທີ່ສໍາປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນກິເລດແລະສໍາປະຍຸດດ້ວຍກິເລດ ຫຼື ສໍາປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ

ທາດ ໑໗ ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ ທາດ ໔ ທີ່ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດກໍມີ ທີ່ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ ຫຼື ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດກໍມີ

## ໑໓. ປິດຖິທຸກະວິສັດຊະນາ

ທາດ ໑໗ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ທາດ ໔ ທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ

ທາດ ໑໗ ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ທາດ ໔ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

ທາດ ໑໗ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ທາດ ໔ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ

ທາດ ໑໗ ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ທາດ ໔ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

ທາດ ໑໕ ບໍ່ມີວິຕົກ ມະໂນທາດມີວິຕົກ ທາດ ໔ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ

ທາດ ໑໕ ບໍ່ມີວິຈານ ມະໂນທາດມີວິຈານ ທາດ ໔ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານກໍມີ

ທາດ ໑໗ ບໍ່ມີປິຕິ ທາດ ໔ ທີ່ມີປິຕິກໍມີ ທີ່ບໍ່ມີປິຕິກໍມີ

ທາດ ໑໗ ບໍ່ປະກອບດ້ວຍປິຕິ ທາດ ໔ ທີ່ປະກອບດ້ວຍປິຕິກໍມີ ທີ່ບໍ່ປະກອບດ້ວຍປິຕິກໍມີ

ທາດ ໑໕ ບໍ່ປະກອບດ້ວຍສຸກ ທາດ ໓ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ

ທາດ ໑໑ ບໍ່ປະກອບດ້ວຍອຸເປກຂາ ທາດ ໕ ປະກອບດ້ວຍອຸເປກຂາ ທາດ ໔ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ທາດ ໑໗ ເປັນກາມາວະຈອນ ທາດ ໔ ທີ່ເປັນກາມາວະຈອນກໍມີ ທີ່ບໍ່ເປັນກາມາວະຈອນກໍມີ

ທາດ ໑໗ ບໍ່ເປັນອະຮູບປາວະຈອນ ທາດ ໔ ທີ່ເປັນອະຮູບປາວະຈອນກໍມີ ທີ່ບໍ່ເປັນອະຮູບປາວະຈອນກໍມີ

ທາດ ໑໗ ບໍ່ເປັນອະຮູບປາວະຈອນ ທາດ ໔ ທີ່ເປັນອະຮູບປາວະຈອນກໍມີ ທີ່ບໍ່ເປັນອະຮູບປາວະຈອນກໍມີ

ທາດ ໑໗ ນັບເນື່ອງໃນວັດຕະທຸກ ທາດ ໔ ທີ່ນັບເນື່ອງໃນວັດຕະທຸກກໍມີ ທີ່ບໍ່ນັບເນື່ອງໃນວັດຕະທຸກກໍມີ

ທາດ ໑໗ ບໍ່ເປັນເຫດນຳອອກຈາກວັດຕະທຸກ ທາດ ໔ ທີ່ເປັນເຫດນຳອອກຈາກວັດຕະທຸກກໍມີ ທີ່ບໍ່ເປັນເຫດນຳອອກຈາກວັດຕະທຸກກໍມີ

ທາດ ໑໖ ໃຫ້ຜົນບໍ່ແນ່ນອນ ທາດ ໒ ທີ່ໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ທາດ ໑໖ ມີທຳອື່ນຍິ່ງກວ່າ ທາດ ໒ ທີ່ມີທຳອື່ນຍິ່ງກວ່າກໍມີ ທີ່ບໍ່ມີທຳອື່ນຍິ່ງກວ່າກໍມີ

ທາດ ໑໖ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ ທາດ ໒ ທີ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ ທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ (໑໕)

**ປັນຫາປຸດສະກະ ຈົບ**

**ທາດວິພັງ ຈົບບໍລິບູນ**

# ໔. ສັດຈະວິພັງ

## ໑. ສຸດຕັນຕະພາຊະນີ

[໑໘໙] ອະຣິຍະສັດ ໔ ຄື

໑. ທຸກຂະອະຣິຍະສັດ (ອະຣິຍະສັດຄືທຸກ)

໒. ທຸກຂະສະມຸທະຍະອະຣິຍະສັດ (ອະຣິຍະສັດຄືເຫດເກີດແຫ່ງທຸກ)

໓. ທຸກຂະນິໂຣທະອະຣິຍະສັດ (ອະຣິຍະສັດຄືຄວາມດັບທຸກ)

໔. ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ (ອະຣິຍະສັດຄືຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)

## ໑. ທຸກຂະສັດ

[໑໙໐] ບັນດາອະຣິຍະສັດ ໔ ນັ້ນ ທຸກຂະອະຣິຍະສັດ ເປັນແນວໃດ?

ຊາດເປັນທຸກ ຊະຣາເປັນທຸກ ມໍຣະນະເປັນທຸກ ໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດເປັນທຸກ ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ ຄວາມພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ໂດຍຫຍໍ້ ອຸປາທານ ຂັນ໌ ໕ ເປັນທຸກ

[໑໙໑] ບັນດາທຸກຂະອະຣິຍະສັດນັ້ນ ຊາດ ເປັນແນວໃດ?

ຄວາມເກີດ ຄວາມເກີດພ້ອມ ຄວາມຢັ່ງລົງ ຄວາມບັງເກີດສະເພາະ ຄວາມຜາກົດແຫ່ງຂັນ ຄວາມໄດ້ອາຍະຕະນະ ໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊາດ

[໑໙໒] ຊະຣາ ເປັນແນວໃດ?

ຄວາມແກ່ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍັ່ນ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີ ໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

[໑໘໓] ມໍຣະນະ ເປັນແນວໃດ?

ຄວາມຈຸຕິ ຄວາມເຄື່ອນໄປ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄືຄວາມຕາຍ ການເຮັດກາລະ ຄວາມແຕກແຫ່ງຂັນ ຄວາມປະຖິ້ມຮ່າງກາຍ ຄວາມຂາດສູນແຫ່ງຊີວິຕິນຊີ ຂອງເຫຼົ່າສັດນັ້ນ ໆ ຈາກໝູ່ສັດນັ້ນ ໆ ນີ້ຮຽກວ່າ ມໍຣະນະ

[໑໘໔] ໂສກະ ເປັນແນວໃດ?

ຄວາມເສົ້າໂສກ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມແຫ້ງຜາກພາຍໃນ ຄວາມແຫ້ງກອບພາຍໃນ ຄວາມກເສຍໃຈ ຄວາມໂທມະນັດ ລູກສອນຄືຄວາມໂສກຂອງຜູ້ທີ່ຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຄວາມເສື່ອມກ່ຽວດ້ວຍໂຣກ ຄວາມເສື່ອມສີນ ຫຼື ຄວາມເສື່ອມທິດຖິກະທົບ ຂອງຜູ້ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ໂສກະ

[໑໘໕] ປະຣິເທວະ ເປັນແນວໃດ?

ຄວາມຮ້ອງໄຫ້ ຄວາມຄ່ຳຄວນ ກິຣິຍາທີ່ຮ້ອງໄຫ້ ກິຣິຍາທີ່ຄ່ຳຄວນ ພາວະທີ່ຮ້ອງໄຫ້ ພາວະທີ່ຄ່ຳຄວນ ຄວາມຈົ່ມເຖິງ ຄວາມພ່ຳເພີ້ ຄວາມຮ້ອງໄຫ້ ຄວາມພິໄຣລຳພັນ ກິຣິຍາທີ່ພິໄຣລຳພັນ ພາວະທີ່ພິໄຣລຳພັນ ຂອງຜູ້ທີ່ຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຄວາມເສື່ອມກ່ຽວດ້ວຍໂຣກ ຄວາມເສື່ອມສີນ ຫຼື ຄວາມເສື່ອມທິດຖິກະທົບ ຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ປະຣິເທວະ

[໑໘໖] ທຸກ ເປັນແນວໃດ?

ຄວາມບໍ່ສະບາຍທາງກາຍ ຄວາມທຸກທາງກາຍ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ນີ້ຮຽກວ່າ ທຸກ

[໑໘໗] ໂທມະນັດ ເປັນແນວໃດ?

ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍ ເປັນທຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ໂທມະນັດ

[១៧៨] ອຸປາຍາດ ເປັນແນວໃດ?

ຄວາມແຄ້ນ ຄວາມຄັບແຄ້ນ ພາວະທີ່ແຄ້ນ ພາວະທີ່ຄັບແຄ້ນ ຂອງຜູ້ທີ່ຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຄວາມເສື່ອມກ່ຽວດ້ວຍໂຣກ ຄວາມເສື່ອມສີນ ຫຼື ຄວາມເສື່ອມທິດຖິກະທົບ ຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງກະທົບ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ອຸປາຍາດ

[១៧៩] ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ ເປັນແນວໃດ?

ການໄປຮ່ວມ ການມາຮ່ວມ ການປະຊຸມຮ່ວມ ການຢູ່ຮ່ວມກັບອາລົມອັນບໍ່ເປັນທີ່ປາຖະໜາ ບໍ່ເປັນທີ່ຮັກແພງ ບໍ່ເປັນທີ່ພໍໃຈຂອງເຂົາໃນໂລກນີ້ ເຊັ່ນ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ຫຼື ຈາກບຸກຄົນຜູ້ປາຖະໜາແຕ່ສິ່ງທີ່ບໍ່ແມ່ນປະໂຫຍດ ປາຖະໜາແຕ່ສິ່ງທີ່ບໍ່ເກື້ອກູນ ປາຖະໜາແຕ່ສິ່ງທີ່ບໍ່ຜາສຸກ ບໍ່ປາຖະໜາຄວາມຫຼຸດພົ້ນຈາກໂຍຄະຂອງເຂົາ ນີ້ຮຽກວ່າ ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ

[៤០០] ການພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ ເປັນແນວໃດ?

ການບໍ່ໄປຮ່ວມ ການບໍ່ມາຮ່ວມ ການບໍ່ປະຊຸມຮ່ວມ ການບໍ່ຢູ່ຮ່ວມກັບອາລົມອັນເປັນທີ່ປາຖະໜາເປັນທີ່ຮັກແພງພໍໃຈຂອງເຂົາໃນໂລກນີ້ ເຊັ່ນ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ຫຼືຈາກບຸກຄົນຜູ້ທີ່ມຸ້ງປະໂຫຍດ ມຸ້ງຄວາມເກື້ອກູນ ມຸ້ງຄວາມຜາສຸກ ມຸ້ງຄວາມກະເສມຈາກໂຍຄະຂອງເຂົາ ເຊັ່ນ ມານດາ ບິດາ ອ້າຍ ນ້ອງຊາຍ ເອື້ອຍສາວ ນ້ອງ ມິດ ອຳມາດ ຍາດພີ່ນ້ອງ ຫຼື ສາຍໂລຫິດ ນີ້ຮຽກວ່າ ການພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ

[៤០១] ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ເປັນແນວໃດ?

ເຫຼົ່າສັດຜູ້ມີຄວາມເກີດເປັນທຳມະດາ ເກີດຄວາມປາຖະໜາຂຶ້ນແນວນີ້ວ່າ ເຮັດຈັ່ງໃດນໍ ຂໍເຮົາຢ່າໄດ້ມີຄວາມເກີດເປັນທຳມະດາ ຫຼື ຂໍຄວາມເກີດຢ່າໄດ້ມາເຖິງເຮົາເລີຍ ຂໍ້ນີ້ບໍ່ເພິ່ງສຳເລັດໄດ້ຕາມຄວາມປາຖະໜາ ນີ້ຮຽກວ່າ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ

ເຫຼົ່າສັດຜູ້ມີຄວາມແກ່ເປັນທຳມະດາ ຯລຯ ເຫຼົ່າສັດຜູ້ມີຄວາມເຈັບເປັນທຳມະດາ ຯລຯ ເຫຼົ່າສັດຜູ້ມີຄວາມຕາຍເປັນທຳມະດາ ຯລຯ ເຫຼົ່າສັດຜູ້ມີຄວາມເສົ້າໂສກ ຄວາມພິໄຣລຳພັນ ຄວາມທຸກ ຄວາມໂທມະນັດ ແລະຄວາມຄັບແຄ້ນເປັນທຳມະດາ ຕ່າງກໍເກີດຄວາມປາຖະໜາຂຶ້ນແນວນີ້ວ່າ ເຮັດຈັ່ງໃດນໍ ຂໍເຮົາຢ່າໄດ້ເປັນຜູ້ມີຄວາມເສົ້າໂສກ ຄວາມພິໄຣລຳພັນ ຄວາມທຸກ ຄວາມໂທມະນັດ ແລະຄວາມຄັບແຄ້ນເປັນທຳມະດາເລີຍ ຂໍຄວາມເສົ້າໂສກ ຄວາມພິໄຣລຳພັນ ຄວາມທຸກ ຄວາມໂທມະນັດ ແລະຄວາມຄັບແຄ້ນ ຢ່າໄດ້ມາເຖິງເຮົາເລີຍໃນຂໍ້ນີ້ບໍ່ເພິ່ງສຳເລັດໄດ້ຕາມຄວາມຕ້ອງການ ນີ້ຮຽກວ່າ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ

[៤០២] ໂດຍຫຍໍ້ ອຸປາທານຂັນ ៥ ເປັນທຸກ ເປັນແນວໃດ?

ຮູປູປາທານະຂັນ (ກອງຮູບທີ່ເປັນອາລົມຂອງອຸປາທານ) ເວທະນູປາທານະຂັນ (ກອງເວທະນາທີ່ເປັນອາລົມຂອງອຸປາທານ) ສັນຍູປາທານະຂັນ (ກອງສັນຍາທີ່ເປັນອາລົມຂອງອຸປາທານ) ສັງຂາຣູປາທານະຂັນ (ກອງສັງຂານທີ່ເປັນອາລົມຂອງອຸປາທານ) ແລະວິນຍານູປາທານະຂັນ (ກອງວິນຍານທີ່ເປັນອາລົມຂອງອຸປາທານ) ເຫຼົ່ານີ້ຮຽກວ່າ

ໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ

ນີ້ຮຽກວ່າ ທຸກຂະອະຣິຍະສັດ

## ໘. ສະມຸທະຍະສັດ

[໘໐໙] ທຸກຂະສະມຸດະຍະອະຣິຍະສັດ ເປັນແນວໃດ?

ຕັນຫານີ້ເປັນເຫດເກີດໃນພົບໃໝ່ ປະກອບດ້ວຍຄວາມກຳໜັດຍິນດີ ເປັນເຫດເພີດເພີນໃນອາລົມນັ້ນ ໆ ຄື ກາມຕັນຫາ ພະວະຕັນຫາ ແລະວິພະວະຕັນຫາ

ກໍຕັນຫານີ້ແຫຼະເມື່ອເກີດ ເກີດບ່ອນໃດ? ເມື່ອຕັ້ງຢູ່ຕັ້ງຢູ່ບ່ອນໃດ?

ປິຍະຣູບສາຕະຣູບ ເປັນສະພາວະທີ່ມີຢູ່ໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ປິຍະຣູບສາຕະຣູບນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ປິຍະຣູບສາຕະຣູບນີ້

ກໍອັນໃດເປັນປິຍະຣູບສາຕະຣູບໃນໂລກ

ຈັກຂຸເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ຈັກຂຸນີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ຈັກຂຸນີ້ ໂສຕະ ฯລฯ ໃນໂລກ ຄານະ ฯລฯ ໃນໂລກ ຊິວຫາ ฯລฯ ໃນໂລກ ກາຍະ ฯລฯ ໃນໂລກ ມະໂນເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ມະໂນນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ມະໂນນີ້

ຮູບເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ຮູບນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຮູບນີ້ ສຽງ ฯລฯ ໃນໂລກ ກິ່ນ ฯລฯ ໃນໂລກ ຣົດ ฯລฯ ໃນໂລກ ໂຜດຖັບພະ ฯລฯ ໃນໂລກ ທຳເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ ທີ່ທຳນີ້

ຈັກຂຸວິນຍານເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ຈັກຂຸວິນຍານນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຈັກຂຸວິນຍານນີ້ ໂສຕະວິນຍານ ฯລฯ ໃນໂລກ ຄານະວິນຍານ ฯລฯ ໃນໂລກ ຊິວຫາວິນຍານ ฯລฯ ໃນໂລກ ກາຍະວິນຍານ ฯລฯ ໃນໂລກ ມະໂນວິນຍານເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ມະໂນວິນຍານນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ມະໂນວິນຍານນີ້

ຈັກຂຸສຳຜັດເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ຈັກຂຸສຳຜັດນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຈັກຂຸສຳຜັດນີ້ ໂສຕະສຳຜັດ ຯລຯ ໃນໂລກ ຄານະສຳຜັດ ຯລຯ ໃນໂລກ ຊິວຫາສຳຜັດ ຯລຯ ໃນໂລກ ກາຍສຳຜັດ ຯລຯ ໃນໂລກ ມະໂນສຳຜັດເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ມະໂນສຳຜັດນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ມະໂນສຳຜັດນີ້

ເວທະນາທີ່ເກີດຈາກຈັກຂຸສຳຜັດເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ເວທະນາທີ່ເກີດຈາກຈັກຂຸສຳຜັດນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ເວທະນາທີ່ເກີດຈາກຈັກຂຸສຳຜັດນີ້

ເວທະນາທີ່ເກີດຈາກໂສຕະສຳຜັດ ຯລຯ ໃນໂລກ ເວທະນາທີ່ເກີດຈາກຄານະສຳຜັດ ຯລຯ ໃນໂລກ ເວທະນາທີ່ເກີດຈາກຊິວຫາສຳຜັດ ຯລຯ ໃນໂລກເວທະນາທີ່ເກີດຈາກກາຍສຳຜັດ ຯລຯ ໃນໂລກ ເວທະນາທີ່ເກີດຈາກມະໂນສຳຜັດເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ເວທະນາທີ່ເກີດຈາກມະໂນສຳຜັດນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ເວທະນາທີ່ເກີດຈາກມະໂນສຳຜັດນີ້

ຮູບສັນຍາ (ຄວາມໝາຍຮູ້ຮູບ) ເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຮູບສັນຍານີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຮູບສັນຍານີ້ ສັດທະສັນຍາ ຯລຯ ໃນໂລກ ຄັນທະສັນຍາ ຯລຯ ໃນໂລກ ຣະສະສັນຍາ ຯລຯ ໃນໂລກ ໂຜດຖັບພະສັນຍາ ຯລຯ ໃນໂລກ ທຳມະສັນຍາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳມະສັນຍານີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ທຳມະສັນຍານີ້

ຮູບສັນເຈຕະນາ (ຄວາມຄິດອ່ານໃນຮູບ) ເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຮູບສັນເຈຕະນານີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຮູບສັນເຈຕະນານີ້ ສັດທະສັນເຈຕະນາ ຯລຯ ໃນໂລກ ຄັນທະສັນເຈຕະນາ ຯລຯ ໃນໂລກ ຣະສະສັນເຈຕະນາ ຯລຯ ໃນໂລກໂຜດຖັບພະສັນເຈຕະນາ ຯລຯ ໃນໂລກທຳມະສັນເຈຕະນາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳມະສັນເຈຕະນານີ້ ເມື່ອຕັ້ງຢູ່ກໍຕັ້ງຢູ່ທີ່ທຳມະສັນເຈຕະນານີ້

ຮູບຕັນຫາ (ຄວາມຕິດໃຈໃນຮູບ) ເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ຮູບຕັນຫານີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຮູບຕັນຫານີ້ ສັດທະຕັນຫາ ຯລຯ ໃນໂລກ ຄັນທະຕັນຫາ ຯລຯ ໃນໂລກ ຣະສະຕັນຫາ ຯລຯ ໃນໂລກ ໂຜດຖັບພະຕັນຫາ ຯລຯ ໃນໂລກ ທຳມະຕັນຫາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳມະຕັນຫານີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ ທຳມະຕັນຫານີ້

ຮູບວິຕົກ (ຄວາມນຶກເຖິງຮູບ) ເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອເກີດກໍເກີດທີ່ຮູບວິຕົກນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຮູບວິຕົກນີ້ ສັດທະວິຕົກ ຯລຯ ໃນໂລກ ຄັນທະວິຕົກ ຯລຯ ໃນ

ໂລກ ຣະສະວິຕົກ ฯລฯ ໃນໂລກ ໂຜດຖັບພະວິຕົກ ฯລฯ ໃນໂລກ ທຳມະວິຕົກ ເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳມະວິຕົກນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ທຳມະວິຕົກນີ້

ຣູບວິຈານ (ຄວາມຕອງເຖິງຣູບ) ເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ຣູບວິຈານນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຣູບວິຈານນີ້ ສັດທະວິຈານ ฯລฯ ໃນໂລກ ຄັນທະວິຈານ ฯລฯ ໃນໂລກ ຣະສະວິຈານ ฯລฯ ໃນໂລກ ໂຜດຖັບພະວິຈານ ฯລฯ ໃນໂລກທຳມະວິຈານ ເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ທຳມະວິຈານນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ທຳມະວິຈານນີ້

ນີ້ຮຽກວ່າ ທຸກຂະສະມຸດະຍະອະຣິຍະສັດ

## ໓. ນິໂຣທະສັດ

[໔໐໔] ທຸກຂະນິໂຣທະອະຣິຍະສັດ ເປັນແນວໃດ?

ຄວາມສຳຣອກແລະຄວາມດັບຕັນຫານັ້ນນັ້ນໂດຍບໍ່ເຫຼືອ ຄວາມປ່ອຍວາງ ຄວາມສົ່ງຄືນ ຄວາມພົ້ນ ຄວາມບໍ່ຕິດຢູ່

ກໍຕັນຫານີ້ເມື່ອລະ ລະບ່ອນໃດ? ເມື່ອດັບ ດັບບ່ອນໃດ?

ປິຍະຣູບສາຕະຣູບໃດມີຢູ່ໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ປິຍະຣູບສາຕະຣູບນີ້ ເມື່ອດັບ ກໍດັບທີ່ປິຍະຣູບສາຕະຣູບນີ້

ກໍອັນໃດເປັນປິຍະຣູບສາຕະຣູບໃນໂລກ

ຈັກຂຸເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຈັກຂຸນີ້ ເມື່ອດັບກໍດັບທີ່ຈັກຂຸນີ້ ໂສຕະ ฯລฯ ໃນໂລກ ຄານະ ฯລฯ ໃນໂລກ ຊິວຫາ ฯລฯ ໃນໂລກ ກາຍ ฯລฯ ໃນໂລກ ມະໂນເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ມະໂນນີ້ ເມື່ອດັບກໍດັບທີ່ມະໂນນີ້

ຣູບເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຣູບນີ້ ເມື່ອດັບກໍດັບທີ່ຣູບນີ້ ສຽງ ฯລฯ ໃນໂລກ ກິ່ນ ฯລฯ ໃນໂລກ ຣົດ ฯລฯ ໃນໂລກ ໂຜດຖັບພະ ฯລฯ ໃນໂລກ ທຳເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ທຳນີ້ ເມື່ອດັບ ກໍດັບທີ່ທຳນີ້

ຈັກຂຸວິນຍານເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຈັກຂຸວິນຍານນີ້ ເມື່ອດັບ ກໍດັບທີ່ຈັກຂຸວິນຍານນີ້ ໂສຕະວິນຍານ ฯລฯ ໃນໂລກ ຄານະວິນຍານ ฯລฯ ໃນໂລກ ຊິວຫາວິນຍານ ฯລฯ ໃນໂລກ ກາຍະວິນຍານ ฯລฯ ໃນໂລກ ມະໂນວິນຍານເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ມະໂນວິນຍານນີ້ ເມື່ອດັບກໍດັບທີ່ມະໂນວິນຍານນີ້

ຈັກຂຸສຳຜັດເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຈັກຂຸສຳຜັດນີ້ ເມື່ອດັບ ກໍດັບທີ່ຈັກຂຸສຳຜັດນີ້ ໂສຕະສຳຜັດ ຯລຯ ໃນໂລກ ຄານະສຳຜັດ ຯລຯໃນໂລກ ຊິວຫາສຳຜັດ ຯລຯ ໃນໂລກ ກາຍສຳຜັດ ຯລຯ ໃນໂລກ ມະໂນສຳຜັດເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ມະໂນສຳຜັດນີ້ ເມື່ອດັບ ກໍດັບທີ່ມະໂນສຳຜັດນີ້

ເວທະນາທີ່ເກີດຈາກຈັກຂຸສຳຜັດເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະກໍລະທີ່ເວທະນາທີ່ເກີດຈາກຈັກຂຸສຳຜັດນີ້ ເມື່ອດັບ ກໍດັບທີ່ເວທະນາທີ່ເກີດຈາກຈັກຂຸສຳຜັດນີ້ ເວທະນາທີ່ເກີດຈາກໂສຕະສຳຜັດ ຯລຯ ໃນໂລກ ເວທະນາທີ່ເກີດຈາກຄານະສຳຜັດ ຯລຯ ໃນໂລກ ເວທະນາທີ່ເກີດຈາກຊິວຫາສຳຜັດ ຯລຯ ໃນໂລກ ເວທະນາທີ່ເກີດຈາກກາຍສຳຜັດ ຯລຯ ໃນໂລກ ເວທະນາທີ່ເກີດຈາກມະໂນສຳຜັດເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ເວທະນາທີ່ເກີດຈາກມະໂນສຳຜັດນີ້ ເມື່ອດັບ ກໍດັບທີ່ເວທະນາທີ່ເກີດຈາກມະໂນສຳຜັດນີ້

ຮູບສັນຍາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະກໍລະທີ່ຮູບສັນຍານີ້ ເມື່ອດັບ ກໍດັບທີ່ຮູບສັນຍານີ້ ສັດທະສັນຍາ ຯລຯ ໃນໂລກ ຄັນທະສັນຍາ ຯລຯ ໃນໂລກ ຣະສະສັນຍາ ຯລຯ ໃນໂລກ ໂຜດຖັບພະສັນຍາ ຯລຯ ໃນໂລກ ທຳມະສັນຍາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມະສັນຍານີ້ ເມື່ອດັບ ກໍດັບທີ່ທຳມະສັນຍານີ້

ຮູບສັນເຈຕະນາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຮູບສັນເຈຕະນານີ້ ເມື່ອດັບ ກໍດັບທີ່ຮູບສັນເຈຕະນານີ້ ສັດທະສັນເຈຕະນາ ຯລຯ ໃນໂລກ ຄັນທະສັນເຈຕະນາ ຯລຯ ໃນໂລກ ຣະສະສັນເຈຕະນາ ຯລຯໃນໂລກ ໂຜດຖັບພະສັນເຈຕະນາ ຯລຯ ໃນໂລກ ທຳມະສັນເຈຕະນາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະກໍລະທີ່ທຳມະສັນເຈຕະນານີ້ ເມື່ອດັບກໍດັບທີ່ທຳມະສັນເຈຕະນານີ້

ຮູບຕັນຫາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຮູບຕັນຫານີ້ ເມື່ອດັບ ກໍດັບທີ່ຮູບຕັນຫານີ້ ສັດທະຕັນຫາ ຯລຯ ໃນໂລກ ຄັນທະຕັນຫາ ຯລຯ ໃນໂລກ ຣະສະຕັນຫາ ຯລຯ ໃນໂລກ ໂຜດຖັບພະຕັນຫາ ຯລຯ ໃນໂລກ ທຳມະຕັນຫາເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ ເມື່ອລະກໍລະທີ່ທຳມະຕັນຫານີ້ ເມື່ອດັບກໍດັບທີ່ທຳມະຕັນຫານີ້

ຮູບວິຕົກເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຮູບວິຕົກນີ້ ເມື່ອດັບກໍດັບທີ່ຮູບວິຕົກນີ້ ສັດທະວິຕົກ ຯລຯ ໃນໂລກ ຄັນທະວິຕົກ ຯລຯ ໃນໂລກ ຣະສະວິຕົກ ຯລຯ ໃນໂລກ ໂຜດຖັບພະວິຕົກ ຯລຯ ໃນໂລກ ທຳມະວິຕົກເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມະວິຕົກນີ້ ເມື່ອດັບ ກໍດັບທີ່ທຳມະວິຕົກນີ້

ຮູບວິຈານເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ຮູບວິຈານນີ້ ເມື່ອດັບ ກໍດັບທີ່ຮູບວິຈານນີ້ ສັດທະວິຈານ ฯລฯ ໃນໂລກ ຄັນທະວິຈານ ฯລฯ ໃນໂລກ ຣະສະວິຈານ ฯລฯ ໃນໂລກ ໂຜດຖັບພະວິຈານ ฯລฯ ໃນໂລກ ທຳມະວິຈານເປັນປິຍະຮູບສາຕະຮູບໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ທຳມະວິຈານນີ້ ເມື່ອດັບກໍດັບທີ່ທຳມະວິຈານນີ້ ນີ້ຮຽກວ່າ ທຸກຂະນິໂຣທະອະຣິຍະສັດ

## ໔. ມັກຄະສັດ

[໔໐໕] ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ເປັນແນວໃດ?

ອະຣິຍະມັກມີອົງ ໘ ນີ້ນັ້ນແລ ຄື

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ດຳຣິຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການກະທຳຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີບຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະລຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາທິດຖິ ເປັນແນວໃດ?

ຄວາມຮູ້ໃນທຸກ (ຄວາມທຸກ) ຄວາມຮູ້ໃນທຸກຂະສະມຸໄທ (ເຫດເກີດແຫ່ງທຸກ) ຄວາມຮູ້ໃນທຸກຂະນິໂຣທະ (ຄວາມດັບທຸກ) ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ) ນີ້ຮຽກວ່າ ສຳມາທິດຖິ (໑)

ສຳມາສັງກັບປະ ເປັນແນວໃດ?

ຄວາມດຳຣິໃນການອອກຈາກກາມ ຄວາມດຳຣິໃນການບໍ່ພະຍາບາດ ຄວາມດຳຣິໃນການບໍ່ບຽດບຽນ ນີ້ຮຽກວ່າ ສຳມາສັງກັບປະ (໒)

ສຳມາວາຈາ ເປັນແນວໃດ?

ເຈຕະນາເປັນເຫດງົດເວັ້ນຈາກການເວົ້າຕົວະ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າສັບສໍ່ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າຄຳຫຍາບ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າເພີ້ເຈີ້ ນີ້ຮຽກວ່າ ສຳມາວາຈາ (໓)

ສຳມາກຳມັນຕະ ເປັນແນວໃດ?

ເຈຕະນາເປັນເຫດງົດເວັ້ນຈາກການຂ້າສັດ ເຈຕະນາເປັນເຫດງົດເວັ້ນຈາກການລັກຊັບ ເຈຕະນາເປັນເຫດງົດເວັ້ນຈາກການປະພຶດຜິດໃນກາມ ນີ້ຮຽກວ່າ ສຳມາກຳມັນຕະ (໔)

ສຳມາອາຊີວະ ເປັນແນວໃດ?

ຂໍ້ທີ່ພຣະອະຣິຍະສາວົກໃນທຳວິໄນນີ້ລະມິດສາອາຊີວະແລ້ວ ສຳເລັດການລ້ຽງຊີບດ້ວຍສຳມາອາຊີວະ ນີ້ຮຽກວ່າ ສຳມາອາຊີວະ (໕)

ສຳມາວາຍາມະ ເປັນແນວໃດ?

ຂໍ້ທີ່ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ຯລຯ ເພື່ອລະບາບອະກຸສົນ

ທຳທີ່ເກີດຂຶ້ນແລ້ວ ຯລຯ ເພື່ອທຳບາບອະກຸສົນທຳທີ່ຍັງບໍ່ເກີດຂຶ້ນບໍ່ໃຫ້ເກີດຂຶ້ນ ຯລຯ ສ້າງສັນທະພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ນີ້ຮຽກວ່າ ສຳມາວາຍາມະ (໖)

ສຳມາສະຕິ ເປັນແນວໃດ?

ຂໍ້ທີ່ພິກຂຸໃນທຳວິໄນນີ້ເປັນຜູ້ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ພິຈາລະນາເຫັນກາຍໃນກາຍຢູ່ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນເວທະນາໃນເວທະນາຢູ່ ຯລຯ ພິຈາລະນາເຫັນຈິດໃນຈິດຢູ່ ຯລຯ ເປັນຜູ້ມີຄວາມພຽນມີສຳປະຊັນຍະ ມີສະຕິພິຈາລະນາເຫັນທຳໃນທຳຢູ່ ເພິ່ງກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ນີ້ຮຽກວ່າ ສຳມາສະຕິ (໗)

ສຳມາສະມາທິ ເປັນແນວໃດ?

ຂໍ້ທີ່ພິກຂຸໃນທຳວິໄນນີ້ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານ ທີ່ມີວິຕົກ ມີວິຈານ ມີປີຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ

ບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ມີຈິດເປັນອຸເປກຂາມີສະຕິ ມີສຳປະຊັນຍະຢູ່ແລະສະເຫວີຍສຸກດ້ວຍກາຍ (ນາມກາຍ) ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍກ່າວສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ສຳມາສະມາທິ (໘)

ນີ້ຮຽກວ່າ ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ

**ສຸດຕັນຕະພາຊະນີ ຈົບ**

# ໘. ອະພິທຳມະພາຊະນີ

## ອັດຖັງຄິກະວາຣະ

[໘໐໗] ສັດຈະ ໔ ຄື

໑. ທຸກ (ທຸກ)
໒. ທຸກຂະສະມຸໄທ (ເຫດເກີດແຫ່ງທຸກ)
໓. ທຸກຂະນິໂຣທະ (ຄວາມດັບທຸກ)
໔. ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)

ບັນດາສັດຈະ ໔ ນັ້ນ ທຸກຂະສະມຸໄທ ເປັນແນວໃດ?
ຕັນຫາ ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກ ເປັນແນວໃດ?
ກິເລດທີ່ເຫຼືອ ສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງອາສະວະ ວິບາກແຫ່ງສະພາວະທຳທີ່ເປັນກຸສົນ ແລະອະກຸສົນເຊິ່ງເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳ ແລະຮູບທັງໝົດ ນີ້ຮຽກວ່າ ທຸກ

ທຸກຂະນິໂຣທະ ເປັນແນວໃດ?
ການລະຕັນຫາໄດ້ແລ້ວ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມິນີປະຕິປະທາ ເປັນແນວໃດ?
ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກການຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ໘ ຄື ສຳມາທິດຖິ ຯລຯ ສຳມາສະມາທິ ກໍເກີດຂຶ້ນ

ບັນດາມັກມີອົງ ໘ ນັ້ນ ສຳມາທິດຖິ ເປັນແນວໃດ?
ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາທິດຖິ

ສຳມາສັງກັປປະ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຯລຯ ສຳມາສັງກັປປະ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສັງກັປປະ

ສຳມາວາຈາ ເປັນແນວໃດ?

ຄວາມງົດ ຄວາມເວັ້ນ ຄວາມເວັ້ນຂາດ ເຈຕະນາເປັນເຫດເວັ້ນຈາກວະຈີທຸດຈະຣິດ ໔ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດ (ແຫ່ງວະຈີທຸດຈະຣິດ ໔) ສຳມາວາຈາ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາວາຈາ

ສຳມາກຳມັນຕະ ເປັນແນວໃດ?

ຄວາມງົດ ຄວາມເວັ້ນ ຄວາມເວັ້ນຂາດ ເຈຕະນາເປັນເຫດເວັ້ນຈາກກາຍທຸດຈະຣິດ ໓ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດ (ແຫ່ງກາຍທຸດຈະຣິດ ໓) ສຳມາກຳມັນຕະ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາກຳມັນຕະ

ສຳມາອາຊີວະ ເປັນແນວໃດ?

ຄວາມງົດ ຄວາມເວັ້ນ ຄວາມເວັ້ນຂາດ ເຈຕະນາເປັນເຫດເວັ້ນຈາກມິດສາຊີບ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດ (ແຫ່ງມິດສາຊີບ) ສຳມາອາຊີວະ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາອາຊີວະ

ສຳມາວາຍາມະ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາວາຍາມະ

ສຳມາສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະຕິ

ສຳມາສະມາທິ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະມາທິ

ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາ ສະພາວະທຳທີ່ເຫຼືອສຳປະຍຸດດ້ວຍທຸກຂະນິໂຣທະຄາມິນີປະຕິປະທາ

[໔໐໗] ທຸກຂະສະມຸໄທ ເປັນແນວໃດ?

ຕັນຫາແລະກິເລດທີ່ເຫຼືອ ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກ ເປັນແນວໃດ?

ສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ສະພາວະທຳ ທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງອາສະວະ ວິບາກແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນເຊິ່ງເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳແລະຮູບທັງໝົດ ນີ້ຮຽກວ່າ ທຸກ

ທຸກຂະນິໂຣທະ ເປັນແນວໃດ?

ການລະຕັນຫາແລະກິເລດທີ່ເຫຼືອ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມິນີປະຕິປະທາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກການ༕ລ༕ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດໃນສະໄໝນັ້ນ ມັກມີອົງ ໗ ຄື

ສຳມາທິດຖິ ༕ລ༕ ສຳມາສະມາທິ ກໍເກີດຂຶ້ນ ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາ ສະພາວະທຳທີ່ເຫຼືອສຳປະຍຸດດ້ວຍທຸກຂະນິໂຣທະຄາມິນີປະຕິປະທາ

[໘໐໗] ທຸກຂະສະມຸໄທ ເປັນແນວໃດ?

ຕັນຫາ ກິເລດທີ່ເຫຼືອແລະສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກ ເປັນແນວໃດ?

ກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງອາສະວະ ວິບາກແຫ່ງສະພາວະທຳທີ່ເປັນກຸສົນ ແລະອະກຸສົນເຊິ່ງເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳແລະຮູບທັງໝົດ ນີ້ຮຽກວ່າ ທຸກ

ທຸກຂະນິໂຣທະ ເປັນແນວໃດ?

ການລະຕັນຫາ ລະກິເລດທີ່ເຫຼືອ ແລະລະສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມິນີປະຕິປະທາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກການ ༕ລ༕ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ໗

ຄື ສຳມາທິດຖິ ຯລຯ ສຳມາສະມາທິ ກໍເກີດຂຶ້ນ ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາ ສະພາວະທຳທີ່ເຫຼືອສຳປະຍຸດດ້ວຍທຸກຂະນິໂຣທະຄາມິນີປະຕິປະທາ

[໔໐໗] ທຸກຂະສະມຸໄທ ເປັນແນວໃດ?

ຕັນຫາ ກິເລດທີ່ເຫຼືອ ສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ກຸສົນມູນ ๓ ທີ່ເປັນອາລົມຂອງອາສະວະ ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງອາສະວະ ວິບາກແຫ່ງສະພາວະທຳທີ່ເປັນກຸສົນ ແລະອະກຸສົນເຊິ່ງເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳແລະຮູບທັງມົດ ນີ້ຮຽກວ່າ ທຸກ

ທຸກຂະນິໂຣທະ ເປັນແນວໃດ?

ການລະຕັນຫາ ລະກິເລດທີ່ເຫຼືອ ລະສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ແລະລະກຸສົນມູນ ๓ ທີ່ເປັນອາລົມຂອງອາສະວະ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມິນີປະຕິປະທາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ๘ ຄື ສຳມາທິດຖິ ຯລຯ ສຳມາສະມາທິ ກໍເກີດຂຶ້ນ ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາ ສະພາວະທຳທີ່ເຫຼືອສຳປະຍຸດດ້ວຍທຸກຂະນິໂຣທະຄາມິນີປະຕິປະທາ

[໔໑໐] ທຸກຂະສະມຸໄທ ເປັນແນວໃດ?

ຕັນຫາ ກິເລດທີ່ເຫຼືອ ສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ກຸສົນມູນ ๓ ທີ່ເປັນອາລົມຂອງອາສະວະແລະສະພາວະທຳທີ່ເປັນກຸສົນທີ່ເຫຼືອ ເຊິ່ງເປັນອາລົມຂອງອາສະວະ ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກ ເປັນແນວໃດ?

ວິບາກແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນ ເຊິ່ງເປັນອາລົມຂອງອາສະວະສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳ ແລະຮູບທັງໝົດນີ້ຮຽກວ່າ ທຸກ

ທຸກຂະນິໂຣທະ ເປັນແນວໃດ?

ການລະຕັນຫາ ລະກິເລດທີ່ເຫຼືອ ລະສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ລະກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ແລະລະສະພາວະທຳທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງ

ອາສະວະ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມິນີປະຕິປະທາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ๘ ຄື

ສຳມາທິດຖິ ຯລຯ ສຳມາສະມາທິ ກໍເກີດຂຶ້ນ ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາ ສະພາວະທຳທີ່ເຫຼືອສຳປະຍຸດດ້ວຍທຸກຂະນິໂຣທະຄາມິນີປະຕິປະທາ

## ປັນຈັງຄິກະວາຣະ

[໒໑໑] ສັດຈະ ໔ ຄື

໑. ທຸກ (ທຸກ)
໒. ທຸກຂະສະມຸໄທ (ເຫດເກີດແຫ່ງທຸກ)
໓. ທຸກຂະນິໂຣທະ (ຄວາມດັບທຸກ)
໔. ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)

ບັນດາສັດຈະ ໔ ນັ້ນ ທຸກຂະສະມຸໄທ ເປັນແນວໃດ?

ຕັນຫາ ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກ ເປັນແນວໃດ?

ກິເລດທີ່ເຫຼືອ ສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງອາສະວະ ວິບາກແຫ່ງສະພາວະທຳ ທີ່ເປັນກຸສົນແລະອະກຸສົນເຊິ່ງເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກິຣິຍາບໍ່ເປັນກຸສົນບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳແລະຮູບທັງໝົດ ນີ້ຮຽກວ່າ ທຸກ

ທຸກຂະນິໂຣທະ ເປັນແນວໃດ?

ການລະຕັນຫາໄດ້ແລ້ວ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມິນີປະຕິປະທາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸ

ປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ໕ ຄື ສຳມາທິດຖິ ສຳມາສັງກັບປະ ສຳມາວາຍາມະ ສຳມາສະຕິ ແລະສຳມາສະມາທິ ກໍເກີດຂຶ້ນ

ສຳມາທິດຖິ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາທິດຖິ

ສຳມາສັງກັບປະ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິ ຯລຯ ສຳມາສັງກັບປະອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສັງກັບປະ

ສຳມາວາຍາມະ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາວາຍາມະ

ສຳມາສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະຕິ

ສຳມາສະມາທິ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະມາທິ

ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາ ສະພາວະທຳທີ່ເຫຼືອະສຳປະຍຸດດ້ວຍທຸກຂະນິໂຣທະຄາມິນີປະຕິປະທາ

[໔໑໔] ບັນດາສັດຈະ ໔ ນັ້ນ ທຸກຂະສະມຸໄທ ເປັນແນວໃດ?

ຕັນຫາ ກິເລດທີ່ເຫຼືອ ສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ແລະສະພາວະທຳທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງອາສະວະ ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກ ເປັນແນວໃດ?

ວິບາກແຫ່ງສະພາວະທຳທີ່ເປັນກຸສົນ ແລະອະກຸສົນເຊິ່ງເປັນອາລົມຂອງອາສະວະສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳ ແລະຮູບທັງໝົດນີ້ຮຽກວ່າ ທຸກ

ທຸກຂະນິໂຣທະ ເປັນແນວໃດ?

ການລະຕັນຫາ ລະກິເລດທີ່ເຫຼືອ ລະສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ລະກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ແລະລະສະພາວະທຳທີ່ເປັນກຸສົນທີ່ເຫຼືອ ເຊິ່ງເປັນອາລົມຂອງອາສະວະ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມີນີປະຕິປະທາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ໕ ຄື ສຳມາທິດຖິ ສຳມາສັງກັບປະ ສຳມາວາຍາມະ ສຳມາສະຕິ ແລະສຳມາສະມາທິ ກໍເກີດຂຶ້ນ ນີ້ຮຽກວ່າ ທຸກຂະນິໂຣທະຄາມີນີປະຕິປະທາ ສະພາວະທຳທີ່ເຫຼືອສຳປະຍຸດດ້ວຍທຸກຂະນິໂຣທະຄາມີນີປະຕິປະທາ

## ສັບພະສັງຄາຫິກະວາຣະ

[໔໑໓] ສັດຈະ ໔ ຄື

໑. ທຸກ (ທຸກ)
໒. ທຸກຂະສະມຸໄທ (ເຫດເກີດແຫ່ງທຸກ)
໓. ທຸກຂະນິໂຣທະ (ຄວາມດັບທຸກ)
໔. ທຸກຂະນິໂຣທະຄາມີນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)

ບັນດາສັດຈະ ໔ ນັ້ນ ທຸກຂະສະມຸໄທ ເປັນແນວໃດ?

ຕັນຫາ ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກ ເປັນແນວໃດ?

ກິເລດທີ່ເຫຼືອ ສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງອາສະວະ ວິບາກແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນ ເຊິ່ງເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກິຣິຍາບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳແລະຮູບທັງໝົດ ນີ້ຮຽກວ່າ ທຸກ

ທຸກຂະນິໂຣທະ ເປັນແນວໃດ?

ການລະຕັນຫາໄດ້ແລ້ວ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມີນີປະຕິປະທາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາ

[໘໑໔] ທຸກຂະສະມຸໄທ ເປັນແນວໃດ?

ຕັນຫາ ກິເລດທີ່ເຫຼືອ ສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ແລະສະພາວະທຳທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງອາສະວະ ນີ້ຮຽກວ່າ ທຸກຂະສະມຸໄທ

ທຸກ ເປັນແນວໃດ?

ວິບາກແຫ່ງສະພາວະທຳທີ່ເປັນກຸສົນ ແລະອະກຸສົນເຊິ່ງເປັນອາລົມຂອງອາສະວະສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳແລະຮູບທັງໝົດ ນີ້ຮຽກວ່າ ທຸກ

ທຸກຂະນິໂຣທະ ເປັນແນວໃດ?

ການລະຕັນຫາ ລະກິເລດທີ່ເຫຼືອ ລະສະພາວະທຳທີ່ເປັນອະກຸສົນທີ່ເຫຼືອ ລະກຸສົນມູນ ໓ ທີ່ເປັນອາລົມຂອງອາສະວະ ແລະລະສະພາວະທຳທີ່ເປັນກຸສົນທີ່ເຫຼືອເຊິ່ງເປັນອາລົມຂອງອາສະວະ ນີ້ຮຽກວ່າ ທຸກຂະນິໂຣທະ

ທຸກຂະນິໂຣທະຄາມິນີປະຕິປະທາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະກໍເກີດຂຶ້ນ ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາ

**ອະພິທຳມະພາຊະນີ ຈົບ**

# ໓. ປັນຫາປຸດສະກະ

[໘໑໕] ອະຣິຍະສັດ ໔ ຄື

໑. ທຸກຂະອະຣິຍະສັດ (ອະຣິຍະສັດຄືທຸກ)

໒. ທຸກຂະສະມຸທະຍະອະຣິຍະສັດ (ອະຣິຍະສັດຄືເຫດເກີດແຫ່ງທຸກ)

໓. ທຸກຂະນິໂຣທະອະຣິຍະສັດ (ອະຣິຍະສັດຄືຄວາມດັບທຸກ)
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ (ອະຣິຍະສັດຄືຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ)

[໔໑໖] ບັນດາອະຣິຍະສັດ ໔ ອະຣິຍະສັດເທົ່າໃດ?ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

# ໑. ຕິກະມາຕິກາວິສັດຊະນາ

## ໑. ກຸສະລະຕິກະວິສັດຊະນາ

[໔໑໗] ສະມຸທະຍະສັດເປັນອະກຸສົນ ມັກຄະສັດເປັນກຸສົນ ນິໂຣທະສັດເປັນອັບພະຍາກະຕະ ທຸກຂະສັດທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

## ໒. ເວທະນາຕິກະວິສັດຊະນາ

ສັດຈະ ໒ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ນິໂຣທະສັດກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ທຸກຂະສັດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼືສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ

## ໓. ວິປາກະຕິກະວິສັດຊະນາ

ສັດຈະ ໒ ເປັນເຫດໃຫ້ເກີດວິບາກ ນິໂຣທະສັດບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກທຸກຂະສັດທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

## ໔. ອຸປາທິນນະຕິກະວິສັດຊະນາ

ສະມຸທະຍະສັດ ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານສັດຈະ ໒ ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແລະບໍ່ເປັນອາລົມຂອງອຸປາທານ

ທຸກຂະສັດທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ

## ໕. ສັງກິລິດຖະຕິກະວິສັດຊະນາ

ສະມຸທະຍະສັດ ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດ ສັດຈະ ໔ ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດ ທຸກຂະສັດທີ່ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດກໍມີ

## ໖. ສະວິຕັກກະຕິກະວິສັດຊະນາ

ສະມຸທະຍະສັດມີທັງວິຕົກແລະວິຈານ ນິໂຣທະສັດບໍ່ມີທັງວິຕົກແລະວິຈານ ມັກຄະສັດທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທຸກຂະສັດທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທີ່ກ່າວບໍ່ໄດ້ວ່າ ມີທັງວິຕົກແລະວິຈານ ບໍ່ມີວິຕົກມີພຽງວິຈານ ຫຼືບໍ່ມີທັງວິຕົກແລະວິຈານກໍມີ

## ໗. ປິຕິຕິກະວິສັດຊະນາ

ສັດຈະ ໔ ທີ່ປະກອບດ້ວຍປິຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍອຸເປກຂາກໍມີ ນິໂຣທະສັດກ່າວບໍ່ໄດ້ວ່າ ປະກອບດ້ວຍປິຕິ ປະກອບດ້ວຍສຸກ ຫຼື ປະກອບດ້ວຍອຸເປກຂາ ທຸກຂະສັດທີ່ປະກອບດ້ວຍປິຕິກໍມີທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ກ່າວບໍ່ໄດ້ວ່າ ປະກອບດ້ວຍປິຕິ ປະກອບດ້ວຍສຸກ ຫຼືປະກອບດ້ວຍອຸເປກຂາກໍມີ

## ໘. ທັດສະນະຕິກະວິສັດຊະນາ

ສັດຈະ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ສະມຸທະຍະສັດທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທຸກຂະສັດທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

## ໙. ທັດສະນະເຫຕຸຕິກະວິສັດຊະນາ

ສັດຈະ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ສະມຸທະຍະສັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍ

ມີ ທຸກຂະສັດທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

## ໑໐. ອາຈະຍະຄາມິຕິກະວິສັດຊະນາ

ສະມຸທະຍະສັດເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິ ມັກຄະສັດເປັນເຫດໃຫ້ເຖິງນິບພານ ນິໂຣທະສັດ ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານ ທຸກຂະສັດທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

## ໑໑. ເສກຂະຕິກະວິສັດຊະນາ

ມັກຄະສັດເປັນຂອງເສຂະບຸກຄົນ ສັດຈະ ໓ ບໍ່ເປັນຂອງເສຂະບຸກຄົນ ແລະອະເສຂະບຸກຄົນ

## ໑໒. ປະຣິດຕະຕິກະວິສັດຊະນາ

ສະມຸທະຍະສັດເປັນປະຣິດຕະ ສັດຈະ ໒ ເປັນອັບປະມານະ ທຸກຂະສັດທີ່ເປັນປະຣິດຕະກໍມີ ທີ່ເປັນມະຫັກຄະຕະກໍມີ

## ໑໓. ປະຣິດຕາຣໍາມະນະຕິກະວິສັດຊະນາ

ນິໂຣທະສັດຮັບຮູ້ອາລົມບໍ່ໄດ້ ມັກຄະສັດມີອັບປະມານະເປັນອາລົມ ສະມຸທະຍະສັດທີ່ມີປະຣິດຕະເປັນອາລົມກໍມີ ທີ່ມີມະຫັກຄະຕະເປັນອາລົມແຕ່ບໍ່ມີອັບປະມານະເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ຫຼື ມີມະຫັກຄະຕະເປັນອາລົມກໍມີ ທຸກຂະສັດທີ່ມີປະຣິດຕະເປັນອາລົມກໍມີ ທີ່ມີມະຫັກຄະຕະເປັນອາລົມກໍມີ ທີ່ມີອັບປະມານະເປັນອາລົມກໍມີທີ່ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ມີມະຫັກຄະຕະເປັນອາລົມ ຫຼື ມີອັບປະມານະເປັນອາລົມກໍມີ

## ໑໔. ຫີນະຕິກະວິສັດຊະນາ

ສະມຸທະຍະສັດເປັນຊັ້ນຕໍ່າ ສັດຈະ ໒ ເປັນຊັ້ນປະນີດ ທຸກຂະສັດທີ່ເປັນຊັ້ນຕໍ່າກໍມີ ທີ່ເປັນຊັ້ນກາງກໍມີ

## ໑໕. ມິດສັດຕະຕິກະວິສັດຊະນາ

ນິໂຣທະສັດບໍ່ແນ່ນອນໂດຍອາການທັງສອງນັ້ນ ມັກຄະສັດມີສະພາວະຖືກແລະໃຫ້ຜົນແນ່ນອນ ສັດຈະ ໒ ທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນກໍມີ ທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນກໍມີ

## ໑໖. ນັກຄາຣຳມະນະຕິກະວິສັດຊະນາ

ນິໂຣທະສັດຮັບຮູ້ອາລົມບໍ່ໄດ້ ສະມຸທະຍະສັດກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີ ມັກຄະສັດບໍ່ແມ່ນມີມັກເປັນອາລົມ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີກໍມີ ທຸກຂະສັດທີ່ມີມັກເປັນອາລົມແຕ່ບໍ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ຫຼືມີມັກເປັນອະທິບໍດີກໍມີ

## ໑໗. ອຸປັນນະຕິກະວິສັດຊະນາ

ສັດຈະ ໔ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ແຕ່ກ່າວບໍ່ໄດ້ວ່າ ຈັກເກີດຂຶ້ນແນ່ນອນນິໂຣທະສັດກ່າວບໍ່ໄດ້ວ່າ ເກີດຂຶ້ນ ຍັງບໍ່ເກີດຂຶ້ນ ຫຼື ຈັກເກີດຂຶ້ນແນ່ນອນ ທຸກຂະສັດທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ

## ໑໘. ອະຕີຕະຕິກະວິສັດຊະນາ

ສັດຈະ ៤ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ ນິໂຣທະສັດກ່າວບໍ່ໄດ້ວ່າ ເປັນອະດີດ ເປັນອະນາຄົດ ຫຼື ເປັນປັດຈຸບັນ

## ໑໙. ອະຕີຕາຣຳມະນະຕິກະວິສັດຊະນາ

ນິໂຣທະສັດຮັບຮູ້ອາລົມບໍ່ໄດ້ ມັກຄະສັດກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມ ສັດຈະ ໔ ທີ່ມີອະດີດທຳເປັນອາລົມກໍມີ ທີ່ມີອະນາຄົດທຳເປັນອາລົມກໍມີ ທີ່ມີປັດຈຸບັນທຳເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມກໍມີ

## ໔໐. ອັດຊັດຕະຕິກະວິສັດຊະນາ

ນິໂຣທະສັດເປັນພາຍນອກຕົນ ສັດຈະ ៣ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນ ກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

## ໔໑. ອັດຊັດຕາຣຳມະນະຕິກະວິສັດຊະນາ

ນິໂຣທະສັດຮັບຮູ້ອາລົມບໍ່ໄດ້ ມັກຄະສັດມີທຳພາຍນອກຕົນເປັນອາລົມ ສະມຸທະຍະສັດທີ່ມີທຳພາຍໃນຕົນເປັນອາລົມກໍມີ ທີ່ມີທຳພາຍນອກຕົນເປັນອາລົມກໍມີ ທີ່ມີທຳພາຍໃນຕົນແລະ

ພາຍນອກຕົນເປັນອາລົມກໍມີ ທຸກຂະສັດທີ່ມີທຳພາຍໃນຕົນເປັນອາລົມກໍມີ ທີ່ມີທຳພາຍນອກຕົນເປັນອາລົມກໍມີ ທີ່ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີທຳພາຍໃນຕົນເປັນອາລົມ ມີທຳພາຍນອກຕົນເປັນອາລົມ ຫຼື ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ

### ໘໘. ສະນິທັດສະນະຕິກະວິສັດຊະນາ

ສັດຈະ ໓ ເຫັນບໍ່ໄດ້ແລະກະທົບບໍ່ໄດ້ ທຸກຂະສັດທີ່ເຫັນໄດ້ແລະກະທົບໄດ້ກໍມີ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ກໍມີ ທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ກໍມີ

## ໘. ທຸກະມາຕິກາວິສັດຊະນາ

### ໑. ເຫຕຸໂຄດສະກະວິສັດຊະນາ

[໘໑໗] ສະມຸທະຍະສັດເປັນເຫດ ນິໂຣທະສັດບໍ່ເປັນເຫດ ສັດຈະ ໘ ທີ່ເປັນເຫດກໍມີ ທີ່ບໍ່ເປັນເຫດກໍມີ

ສັດຈະ ໘ ມີເຫດ ນິໂຣທະສັດບໍ່ມີເຫດ ທຸກຂະສັດທີ່ມີເຫດກໍມີ ທີ່ບໍ່ມີເຫດກໍມີ

ສັດຈະ ໘ ສຳປະຍຸດດ້ວຍເຫດ ນິໂຣທະສັດວິບປະຍຸດຈາກເຫດ ທຸກຂະສັດທີ່ສຳປະຍຸດດ້ວຍເຫດກໍມີ ທີ່ວິບປະຍຸດຈາກເຫດກໍມີ

ສະມຸທະຍະສັດເປັນເຫດແລະມີເຫດ ນິໂຣທະສັດກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດຫຼືມີເຫດແຕ່ບໍ່ເປັນເຫດ ມັກຄະສັດທີ່ເປັນເຫດແລະມີເຫດກໍມີ ທີ່ມີເຫດແຕ່ບໍ່ເປັນເຫດກໍມີທຸກຂະສັດທີ່ເປັນເຫດແລະມີເຫດກໍມີ ທີ່ມີເຫດແຕ່ບໍ່ເປັນເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ຫຼື ມີເຫດແຕ່ບໍ່ເປັນເຫດກໍມີ

ສະມຸທະຍະສັດເປັນເຫດແລະສຳປະຍຸດດ້ວຍເຫດ ນິໂຣທະສັດກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ ຫຼື ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ມັກຄະສັດທີ່ເປັນເຫດແລະສຳປະຍຸດດ້ວຍເຫດກໍມີ ທີ່ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ ທຸກຂະສັດທີ່ເປັນເຫດແລະສຳປະຍຸດດ້ວຍເຫດກໍມີ ທີ່ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ ຫຼື ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ

ນິໂຣທະສັດບໍ່ເປັນເຫດແລະບໍ່ມີເຫດ ສະມຸທະຍະສັດກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດຫຼືບໍ່ເປັນເຫດແລະບໍ່ມີເຫດ ມັກຄະສັດທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດ ຫຼື ບໍ່ເປັນເຫດແລະບໍ່ມີເຫດກໍມີ ທຸກຂະສັດທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດ ຫຼື ບໍ່ເປັນເຫດແລະບໍ່ມີເຫດກໍມີ

## ໘. ຈູລັນຕະຣະທຸກະວິສັດຊະນາ

ສັດຈະ ๑ ມີປັດໃຈປຸງແຕ່ງ ນິໂຣທະສັດບໍ່ມີປັດໃຈປຸງແຕ່ງ
ສັດຈະ ๑ ຖືກປັດໃຈປຸງແຕ່ງ ນິໂຣທະສັດບໍ່ຖືກປັດໃຈປຸງແຕ່ງ
ສັດຈະ ๑ ເຫັນບໍ່ໄດ້ ທຸກຂະສັດທີ່ເຫັນໄດ້ກໍມີ ທີ່ເຫັນບໍ່ໄດ້ກໍມີ
ສັດຈະ ๑ ກະທົບບໍ່ໄດ້ ທຸກຂະສັດທີ່ກະທົບໄດ້ກໍມີ ທີ່ກະທົບບໍ່ໄດ້ກໍມີ
ສັດຈະ ๑ ບໍ່ເປັນຮູບ ທຸກຂະສັດທີ່ເປັນຮູບກໍມີ ທີ່ບໍ່ເປັນຮູບກໍມີ
ສັດຈະ ໒ ເປັນໂລກິຍະ ສັດຈະ ໒ ເປັນໂລກຸດຕະຣະ
ສັດຈະ ໔ ຈິດບາງດວງຮູ້ໄດ້ ສັດຈະ ໔ ຈິດບາງດວງຮູ້ບໍ່ໄດ້

## ๑. ອາສະວະໂຄດສະກະວິສັດຊະນາ

ສະມຸທະຍະສັດເປັນອາສະວະ ສັດຈະ ໒ ບໍ່ເປັນອາສະວະ ທຸກຂະສັດທີ່ເປັນອາສະວະກໍມີ ທີ່ບໍ່ເປັນອາສະວະກໍມີ

ສັດຈະ ໒ ເປັນອາລົມຂອງອາສະວະ ສັດຈະ ໒ ບໍ່ເປັນອາລົມຂອງອາສະວະ

ສະມຸທະຍະສັດສໍາປະຍຸດດ້ວຍອາສະວະ ສັດຈະ ໒ ວິບປະຍຸດຈາກອາສະວະ ທຸກຂະສັດທີ່ສໍາປະຍຸດດ້ວຍອາສະວະກໍມີ ທີ່ວິບປະຍຸດຈາກອາສະວະກໍມີ

ສະມຸທະຍະສັດເປັນອາສະວະແລະເປັນອາລົມຂອງອາສະວະ ສັດຈະ ໒ ກ່າວບໍ່ໄດ້ວ່າເປັນອາສະວະແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ ທຸກຂະສັດທີ່ເປັນອາສະວະ ແລະເປັນອາລົມຂອງອາສະວະກໍມີ ທີ່ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ

ສະມຸທະຍະສັດເປັນອາສະວະ ແລະສໍາປະຍຸດດ້ວຍອາສະວະ ສັດຈະ ໒ ກ່າວບໍ່ໄດ້ວ່າເປັນອາສະວະແລະສໍາປະຍຸດດ້ວຍອາສະວະ ຫຼື ສໍາປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ ທຸກຂະສັດ ທີ່ເປັນອາສະວະແລະສໍາປະຍຸດດ້ວຍອາສະວະກໍມີ ທີ່ສໍາປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາສະວະແລະສໍາປະຍຸດດ້ວຍອາສະວະ ຫຼື ສໍາປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ

ສັດຈະ ໒ ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະ ສະມຸທະຍະສັດກ່າວບໍ່ໄດ້ວ່າ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ ຫຼື ວິບປະຍຸດຈາກອາສະວະ ແລະ ບໍ່ເປັນອາລົມຂອງອາສະວະ ທຸກຂະສັດທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ ຫຼື ວິບປະຍຸດຈາກ ອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ

## ໔. ສັນໂຍຊະນະໂຄດສະກະວິສັດຊະນາ

ສະມຸທະຍະສັດເປັນສັງໂຍດ ສັດຈະ ໔ ບໍ່ເປັນສັງໂຍດ ທຸກຂະສັດທີ່ເປັນສັງໂຍດກໍມີ ທີ່ບໍ່ເປັນສັງໂຍດກໍມີ

ສັດຈະ ໔ ເປັນອາລົມຂອງສັງໂຍດ ສັດຈະ ໔ ບໍ່ເປັນອາລົມຂອງສັງໂຍດ

ສະມຸທະຍະສັດສຳປະຍຸດດ້ວຍສັງໂຍດ ສັດຈະ ໔ ວິບປະຍຸດຈາກສັງໂຍດ ທຸກຂະສັດທີ່ສຳປະຍຸດ ດ້ວຍສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດກໍມີ

ສະມຸທະຍະສັດເປັນສັງໂຍດແລະເປັນອາລົມຂອງສັງໂຍດ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນສັງໂຍດ ແລະເປັນອາລົມຂອງສັງໂຍດ ຫຼື ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດ ທຸກຂະສັດທີ່ເປັນສັງໂຍດແລະເປັນອາລົມຂອງສັງໂຍດກໍມີ ທີ່ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ

ສະມຸທະຍະສັດເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ ຫຼື ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດ ທຸກຂະສັດທີ່ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດກໍມີ ທີ່ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ ຫຼືສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ

ສັດຈະ ໔ ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດ ສະມຸທະຍະສັດກ່າວບໍ່ໄດ້ວ່າ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ຫຼື ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດ ທຸກຂະສັດທີ່ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ຫຼືວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ

## ໕. ຄັນຖະໂຄດສະກະວິສັດຊະນາ

ສະມຸທະຍະສັດເປັນຄັນຖະ ສັດຈະ ໔ ບໍ່ເປັນຄັນຖະ ທຸກຂະສັດທີ່ເປັນຄັນຖະກໍມີ ທີ່ບໍ່ເປັນຄັນຖະກໍມີ

ສັດຈະ ໔ ເປັນອາລົມຂອງຄັນຖະ ສັດຈະ ໔ ບໍ່ເປັນອາລົມຂອງຄັນຖະ

ສັດຈະ ໔ ວິບປະຍຸດຈາກຄັນຖະ ສັດຈະ ໔ ທີ່ສຳປະຍຸດດ້ວຍຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະກໍມີ

ສະມຸທະຍະສັດເປັນຄັນຖະແລະເປັນອາລົມຂອງຄັນຖະ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ ຫຼື ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ ທຸກຂະສັດທີ່ເປັນຄັນຖະແລະເປັນອາລົມຂອງຄັນຖະກໍມີ ທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ

ສະມຸທະຍະສັດເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ທີ່ກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ຫຼື ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ຫຼື ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ທຸກຂະສັດທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະກໍມີ ທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ຫຼື ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ

ສັດຈະ ໔ ວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະ ສັດຈະ ໔ ທີ່ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະ ຫຼື ວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະກໍມີ

## ໘-໗. ໂອຄະໂຄດສະກາທິວິສັດຊະນາ

ສະມຸທະຍະສັດເປັນໂອຄະ ໗ລ໗ ເປັນໂຍຄະ ໗ລ໗ ເປັນນິວອນ ສັດຈະ ໔ ບໍ່ເປັນນິວອນ ທຸກຂະສັດທີ່ເປັນນິວອນກໍມີ ທີ່ບໍ່ເປັນນິວອນກໍມີ

ສັດຈະ ໔ ເປັນອາລົມຂອງນິວອນ ສັດຈະ ໔ ບໍ່ເປັນອາລົມຂອງນິວອນ

ສະມຸທະຍະສັດສຳປະຍຸດດ້ວຍນິວອນ ສັດຈະ ໔ ວິບປະຍຸດຈາກນິວອນ ທຸກຂະສັດທີ່ສຳປະຍຸດ ດ້ວຍນິວອນກໍມີ ທີ່ວິບປະຍຸດຈາກນິວອນກໍມີ

ສະມຸທະຍະສັດເປັນນິວອນແລະເປັນອາລົມຂອງນິວອນ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ຫຼື ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນ ທຸກຂະສັດທີ່ເປັນນິວອນແລະເປັນອາລົມຂອງນິວອນກໍມີ ທີ່ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ

ສະມຸທະຍະສັດເປັນນິວອນແລະສຳປະຍຸດດ້ວຍນິວອນ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ຫຼື ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນ ທຸກຂະສັດທີ່ເປັນນິວອນແລະສຳປະຍຸດດ້ວຍນິວອນກໍມີ ທີ່ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ຫຼື ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ

ສັດຈະ ໔ ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນ ສະມຸທະຍະສັດກ່າວ ບໍ່ໄດ້ວ່າ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ ຫຼື ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນ ທຸກຂະສັດທີ່ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນກໍມີທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ ຫຼື ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນກໍມີ

## ໙. ປະຣາມາສະໂຄດສະກະວິສັດຊະນາ

ສັດຈະ ໓ ບໍ່ເປັນປະຣາມາດ ທຸກຂະສັດທີ່ເປັນປະຣາມາດກໍມີ ທີ່ບໍ່ເປັນປະຣາມາດກໍມີ

ສັດຈະ ໔ ເປັນອາລົມຂອງປະຣາມາດ[໑] ສັດຈະ ໔ ບໍ່ເປັນອາລົມຂອງປະຣາມາດ

ສັດຈະ ໔ ວິບປະຍຸດຈາກປະຣາມາດ ສະມຸທະຍະສັດທີ່ສຳປະຍຸດດ້ວຍປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດກໍມີ ທຸກຂະສັດທີ່ສຳປະຍຸດດ້ວຍປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍປະຣາມາດ ຫຼື ວິບປະຍຸດຈາກປະຣາມາດກໍມີ

ສະມຸທະຍະສັດກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ຫຼືເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ຫຼື ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ ທຸກຂະສັດທີ່ເປັນປະຣາມາດແລະເປັນອາລົມຂອງປະຣາມາດກໍມີ ທີ່ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ

ສັດຈະ ໔ ວິບປະຍຸດຈາກປະຣາມາດແລະ**ບໍ່**ເປັນອາລົມຂອງປະຣາມາດ ສັດຈະ ໔ ທີ່ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດ ຫຼື ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດກໍມີ

## ໑໐. ມະຫັນຕະຣະທຸກະວິສັດຊະນາ

ສັດຈະ ໔ ຮັບຮູ້ອາລົມໄດ້ ນິໂຣທະສັດຮັບຮູ້ອາລົມບໍ່ໄດ້ ທຸກຂະສັດທີ່ຮັບຮູ້ອາລົມໄດ້ກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ

ສັດຈະ ໓ ບໍ່ເປັນຈິດ ທຸກຂະສັດທີ່ເປັນຈິດກໍມີ ທີ່ບໍ່ເປັນຈິດກໍມີ

ສັດຈະ ໔ ເປັນເຈຕະສິກ ນິໂຣທະສັດບໍ່ເປັນເຈຕະສິກ ທຸກຂະສັດທີ່ເປັນເຈຕະສິກກໍມີ ທີ່ບໍ່ເປັນເຈຕະສິກກໍມີ

ສັດຈະ ໔ ສຳປະຍຸດດ້ວຍຈິດ ນິໂຣທະສັດວິບປະຍຸດຈາກຈິດ ທຸກຂະສັດທີ່ສຳປະຍຸດດ້ວຍຈິດກໍມີ ທີ່ວິບປະຍຸດຈາກຈິດກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍຈິດ ຫຼື ວິບປະຍຸດຈາກຈິດກໍມີ

ສັດຈະ ໔ ປະປົນກັບຈິດ ນິໂຣທະສັດບໍ່ປະປົນກັບຈິດ ທຸກຂະສັດທີ່ປະປົນກັບຈິດກໍມີທີ່ບໍ່ປະປົນກັບຈິດກໍມີ ທີ່ກ່າວບໍ່ໄດ້ວ່າ ປະປົນກັບຈິດ ຫຼື ບໍ່ປະປົນກັບຈິດກໍມີ

ສັດຈະ ໔ ມີຈິດເປັນສະມຸດຖານ ນິໂຣທະສັດບໍ່ມີຈິດເປັນສະມຸດຖານ ທຸກຂະສັດທີ່ມີຈິດເປັນສະມຸດຖານກໍມີ ທີ່ບໍ່ມີຈິດເປັນສະມຸດຖານກໍມີ

ສັດຈະ ໔ ເກີດພ້ອມກັບຈິດ ນິໂຣທະສັດບໍ່ເກີດພ້ອມກັບຈິດ ທຸກຂະສັດທີ່ເກີດ ພ້ອມກັບຈິດກໍມີ ທີ່ບໍ່ເກີດພ້ອມກັບຈິດກໍມີ

ສັດຈະ ໔ ເປັນໄປຕາມຈິດ ນິໂຣທະສັດບໍ່ເປັນໄປຕາມຈິດ ທຸກຂະສັດທີ່ເປັນໄປຕາມຈິດກໍມີ ທີ່ບໍ່ເປັນໄປຕາມຈິດກໍມີ

ສັດຈະ ໔ ປະປົນກັບຈິດແລະມີຈິດເປັນສະມຸດຖານ ນິໂຣທະສັດບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານ ທຸກຂະສັດທີ່ປະປົນກັບຈິດແລະມີຈິດເປັນສະມຸດຖານກໍມີ ທີ່ບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານກໍມີ

ສັດຈະ ໔ ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ ນິໂຣທະສັດບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ ທຸກຂະສັດທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດກໍມີ ທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດກໍມີ

ສັດຈະ ໔ ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ນິໂຣທະສັດບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ທຸກຂະສັດທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດກໍມີ ທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເປັນໄປຕາມຈິດກໍມີ

ສັດຈະ ໓ ເປັນພາຍນອກ ທຸກຂະສັດທີ່ເປັນພາຍໃນກໍມີ ທີ່ເປັນພາຍນອກກໍມີ

ສັດຈະ ໓ ບໍ່ເປັນອຸປາທາຍະຣູບ ທຸກຂະສັດທີ່ເປັນອຸປາທາຍະຣູບກໍມີ ທີ່ບໍ່ເປັນອຸປາທາຍະຣູບກໍມີ

ສັດຈະ ໓ ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ທຸກຂະສັດທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຢຶດຖືກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືກໍມີ

## ໑໑. ອຸປາທານໂຄດສະກະວິສັດຊະນາ

ສະມຸທະຍະສັດເປັນອຸປາທານ ສັດຈະ ໔ ບໍ່ເປັນອຸປາທານ ທຸກຂະສັດທີ່ເປັນອຸປາທານກໍມີ ທີ່ບໍ່ເປັນອຸປາທານກໍມີ

ສັດຈະ ໔ ເປັນອາລົມຂອງອຸປາທານ ສັດຈະ ໔ ບໍ່ເປັນອາລົມຂອງອຸປາທານ

ສັດຈະ ໔ ວິບປະຍຸດຈາກອຸປາທານ ສັດຈະ ໔ ທີ່ສໍາປະຍຸດດ້ວຍອຸປາທານກໍມີທີ່ວິບປະຍຸດຈາກອຸປາທານກໍມີ

ສະມຸທະຍະສັດເປັນອຸປາທານແລະເປັນອາລົມຂອງອຸປາທານ ສັດຈະ ໔ ກ່າວບໍ່ໄດ້ວ່າເປັນອຸປາທານແລະເປັນອາລົມຂອງອຸປາທານ ຫຼື ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານ ທຸກຂະສັດທີ່ເປັນອຸປາທານແລະເປັນອາລົມຂອງອຸປາທານກໍມີ ທີ່ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ

ສະມຸທະຍະສັດທີ່ເປັນອຸປາທານແລະສໍາປະຍຸດດ້ວຍອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອຸປາທານແລະສໍາປະຍຸດດ້ວຍອຸປາທານ ຫຼື ສໍາປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະສໍາປະຍຸດດ້ວຍອຸປາທານ ຫຼື ສໍາປະຍຸດດ້ວຍອຸປາ

ທານແຕ່ບໍ່ເປັນອຸປາທານ ທຸກຂະສັດທີ່ເປັນອຸປາທານແລະສຳປະຍຸດດ້ວຍອຸປາທານກໍມີ ທີ່ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອຸປາທານແລະ ສຳປະຍຸດດ້ວຍອຸປາທານ ຫຼື ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ

ສັດຈະ ໔ ວິບປະຍຸດຈາກອຸປາທານແລະບໍ່ເປັນອາລົມຂອງອຸປາທານ ສັດຈະ ໔ ທີ່ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານ ຫຼື ວິບປະຍຸດຈາກອຸປາທານແລະບໍ່ເປັນອາລົມຂອງອຸປາທານກໍມີ

## ໑໘. ກິເລດໂຄດສະກະວິສັດຊະນາ

ສະມຸທະຍະສັດເປັນກິເລດ ສັດຈະ ໔ ບໍ່ເປັນກິເລດ ທຸກຂະສັດທີ່ເປັນກິເລດກໍມີ ທີ່ບໍ່ເປັນກິເລດກໍມີ

ສັດຈະ ໔ ເປັນອາລົມຂອງກິເລດ ສັດຈະ ໔ ບໍ່ເປັນອາລົມຂອງກິເລດ

ສະມຸທະຍະສັດກິເລດເຮັດໃຫ້ເສົ້າໝອງ ສັດຈະ ໔ ກິເລດບໍ່ເຮັດໃຫ້ເສົ້າໝອງທຸກຂະ ສັດທີ່ກິເລດເຮັດໃຫ້ເສົ້າໝອງກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງກໍມີ

ສະມຸທະຍະສັດສຳປະຍຸດດ້ວຍກິເລດ ສັດຈະ ໔ ວິບປະຍຸດຈາກກິເລດ ທຸກຂະສັດທີ່ສຳປະຍຸດດ້ວຍກິເລດກໍມີ ທີ່ວິບປະຍຸດຈາກກິເລດກໍມີ

ສະມຸທະຍະສັດເປັນກິເລດແລະເປັນອາລົມຂອງກິເລດ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດ ຫຼື ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດ ທຸກຂະສັດທີ່ເປັນກິເລດແລະເປັນອາລົມຂອງກິເລດກໍມີ ທີ່ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ

ສະມຸທະຍະສັດເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ສັດຈະ ໔ ກ່າວບໍ່ໄດ້ວ່າເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ຫຼື ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດທຸກຂະສັດທີ່ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງກໍມີ ທີ່ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ຫຼື ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ

ສະມຸທະຍະສັດເປັນກິເລດແລະສຳປະຍຸດດ້ວຍກິເລດ ສັດຈະ ໔ ກ່າວບໍ່ໄດ້ວ່າ ເປັນກິເລດແລະສຳປະຍຸດດ້ວຍກິເລດ ຫຼື ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ ທຸກຂະສັດທີ່ເປັນກິເລດແລະສຳປະຍຸດດ້ວຍກິເລດກໍມີ ທີ່ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ ໄດ້ວ່າ ເປັນກິເລດແລະສຳປະຍຸດດ້ວຍກິເລດ ຫຼື ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ

ສັດຈະ ໔ ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດ ສະມຸທະຍະສັດກ່າວບໍ່ໄດ້ວ່າ ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ ຫຼື ວິບປະຍຸດຈາກກິເລດແລະບໍ່ເປັນອາລົມ

ຂອງກິເລດ ທຸກຂະສັດທີ່ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ ຫຼື ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດກໍມີ

## ໑໓. ປົດຖິທຸກະວິສັດຊະນາ

ສັດຈະ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ສັດຈະ ໔ ທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ

ສັດຈະ ໔ ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ສັດຈະ ໔ ທີ່ຕ້ອງປະຫານ ດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

ສັດຈະ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ສັດຈະ ໔ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ

ສັດຈະ ໔ ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ສັດຈະ ໔ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

ສະມຸທະຍະສັດມີວິຕົກ ນິໂຣທະສັດບໍ່ມີວິຕົກ ສັດຈະ ໔ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ

ສະມຸທະຍະສັດມີວິຈານ ນິໂຣທະສັດບໍ່ມີວິຈານ ສັດຈະ ໔ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານ ກໍມີ

ນິໂຣທະສັດບໍ່ມີປິຕິ ສັດຈະ ໓ ທີ່ມີປິຕິກໍມີ ທີ່ບໍ່ມີປິຕິກໍມີ

ນິໂຣທະສັດບໍ່ປະກອບດ້ວຍປິຕິ ສັດຈະ ໓ ທີ່ປະກອບດ້ວຍປິຕິກໍມີ ທີ່ບໍ່ປະກອບດ້ວຍປິຕິກໍມີ

ນິໂຣທະສັດບໍ່ປະກອບດ້ວຍສຸກ ສັດຈະ ໓ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ

ນິໂຣທະສັດບໍ່ປະກອບດ້ວຍອຸເປກຂາ ສັດຈະ ໓ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ສະມຸທະຍະສັດເປັນກາມາວະຈອນ ສັດຈະ ໔ ບໍ່ເປັນກາມາວະຈອນ ທຸກຂະສັດທີ່ເປັນກາມາວະຈອນກໍມີ ທີ່ບໍ່ເປັນກາມາວະຈອນກໍມີ

ສັດຈະ ໓ ບໍ່ເປັນອະຣູບປາວະຈອນ ທຸກຂະສັດທີ່ເປັນອະຣູບປາວະຈອນກໍມີ ທີ່ບໍ່ເປັນອະຣູບປາວະຈອນກໍມີ

ສັດຈະ ໓ ບໍ່ເປັນອະຣູບປາວະຈອນ ທຸກຂະສັດທີ່ເປັນອະຣູບປາວະຈອນກໍມີ ທີ່ບໍ່ເປັນອະຣູບປາວະຈອນກໍມີ

ສັດຈະ ໔ ນັບເນື່ອງໃນວັດຕະທຸກ ສັດຈະ ໔ ບໍ່ນັບເນື່ອງໃນວັດຕະທຸກ

ມັກຄະສັດເປັນເຫດນຳອອກຈາກວັດຕະທຸກ ສັດຈະ ໓ ບໍ່ເປັນເຫດນຳອອກຈາກວັດຕະທຸກ

ມັກຄະສັດໃຫ້ຜົນແນ່ນອນ ນິໂຣທະສັດບໍ່ແນ່ນອນໂດຍອາການທັງສອງນັ້ນ ສັດຈະ ໔ ທີ່ໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ສັດຈະ ໔ ມີທຳອື່ນຍິ່ງກວ່າ ສັດຈະ ໔ ບໍ່ມີທຳອື່ນຍິ່ງກວ່າ

ສະມຸທະຍະສັດເປັນເຫດໃຫ້ສັດຮ້ອງໄຫ້ ສັດຈະ ໔ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ທຸກຂະສັດທີ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ ທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ

**ປັນຫາປຸດສະກະ ຈົບ**

**ສັດຈະວິພັງ ຈົບບໍລິບູນ**

# ໕. ອິນທະຣິຍະວິພັງ

## ໑. ອະພິທຳມະພາຊະນີ

[໒໑໙] ອິນຊີ ໒໒ ຄື

| | |
|---|---|
| ໑. ຈັກຂຸນຊີ | ໒. ໂສຕິນຊີ |
| ໓. ຄານິນຊີ | ໔. ຊິວຫິນຊີ |
| ໕. ກາຍິນຊີ | ໖. ມະນິນຊີ |
| ໗. ອິດຖິນຊີ | ໘. ປຸຣິສິນຊີ |
| ໙. ຊີວິຕິນຊີ | ໑໐. ສຸຂິນຊີ |
| ໑໑. ທຸກຂິນຊີ | ໑໒. ໂສມະນັດສິນຊີ |
| ໑໓. ໂທມະນັດສິນຊີ | ໑໔. ອຸເປກຂິນຊີ |
| ໑໕. ສັດທິນຊີ | ໑໖. ວິຣິຍິນຊີ |
| ໑໗. ສະຕິນຊີ | ໑໘. ສະມາທິນຊີ |
| ໑໙. ປັນຍິນຊີ | ໒໐. ອະນັນຍາຕັນຍັດສາມີຕິນຊີ |
| ໒໑. ອັນຍິນຊີ | ໒໒. ອັນຍາຕາວິນຊີ |

[໒໒໐] ບັນດາອິນຊີ ໒໒ ນັ້ນ ຈັກຂຸນຊີ ເປັນແນວໃດ?

ຈັກຂຸໃດເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ຯລຯ ນີ້ຊື່ວ່າ ເຮືອນວ່າງແດ່ ນີ້ຮຽກວ່າ ຈັກຂຸນຊີ (໑)

ໂສຕິນຊີ ຯລຯ ຄານິນຊີ ຯລຯ ຊິວຫິນຊີ ຯລຯ ກາຍິນຊີ ເປັນແນວໃດ?

ກາຍໃດເປັນປະສາທະຮູບອາໄສມະຫາພູຕະຮູບ ໔ ຯລຯ ນີ້ຊື່ວ່າເຮືອນ ວ່າງແດ່ ນີ້ຮຽກວ່າ ກາຍິນຊີ໌ (໕)

ມະນິນຊີ ເປັນແນວໃດ?

ມະນິນຊີໝວດລະ ໑ ໄດ້ແກ່ ມະນິນຊີທີ່ສຳປະຍຸດດ້ວຍຜັດສະ

ມະນິນຊີໝວດລະ ໒ ໄດ້ແກ່ ມະນິນຊີທີ່ມີເຫດກຳມີ ທີ່ບໍ່ມີເຫດກຳມີ

ມະນິນຊີໝວດລະ ໓ ໄດ້ແກ່ ມະນິນຊີທີ່ເປັນກຸສົນກຳມີ ທີ່ເປັນອະກຸສົນກຳມີ ທີ່ເປັນອັບພະຍາກະຕະກຳມີ

ມະນິນຊີໝວດລະ ໔ ໄດ້ແກ່ ມະນິນຊີທີ່ເປັນກາມາວະຈອນກຳມີ ທີ່ເປັນຮູບປາວະຈອນກຳມີ ທີ່ເປັນອະຮູບປາວະຈອນກຳມີ ທີ່ບໍ່ນັບເນື່ອງໃນວັດຕະທຸກກຳມີ

ມະນິນຊີໝວດລະ ໕ ໄດ້ແກ່ ມະນິນຊີທີ່ສຳປະຍຸດດ້ວຍສຸຂິນຊີກຳມີ ທີ່ສຳປະຍຸດດ້ວຍທຸກຂິນຊີກຳມີ ທີ່ສຳປະຍຸດດ້ວຍໂສມະນັດສິນຊີກຳມີ ທີ່ສຳປະຍຸດດ້ວຍໂທມະນັດສິນຊີກຳມີ ທີ່ສຳປະຍຸດດ້ວຍອຸເປກຂິນຊີກຳມີ

ມະນິນຊີໝວດລະ ໖ ໄດ້ແກ່ ຈັກຂຸວິນຍານ ຯລຯ ມະໂນວິນຍານ

ມະນິນຊີໝວດລະ ໖ ມີດ້ວຍອາການແນວນີ້

ມະນິນຊີໝວດລະ ໗ ໄດ້ແກ່ ຈັກຂຸວິນຍານ ຯລຯ ກາຍະວິນຍານ ມະໂນທາດ ແລະມະໂນວິນຍານທາດ

ມະນິນຊີໝວດລະ ໗ ມີດ້ວຍອາການແນວນີ້

ມະນິນຊີໝວດລະ ໘ ໄດ້ແກ່ ຈັກຂຸວິນຍານ ຯລຯ ກາຍະວິນຍານທີ່ປະກອບດ້ວຍສຸກກຳມີ ທີ່ປະກອບດ້ວຍທຸກກຳມີ ມະໂນທາດ ແລະມະໂນວິນຍານທາດ

ມະນິນຊີໝວດລະ ໘ ມີດ້ວຍອາການແນວນີ້

ມະນິນຊີໝວດລະ ໙ ໄດ້ແກ່ ຈັກຂຸວິນຍານ ຯລຯ ກາຍະວິນຍານ ມະໂນທາດ ແລະມະໂນວິນຍານທາດທີ່ເປັນກຸສົນກຳມີ ທີ່ເປັນອະກຸສົນກຳມີ ທີ່ເປັນອັບພະຍາກະຕະກຳມີ

ມະນິນຊີໝວດລະ ໙ ມີດ້ວຍອາການແນວນີ້

ມະນິນຊີໝວດລະ ໑໐ ໄດ້ແກ່ ຈັກຂຸວິນຍານ ຯລຯ ກາຍະວິນຍານທີ່ປະກອບ ດ້ວຍສຸກກຳມີ ທີ່ປະກອບດ້ວຍທຸກກຳມີ ມະໂນທາດ ແລະມະໂນວິນຍານທາດທີ່ເປັນກຸສົນກຳມີ ທີ່ເປັນອະກຸສົນກຳມີ ທີ່ເປັນອັບພະຍາກະຕະກຳມີ

ມະນິນຊີໝວດລະ ໑໐ ມີດ້ວຍອາການແນວນີ້

ຯລຯ

ມະນິນຊີໝວດລະຫຼາຍຢ່າງມີດ້ວຍອາການແນວນີ້

ນີ້ຮຽກວ່າ ມະນິນຊີ (໖)

ອິດຖິນຊີ ເປັນແນວໃດ?

ຊວດຊົງທີ່ເປັນຍິງ ເຄື່ອງໝາຍປະຈຳເພດແມ່ຍິງ ກິຣິຍາທີ່ເປັນແມ່ຍິງ ອາການຂອງແມ່ຍິງ ສະພາບທີ່ເປັນຍິງ ພາວະທີ່ເປັນຍິງຂອງສະຕີ ນີ້ຮຽກວ່າ ອິດຖິນຊີ (໗)

ປຸຣິສິນຊີ ເປັນແນວໃດ?

ຊວດຊົງທີ່ເປັນຊາຍ ເຄື່ອງໝາຍປະຈຳເພດຊາຍ ກິຣິຍາຊາຍ ອາການຊາຍ ສະພາບ ທີ່ເປັນຊາຍ ພາວະຊາຍຂອງບຸຣຸດ ນີ້ຮຽກວ່າ ປຸຣິສິນຊີ໌ (໗)

ຊີວິຕິນຊີ ເປັນແນວໃດ?

ຊີວິຕິນຊີໝວດລະ ໘ ໄດ້ແກ່ ຊີວິຕິນຊີທີ່ເປັນຮູບກໍມີ ຊີວິຕິນຊີທີ່ບໍ່ເປັນຮູບກໍມີໃນຊີວິຕິນຊີທັງ ໘ ນັ້ນ ຊີວິຕິນຊີທີ່ເປັນຮູບ ເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີແຫ່ງສະພາວະທຳທີ່ເປັນຮູບເຫຼົ່ານັ້ນ ນີ້ຮຽກວ່າ ຊີວິຕິນຊີທີ່ເປັນຮູບ

ຊີວິຕິນຊີທີ່ບໍ່ເປັນຮູບ ເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີແຫ່ງສະພາວະທຳທີ່ບໍ່ເປັນຮູບເຫຼົ່ານັ້ນ ນີ້ຮຽກວ່າ ຊີວິຕິນຊີທີ່ບໍ່ເປັນຮູບ

ນີ້ຮຽກວ່າ ຊີວິຕິນຊີ (໙)

ສຸຂິນຊີ ເປັນແນວໃດ?

ຄວາມສຳຣານທາງກາຍ ຄວາມສຸກທາງກາຍ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກກາຍສຳຜັດນີ້ຮຽກວ່າ ສຸຂິນຊີ (໑໐)

ທຸກຂິນຊີ ເປັນແນວໃດ?

ຄວາມບໍ່ສະບາຍທາງກາຍ ຄວາມທຸກທາງກາຍ ຄວາມສະເຫວີຍອາລົມທີ່ບໍ່ສະບາຍ ເປັນທຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ນີ້ຮຽກວ່າ ທຸກຂິນຊີ (໑໑)

ໂສມະນັດສິນຊີ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດນີ້ຮຽກວ່າ ໂສມະນັດສິນຊີ (໑໘)

ໂທມະນັດສິນຊີ ເປັນແນວໃດ?

ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ໂທມະນັດສິນຊີ (໑໓)

ອຸເປກຂິນຊີ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ອຸເປກຂິນຊີ (໑໔)

ສັດທິນຊີ ເປັນແນວໃດ?

ສັດທາ ຄວາມເຊື່ອ ຄວາມປົງໃຈເຊື່ອ ຄວາມເຫຼື້ອມໃສຍິ່ງ ສັດທາ ສັດທິນຊີ ສັດທາພະລະ ນີ້ຮຽກວ່າ ສັດທິນຊີ (໑໕)

ວິຣິຍິນຊີ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນແຂງຂັນ ຄວາມບາກບັ່ນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈໃສ່ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສຳມາວາຍາມະ ນີ້ຮຽກວ່າ ວິຣິຍິນຊີ (໑໖)

ສະຕິນຊີ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຄວາມຫວນຣະລຶກ ສະຕິ ກິຣິຍາທີ່ຣະລຶກ ຄວາມຊົງຈຳ ຄວາມບໍ່ເລື້ອນລອຍ ຄວາມບໍ່ຫຼົງລືມ ສະຕິ ສະຕິນຊີ ສະຕິພະລະ ສຳມາສະຕິ ນີ້ຮຽກວ່າ ສະຕິນຊີ (໑໗)

ສະມາທິນຊີ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງໝັ້ນ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະສຳມາສະມາທິ ນີ້ຮຽກວ່າ ສະມາທິນຊີ (໑໘)

ປັນຍິນຊີ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິ ນີ້ຮຽກວ່າ ປັນຍິນຊີ (໑໙)

ອະນັນຍາຕັນຍັດສາມີຕິນຊີ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງອັນເປັນອົງມັກ ນັບເນື່ອງໃນມັກ ເພື່ອຮູ້ທຳທີ່ຍັງບໍ່ ເຄີຍຮູ້ເພື່ອເຫັນທຳທີ່ຍັງບໍ່ເຄີຍເຫັນ ເພື່ອບັນລຸທຳທີ່ຍັງບໍ່ເຄີຍບັນລຸ ເພື່ອຮູ້ທຳທີ່ຍັງບໍ່ເຄີຍຮູ້ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ເຄີຍເຮັດໃຫ້ແຈ້ງນັ້ນ ໆ ນີ້ຮຽກວ່າ ອະນັນຍາຕັນຍັດສາມີຕິນຊີ (໒໐)

ອັນຍິນຊີ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງອັນເປັນອົງມັກ ນັບເນື່ອງໃນມັກ ເພື່ອຮູ້ທຳທີ່ຮູ້ແລ້ວ ເພື່ອເຫັນທຳທີ່ເຫັນແລ້ວ ເພື່ອບັນລຸທຳທີ່ບັນລຸແລ້ວ ເພື່ອຮູ້ທຳທີ່ຮູ້ແລ້ວ ເພື່ອເຮັດໃຫ້ແຈ້ງທຳທີ່ເຮັດໃຫ້ແຈ້ງແລ້ວນັ້ນ ໆ ນີ້ຮຽກວ່າ ອັນຍິນຊີ (໒໑)

ອັນຍາຕາວິນຊີ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ເພື່ອຮູ້ທຳທີ່ຮູ້ທົ່ວແລ້ວ ເພື່ອເຫັນທຳທີ່ເຫັນແລ້ວ ເພື່ອບັນລຸທຳທີ່ບັນລຸແລ້ວ ເພື່ອຮູ້ທຳທີ່ຮູ້ແລ້ວ ເພື່ອເຮັດໃຫ້ແຈ້ງທຳທີ່ເຮັດໃຫ້ແຈ້ງແລ້ວນັ້ນ ໆ ນີ້ຮຽກວ່າ ອັນຍາຕາວິນຊີ (໒໒)

**ອະພິທຳມະພາຊະນີ ຈົບ**

## ໒. ປັນຫາປຸດສະກະ

[໒໒໑] ອິນຊີ ໒໒ ຄື

| | |
|---|---|
| ໑. ຈັກຂຸນຊີ | ໒. ໂສຕິນຊີ |
| ໓. ຄານິນຊີ | ໔. ຊິວຫິນຊີ |
| ໕. ກາຍິນຊີ | ໖. ມະນິນຊີ |
| ໗. ອິດຖິນຊີ | ໘. ປຸຣິສິນຊີ |
| ໙. ຊີວິຕິນຊີ | ໑໐. ສຸຂິນຊີ |
| ໑໑. ທຸກຂິນຊີ | ໑໒. ໂສມະນັດສິນຊີ |
| ໑໓. ໂທມະນັດສິນຊີ | ໑໔. ອຸເປກຂິນຊີ |
| ໑໕. ສັດທິນຊີ | ໑໖. ວິຣິຍິນຊີ |
| ໑໗. ສະຕິນຊີ | ໑໘. ສະມາທິນຊີ |
| ໑໙. ປັນຍິນຊີ | ໒໐. ອະນັນຍາຕັນຍັດສາມີຕິນຊີ |
| ໒໑. ອັນຍິນຊີ | ໒໒. ອັນຍາຕາວິນຊີ |

## ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[໔໔໔] ບັນດາອິນຊີ ໒໒ ອິນຊີເທົ່າໃດ? ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດ ເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

# ໑. ຕິກະມາຕິກາວິສັດຊະນາ

## ໑. ກຸສະລະຕິກະວິສັດຊະນາ

[໔໔໕] ອິນຊີ ໑໐ ເປັນອັບພະຍາກະຕະ ໂທມະນັດສິນຊີເປັນອະກຸສົນ ອະນັນຍາຕັນຍັດສາມີຕິນຊີເປັນກຸສົນ ອິນຊີ ໔ ທີ່ເປັນກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ ອິນຊີ ໖ ທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

## ໒. ເວທະນາຕິກະວິສັດຊະນາ

ອິນຊີ ໑໒ ກ່າວບໍ່ໄດ້ວ່າ ສໍາປະຍຸດດ້ວຍສຸກຂະເວທະນາ ສໍາປະຍຸດດ້ວຍທຸກຂະເວທະນາຫຼືສໍາປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ອິນຊີ ໖ ທີ່ສໍາປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສໍາປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ອິນຊີ ໓ ທີ່ສໍາປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສໍາປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສໍາປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ຊີວິຕິນຊີທີ່ສໍາປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສໍາປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສໍາປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທີ່ກ່າວບໍ່ໄດ້ວ່າ ສໍາປະຍຸດດ້ວຍສຸກຂະເວທະນາ ສໍາປະຍຸດດ້ວຍທຸກຂະເວທະນາ ຫຼື ສໍາປະຍຸດດ້ວຍອະທຸກຂະມະສຸກຂະເວທະນາກໍມີ

## ໓. ວິປາກະຕິກະວິສັດຊະນາ

ອິນຊີ ໗ ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ອິນຊີ ໓ ເປັນວິບາກ ອິນຊີ ໒ ເປັນເຫດໃຫ້ເກີດວິບາກ ອັນຍິນຊີທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ອິນຊີ ໙ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

## ໔. ອຸປາທິນນະຕິກະວິສັດຊະນາ

ອິນຊີ ໙ ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານ ໂທມະນັດສິນຊີອາຣົມອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ອິນຊີ ໓ ກໍາອັນປະກອບດ້ວຍຕັນຫາອັນທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານ ອິນຊີ ໙ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບ

ດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ ຍຶດຖື ແລະບໍ່ເປັນອາລົມຂອງອຸປາທານກໍມີ

## ໕. ສັງກິລິດຖະຕິກະວິສັດຊະນາ

ອິນຊີ ໙ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ ໂທມະນັດສິນຊີ ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດ ອິນຊີ ໓ ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດ ອິນຊີ ໓ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດກໍມີ ອິນຊີ ໖ ທີ່ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດກໍມີ

## ໖. ສະວິຕັກກະຕິກະວິສັດຊະນາ

ອິນຊີ ໙ ບໍ່ມີທັງວິຕົກແລະວິຈານ ໂທມະນັດສິນຊີມີທັງວິຕົກແລະວິຈານ ອຸເປກຂິນຊີທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ອິນຊີ ໑໑ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

## ໗. ປີຕິຕິກະວິສັດຊະນາ

ອິນຊີ ໑໑ ກ່າວບໍ່ໄດ້ວ່າ ປະກອບດ້ວຍປີຕິ ປະກອບດ້ວຍສຸກ ຫຼືປະກອບດ້ວຍ ອຸເປກຂາ ໂສມະນັດສິນຊີ ທີ່ປະກອບດ້ວຍປີຕິແຕ່ບໍ່ປະກອບດ້ວຍສຸກແລະບໍ່ປະກອບດ້ວຍ ອຸເປກຂາກໍມີ ທີ່ກ່າວບໍ່ໄດ້ວ່າ ປະກອບດ້ວຍປີຕິກໍມີ ອິນຊີ ໖ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍອຸເປກຂາກໍມີ ອິນຊີ ໔ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ກ່າວບໍ່ໄດ້ວ່າ ປະກອບດ້ວຍປີຕິ ປະກອບດ້ວຍສຸກ ຫຼື ປະກອບດ້ວຍອຸເປກຂາກໍມີ

## ໘. ທັດສະນະຕິກະວິສັດຊະນາ

ອິນຊີ ໑໕ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂທມະນັດສິນຊີທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ອິນຊີ ໖ ທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

## ໙. ທັດສະນະເຫຕຸຕິກະວິສັດຊະນາ

ອິນຊີ ໑໕ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ໂທມະນັດສິນຊີທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ອິນຊີ ໖ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ກໍມີ

## ໑໐. ອາຈະຍະຄາມິຕິກະວິສັດຊະນາ

ອິນຊີ ໑໐ ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານ ໂທມະນັດສິນຊີເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິ ອະນັນຍາຕັນຍັດສາມີຕິນຊີເປັນເຫດໃຫ້ເຖິງນິບພານ ອັນຍິນຊີທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ ອິນຊີ ໙ ທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິກໍມີ ທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

## ໑໑. ເສກຂະຕິກະວິສັດຊະນາ

ອິນຊີ ໑໐ ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ ອິນຊີ ໔ ເປັນຂອງເສຂະບຸກຄົນ ອັນຍາຕາວິນຊີເປັນຂອງອະເສຂະບຸກຄົນ ອິນຊີ ໙ ທີ່ເປັນຂອງເສຂະບຸກຄົນກໍມີ ທີ່ເປັນຂອງອະເສຂະບຸກຄົນກໍມີ ທີ່ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນກໍມີ

## ໑໔. ປະຣິດຕະຕິກະວິສັດຊະນາ

ອິນຊີ ໑໐ ເປັນປະຣິດຕະ ອິນຊີ ໓ ເປັນອັບປະມານະ ອິນຊີ ໙ ທີ່ເປັນປະຣິດຕະກໍມີ ທີ່ເປັນມະຫັກຄະຕະກໍມີ ທີ່ເປັນອັບປະມານະກໍມີ

## ໑໓. ປະຣິດຕາຣໍາມະນະຕິກະວິສັດຊະນາ

ອິນຊີ ໗ ຮັບຮູ້ອາລົມບໍ່ໄດ້ ອິນຊີ ໔ ມີປະຣິດຕະເປັນອາລົມ ອິນຊີ ໓ ມີອັບປະມານະເປັນອາລົມ ໂທມະນັດສິນຊີທີ່ມີປະຣິດຕະເປັນອາລົມກໍມີ ທີ່ມີມະຫັກຄະຕະເປັນອາລົມແຕ່ບໍ່ມີອັບປະມານະເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ຫຼືມີມະຫັກຄະຕະເປັນອາລົມກໍມີ ອິນຊີ ໙ ທີ່ມີປະຣິດຕະເປັນອາລົມກໍມີ ທີ່ມີມະຫັກຄະຕະເປັນອາລົມກໍມີ ທີ່ມີອັບປະມານະເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ມີມະຫັກຄະຕະເປັນອາລົມ ຫຼື ມີອັບປະມານະເປັນອາລົມກໍມີ

## ໑໔. ຫີນະຕິກະວິສັດຊະນາ

ອິນຊີ ໙ ເປັນຊັ້ນກາງ ໂທມະນັດສິນຊີເປັນຊັ້ນຕ່ຳ ອິນຊີ ໓ ເປັນຊັ້ນປະນີດ ອິນຊີ ໓ ທີ່ເປັນຊັ້ນກາງກໍມີ ທີ່ເປັນຊັ້ນປະນີດກໍມີ ອິນຊີ ໖ ທີ່ເປັນຊັ້ນຕ່ຳກໍມີ ທີ່ເປັນຊັ້ນກາງກໍມີ ທີ່ເປັນຊັ້ນປະນີດກໍມີ

## ໑໕. ມິດສັດຕະຕິກະວິສັດຊະນາ

ອິນຊີ ໑໐ ບໍ່ແນ່ນອນໂດຍອາການທັງສອງນັ້ນ ອະນັນຍາຕັນຍັດສາມີຕິນຊີມີສະພາວະຖືກແລະໃຫ້ຜົນແນ່ນອນ ອິນຊີ ໔ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນກໍມີ ໂທມະນັດສິນຊີທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນກໍມີ ທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນກໍມີ ອິນຊີ ໖ ທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນກໍມີ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີ ທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນກໍມີ

## ໑໖. ມັກຄາຣໍາມະນະຕິກະວິສັດຊະນາ

ອິນຊີ ໗ ຮັບຮູ້ອາລົມບໍ່ໄດ້ ອິນຊີ ໔ ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີ ອະນັນຍາຕັນຍັດສາມີຕິນຊີບໍ່ແມ່ນມີມັກ ເປັນອາລົມທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີກໍມີ ອັນຍິນຊີບໍ່ແມ່ນມີມັກເປັນອາລົມ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີກໍມີ ອິນຊີ ໙ ທີ່ມີມັກເປັນອາລົມກໍມີ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີກໍມີ

## ໑໗. ອຸປັນນະຕິກະວິສັດຊະນາ

ອິນຊີ ໑໐ ທີ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ ແຕ່ກ່າວບໍ່ໄດ້ວ່າ ຍັງບໍ່ເກີດຂຶ້ນ ອິນຊີ ໘ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ແຕ່ກ່າວບໍ່ໄດ້ວ່າ ຈັກເກີດຂຶ້ນແນ່ນອນ ອິນຊີ ໑໐ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ

## ໑໘. ອະຕີຕະຕິກະວິສັດຊະນາ

ອິນຊີ ໒໒ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ

## ໑໙. ອະຕີຕາຣັມມະນະຕິກະວິສັດຊະນາ

ອິນຊີ ໗ ຮັບຮູ້ອາລົມບໍ່ໄດ້ ອິນຊີ ໔ ມີປັດຈຸບັນທຳເປັນອາລົມ ອິນຊີ ໓ ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມ ອິນຊີ ໑໐ ທີ່ມີອະດີດທຳເປັນອາລົມກໍມີ ທີ່ມີອະນາຄົດທຳເປັນອາລົມກໍມີ ທີ່ມີປັດຈຸບັນທຳເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມກໍມີ

## ໔໐. ອັດຊັດຕະຕິກະວິສັດຊະນາ

ອິນຊີ ໒໒ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

## ໔໑. ອັດຊັດຕາຣັມມະນະຕິກະວິສັດຊະນາ

ອິນຊີ ໗ ຮັບຮູ້ອາລົມບໍ່ໄດ້ ອິນຊີ ໓ ມີທຳພາຍນອກຕົນເປັນອາລົມ ອິນຊີ ໔ ທີ່ມີທຳພາຍໃນຕົນເປັນອາລົມກໍມີ ທີ່ມີທຳພາຍນອກຕົນເປັນອາລົມກໍມີ ທີ່ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ ອິນຊີ ໘ ທີ່ມີທຳພາຍໃນຕົນເປັນອາລົມກໍມີ ທີ່ມີທຳພາຍນອກຕົນເປັນອາລົມກໍມີ ທີ່ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີທຳພາຍໃນຕົນເປັນອາລົມ ມີທຳພາຍນອກຕົນເປັນອາລົມ ຫຼື ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ

## ໔໒. ສະນິທັດສະນະຕິກະວິສັດຊະນາ

ອິນຊີ ໕ ເຫັນບໍ່ໄດ້ແຕ່ກະທົບໄດ້ ອິນຊີ ໑໗ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

# ໒. ທຸກະມາຕິກາວິສັດຊະນາ

## ໑. ເຫຕຸໂຄດສະກະວິສັດຊະນາ

[໔໔໔] ອິນຊີ ໔ ເປັນເຫດ ອິນຊີ ໑໘ ບໍ່ເປັນເຫດ

ອິນຊີ ໗ ມີເຫດ ອິນຊີ ໙ ບໍ່ມີເຫດ ອິນຊີ ໖ ທີ່ມີເຫດກໍມີ ທີ່ບໍ່ມີເຫດກໍມີ

ອິນຊີ ໗ ສຳປະຍຸດດ້ວຍເຫດ ອິນຊີ ໙ ວິບປະຍຸດຈາກເຫດ ອິນຊີ ໖ ທີ່ສຳປະຍຸດດ້ວຍເຫດກໍມີ ທີ່ວິບປະຍຸດຈາກເຫດກໍມີ

ອິນຊີ ໔ ເປັນເຫດແລະມີເຫດ ອິນຊີ ໙ ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດຫຼືມີເຫດແຕ່ບໍ່ເປັນເຫດ ອິນຊີ ໓ ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ຫຼື ມີເຫດແຕ່ບໍ່ເປັນເຫດ ອິນຊີ ໖

ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ທີ່ມີເຫດແຕ່ບໍ່ເປັນເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ມີເຫດແຕ່ບໍ່ເປັນເຫດກໍມີ

ອິນຊີ ໔ ເປັນເຫດແລະສຳປະຍຸດດ້ວຍເຫດ ອິນຊີ ໙ ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ ຫຼື ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ອິນຊີ ໓ ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ ຫຼື ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ອິນຊີ ໖ ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ ທີ່ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດກໍມີ

ອິນຊີ ໙ ບໍ່ເປັນເຫດແລະບໍ່ມີເຫດ ອິນຊີ ໓ ບໍ່ເປັນເຫດແຕ່ມີເຫດ ອິນຊີ ໔ ກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດ ຫຼື ບໍ່ເປັນເຫດແລະບໍ່ມີເຫດ ອິນຊີ ໖ ທີ່ບໍ່ເປັນເຫດແຕ່ມີເຫດກໍມີ ທີ່ບໍ່ເປັນເຫດແລະບໍ່ມີເຫດກໍມີ

## ໒. ຈູລັນຕະຣະທຸກະວິສັດຊະນາ

ອິນຊີ ໒໒ ມີປັດໄຈປຸງແຕ່ງ ອິນຊີ ໒໒ ຖືກປັດໄຈປຸງແຕ່ງ

ອິນຊີ ໒໒ ເຫັນບໍ່ໄດ້ ອິນຊີ ໕ ກະທົບໄດ້ ອິນຊີ ໑໗ ກະທົບບໍ່ໄດ້

ອິນຊີ ໗ ເປັນຮູບ ອິນຊີ ໑໔ ບໍ່ເປັນຮູບ ຊີວິຕິນຊີທີ່ເປັນຮູບກໍມີ ທີ່ບໍ່ເປັນຮູບກໍມີ ອິນຊີ ໑໐ ເປັນໂລກິຍະ ອິນຊີ ໓ ເປັນໂລກຸດຕະຣະ ອິນຊີ ໙ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ອິນຊີ ໒໒ ຈິດບາງດວງຮູ້ໄດ້ ອິນຊີ ໒໒ ຈິດບາງດວງຮູ້ບໍ່ໄດ້

## ໓. ອາສະວະໂຄດສະກະວິສັດຊະນາ

ອິນຊີ ໒໒ ບໍ່ເປັນອາສະວະ

ອິນຊີ ໑໐ ເປັນອາລົມຂອງອາສະວະ ອິນຊີ ໓ ບໍ່ເປັນອາລົມຂອງອາສະວະ ອິນຊີ ໙ ທີ່ເປັນອາລົມຂອງອາສະວະກໍມີ ທີ່ບໍ່ເປັນອາລົມຂອງອາສະວະກໍມີ

ອິນຊີ ໑໕ ວິບປະຍຸດຈາກອາສະວະ ໂທມະນັດສິນຊີສຳປະຍຸດດ້ວຍອາສະວະ ອິນຊີ ໖ ທີ່ສຳປະຍຸດດ້ວຍອາສະວະກໍມີ ທີ່ວິບປະຍຸດຈາກອາສະວະກໍມີ

ອິນຊີ ໑໐ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼືເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ ອິນຊີ ໓ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ ອິນຊີ ໙ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ທີ່ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ

ອິນຊີ ໑໕ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ ອິນຊີ ໖ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະທີ່ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະກໍມີ

ອິນຊີ ໗ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ ອິນຊີ ໓ ວິບປະຍຸດຈາກອາສະວະ ແລະບໍ່ເປັນອາລົມຂອງອາສະວະ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ ຫຼື ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະ ອິນຊີ ໓ ທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະກໍມີ ທີ່ວິບປະຍຸດຈາກອາສະວະ ແລະບໍ່ເປັນອາລົມຂອງອາສະວະກໍມີ ອິນຊີ ໖ ທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະກໍມີ ທີ່ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ ຫຼືວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ

## ໔. ສັນໂຍຊະນະໂຄດສະກະວິສັດຊະນາ

ອິນຊີ ໒໒ ບໍ່ເປັນສັງໂຍດ

ອິນຊີ ໑໐ ເປັນອາລົມຂອງສັງໂຍດ ອິນຊີ ໓ ບໍ່ເປັນອາລົມຂອງສັງໂຍດ ອິນຊີ ໗ ທີ່ເປັນອາລົມຂອງສັງໂຍດກໍມີ ທີ່ບໍ່ເປັນອາລົມຂອງສັງໂຍດກໍມີ

ອິນຊີ ໑໕ ວິບປະຍຸດຈາກສັງໂຍດ ໂທມະນັດສິນຊີສຳປະຍຸດດ້ວຍສັງໂຍດ ອິນຊີ ໖ ທີ່ສຳປະຍຸດດ້ວຍສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດກໍມີ

ອິນຊີ ໑໐ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ຫຼືເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດ ອິນຊີ ໓ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ຫຼື ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດ ອິນຊີ ໗ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ທີ່ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດກໍມີ

ອິນຊີ ໑໕ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ ຫຼື ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ເປັນສັງໂຍດແລະ ສຳປະຍຸດດ້ວຍສັງໂຍດ ຫຼື ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດ ອິນຊີ ໖ ກ່າວບໍ່ໄດ້ວ່າ ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ ທີ່ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດ ກໍມີທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດກໍມີ

ອິນຊີ ໗ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ອິນຊີ ໓ ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ຫຼື ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດ ອິນຊີ ໓ ທີ່ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ ອິນຊີ ໖ ທີ່ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດກໍມີ ທີ່ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ຫຼື ວິບປະຍຸດຈາກສັງໂຍດແລະບໍ່ເປັນອາລົມຂອງສັງໂຍດກໍມີ

## ໕. ຄັນຖະໂຄດສະກະວິສັດຊະນາ

ອິນຊີ ໒໒ ບໍ່ເປັນຄັນຖະ

ອິນຊີ ໑໐ ເປັນອາລົມຂອງຄັນຖະ ອິນຊີ ໓ ບໍ່ເປັນອາລົມຂອງຄັນຖະອິນຊີ ໗ ທີ່ເປັນອາລົມຂອງຄັນຖະກໍມີ ທີ່ບໍ່ເປັນອາລົມຂອງຄັນຖະກໍມີ

ອິນຊີ ໑໕ ວິບປະຍຸດຈາກຄັນຖະ ໂທມະນັດສິນຊີສຳປະຍຸດດ້ວຍຄັນຖະ ອິນຊີ ໖ ທີ່ສຳປະຍຸດດ້ວຍຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະກໍມີ

ອິນຊີ ໑໐ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ ຫຼືເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ ອິນຊີ ໓ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ ຫຼືເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ ອິນຊີ ໗ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ ທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ ກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະກໍມີ

ອິນຊີ ໑໕ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ຫຼື ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ຫຼືສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ອິນຊີ ໖ ກ່າວບໍ່ໄດ້ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະກໍມີ

ອິນຊີ ໗ ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະ ອິນຊີ ໓ ວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະ ຫຼື ວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະອິນຊີ ໓ ທີ່ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະກໍມີ ອິນຊີ ໖ ທີ່ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະກໍມີ ທີ່ວິບປະຍຸດຈາກຄັນຖະ

ແລະບໍ່ເປັນອາລົມຂອງຄັນຖະກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນ ຖະ ຫຼືວິບປະຍຸດຈາກຄັນຖະແລະບໍ່ເປັນອາລົມຂອງຄັນຖະກໍມີ

## ໖-໗. ໂອຄະໂຄດສະກາທີວິສັດຊະນາ

ອິນຊີ ໒໒ ບໍ່ເປັນໂອຄະ ໆລໆ ບໍ່ເປັນໂຍຄະ ໆລໆ ບໍ່ເປັນນິວອນ

ອິນຊີ ໑໐ ເປັນອາລົມຂອງນິວອນ ອິນຊີ ໓ ບໍ່ເປັນອາລົມຂອງນິວອນ ອິນຊີ ໙ ທີ່ເປັນອາລົມຂອງນິວອນກໍມີ ທີ່ບໍ່ເປັນອາລົມຂອງນິວອນກໍມີ

ອິນຊີ ໑໕ ວິບປະຍຸດຈາກນິວອນ ໂທມະນັດສິນຊີສຳປະຍຸດດ້ວຍນິວອນ ອິນຊີ ໖ ທີ່ສຳປະຍຸດດ້ວຍນິວອນກໍມີ ທີ່ວິບປະຍຸດຈາກນິວອນກໍມີ

ອິນຊີ ໑໐ ກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ຫຼື ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນ ອິນຊີ ໓ ກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ຫຼື ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນ ອິນຊີ ໙ ກ່າວບໍ່ໄດ້ວ່າ ເປັນນິວອນແລະເປັນອາລົມຂອງນິວອນ ທີ່ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນກໍມີ

ອິນຊີ ໑໕ ກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ຫຼື ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ຫຼື ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນ ອິນຊີ ໖ ກ່າວບໍ່ໄດ້ວ່າ ເປັນນິວອນແລະສຳປະຍຸດດ້ວຍນິວອນ ທີ່ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນກໍມີ

ອິນຊີ ໙ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ ອິນຊີ ໓ ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ ຫຼື ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນ ອິນຊີ ໓ ທີ່ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນກໍມີ ທີ່ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນກໍມີ ອິນຊີ ໖ ທີ່ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນກໍມີ ທີ່ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ ຫຼື ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນກໍມີ

## ໙. ປະຣາມາສະໂຄດສະກະວິສັດຊະນາ

ອິນຊີ ໒໒ ບໍ່ເປັນປະຣາມາດ

ອິນຊີ ໑໐ ເປັນອາລົມຂອງປະຣາມາດ ອິນຊີ ໑ ບໍ່ເປັນອາລົມຂອງປະຣາມາດ ອິນຊີ ໑ ທີ່ເປັນອາລົມຂອງປະຣາມາດກໍມີ ທີ່ບໍ່ເປັນອາລົມຂອງປະຣາມາດກໍມີ

ອິນຊີ ໑໖ ວິບປະຍຸດຈາກປະຣາມາດ ອິນຊີ ໖ ທີ່ສໍາປະຍຸດດ້ວຍປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດກໍມີ

ອິນຊີ ໑໐ ກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ຫຼື ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ ອິນຊີ ໑ ກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ຫຼືເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ ອິນຊີ ໑ ກ່າວບໍ່ໄດ້ວ່າ ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ທີ່ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດກໍມີ

ອິນຊີ ໑໐ ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດ ອິນຊີ ໑ ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດ ອິນຊີ ໑ ທີ່ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດກໍມີ ທີ່ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດກໍມີ ອິນຊີ ໖ ທີ່ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດກໍມີທີ່ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດ ຫຼື ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດກໍມີ

## ໑໐. ມະຫັນຕະຣະທຸກະວິສັດຊະນາ

ອິນຊີ ໗ ຮັບຮູ້ອາລົມບໍ່ໄດ້ ອິນຊີ ໑໔ ຮັບຮູ້ອາລົມໄດ້ ຊີວິຕິນຊີທີ່ຮັບຮູ້ອາລົມໄດ້ກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ

ອິນຊີ ໔໑ ບໍ່ເປັນຈິດ ມະນິນຊີເປັນຈິດ

ອິນຊີ ໑໑ ເປັນເຈຕະສິກ ອິນຊີ ๗ ບໍ່ເປັນເຈຕະສິກ ຊີວິຕິນຊີທີ່ເປັນເຈຕະສິກກໍມີ ທີ່ບໍ່ເປັນເຈຕະສິກກໍມີ

ອິນຊີ ໑໑ ສໍາປະຍຸດດ້ວຍຈິດ ອິນຊີ ໗ ວິບປະຍຸດຈາກຈິດ ຊີວິຕິນຊີທີ່ສໍາປະຍຸດດ້ວຍຈິດກໍມີ ທີ່ວິບປະຍຸດຈາກຈິດກໍມີ ມະນິນຊີກ່າວບໍ່ໄດ້ວ່າ ສໍາປະຍຸດດ້ວຍຈິດ ຫຼືວິບປະຍຸດຈາກຈິດ

ອິນຊີ ໑໑ ປະປົນກັບຈິດ ອິນຊີ ໗ ບໍ່ປະປົນກັບຈິດ ຊີວິຕິນຊີທີ່ປະປົນກັບຈິດກໍມີ ທີ່ບໍ່ປະປົນກັບຈິດກໍມີ ມະນິນຊີກ່າວບໍ່ໄດ້ວ່າ ປະປົນກັບຈິດ ຫຼື ບໍ່ປະປົນກັບຈິດ

ອິນຊີ ໑໑ ມີຈິດເປັນສະມຸດຖານ ອິນຊີ ๗ ບໍ່ມີຈິດເປັນສະມຸດຖານ ຊີວິຕິນຊີທີ່ມີຈິດເປັນສະມຸດຖານກໍມີ ທີ່ບໍ່ມີຈິດເປັນສະມຸດຖານກໍມີ

ອິນຊີ ໑໑ ເກີດພ້ອມກັບຈິດ ອິນຊີ ๗ ບໍ່ເກີດພ້ອມກັບຈິດ ຊີວິຕິນຊີ ທີ່ເກີດພ້ອມກັບຈິດກໍມີ ທີ່ບໍ່ເກີດພ້ອມກັບຈິດກໍມີ

ອິນຊີ ໑໖ ເປັນໄປຕາມຈິດ ອິນຊີ ໗ ບໍ່ເປັນໄປຕາມຈິດ ຊີວິຕິນຊີທີ່ເປັນໄປຕາມຈິດກໍມີ ທີ່ບໍ່ເປັນໄປຕາມຈິດກໍມີ

ອິນຊີ ໑໖ ປະປົນກັບຈິດແລະມີຈິດເປັນສະມຸດຖານ ອິນຊີ ໗ ບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານ ຊີວິຕິນຊີທີ່ປະປົນກັບຈິດແລະມີຈິດເປັນສະມຸດຖານກໍມີ ທີ່ບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານກໍມີ

ອິນຊີ ໑໖ ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ ອິນຊີ ໗ ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ ຊີວິຕິນຊີທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດກໍມີ ທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດກໍມີ

ອິນຊີ ໑໖ ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ອິນຊີ ໗ ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ຊີວິຕິນຊີທີ່ປະປົນກັບຈິດມີຈິດ ເປັນສະມຸດຖານແລະເປັນໄປຕາມຈິດກໍມີ ທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດກໍມີ

ອິນຊີ ໒ ເປັນພາຍໃນ ອິນຊີ ໑໒ ເປັນພາຍນອກ

ອິນຊີ ໗ ເປັນອຸປາທາຍະຮູບ ອິນຊີ ໑໔ ບໍ່ເປັນອຸປາທາຍະຮູບ ຊີວິຕິນຊີທີ່ເປັນອຸປາທາຍະຮູບກໍມີ ທີ່ບໍ່ເປັນອຸປາທາຍະຮູບກໍມີ

ອິນຊີ ໙ ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ອິນຊີ ໔ ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ອິນຊີ ໙ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືກໍມີ

## ໑໑. ອຸປາທານະໂຄດສະກະວິສັດຊະນາ

ອິນຊີ ໒໒ ບໍ່ເປັນອຸປາທານ

ອິນຊີ ໑໐ ເປັນອາລົມຂອງອຸປາທານ ອິນຊີ ໓ ບໍ່ເປັນອາລົມຂອງອຸປາທານອິນຊີ ໙ ທີ່ເປັນອາລົມຂອງອຸປາທານກໍມີ ທີ່ບໍ່ເປັນອາລົມຂອງອຸປາທານກໍມີ

ອິນຊີ ໑໒ ວິບປະຍຸດຈາກອຸປາທານ ອິນຊີ ໒ ທີ່ສໍາປະຍຸດດ້ວຍອຸປາທານກໍມີທີ່ ວິບປະຍຸດຈາກອຸປາທານກໍມີ

ອິນຊີ ໑໐ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະເປັນອາລົມຂອງອຸປາທານ ຫຼື ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານ ອິນຊີ ໓ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະເປັນອາລົມຂອງອຸປາທານ ຫຼື ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານ ອິນຊີ ໙ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະເປັນອາລົມຂອງອຸປາທານ ທີ່ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ

ອິນຊີ ໑໐ ທີ່ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານກໍມີ

ອິນຊີ ໑໒ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະສຳປະຍຸດດ້ວຍອຸປາທານ ຫຼື ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານ ອິນຊີ ໗ ກ່າວບໍ່ໄດ້ວ່າ ເປັນອຸປາທານແລະສຳປະຍຸດດ້ວຍອຸປາທານ ທີ່ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານກໍມີ

ອິນຊີ ໑໐ ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານ ອິນຊີ ໓ ວິບປະຍຸດຈາກອຸປາທານແລະບໍ່ເປັນອາລົມຂອງອຸປາທານ ອິນຊີ ໓ ທີ່ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານກໍມີ ທີ່ວິບປະຍຸດຈາກອຸປາທານແລະບໍ່ເປັນອາລົມຂອງອຸປາທານກໍມີ ອິນຊີ ໒ ທີ່ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານກໍມີ ທີ່ວິບປະຍຸດຈາກອຸປາທານແລະບໍ່ເປັນອາລົມຂອງອຸປາທານກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານ ຫຼື ວິບປະຍຸດຈາກອຸປາທານແລະ ບໍ່ເປັນອາລົມຂອງອຸປາທານກໍມີ

## ໑໔. ກິເລສະໂຄດສະກະວິສັດຊະນາ

ອິນຊີ ໒໒ ບໍ່ເປັນກິເລດ

ອິນຊີ ໑໐ ເປັນອາລົມຂອງກິເລດ ອິນຊີ ໓ ບໍ່ເປັນອາລົມຂອງກິເລດ ອິນຊີ ໙ ທີ່ເປັນອາລົມຂອງກິເລດກໍມີ ທີ່ບໍ່ເປັນອາລົມຂອງກິເລດກໍມີ

ອິນຊີ ໑໕ ກິເລດບໍ່ເຮັດໃຫ້ເສົ້າໝອງ ໂທມະນັດສິນຊີກິເລດເຮັດໃຫ້ເສົ້າໝອງ ອິນຊີ ໖ ທີ່ກິເລດເຮັດໃຫ້ເສົ້າໝອງກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງກໍມີ

ອິນຊີ ໑໕ ວິບປະຍຸດຈາກກິເລດ ໂທມະນັດສິນຊີສຳປະຍຸດດ້ວຍກິເລດ ອິນຊີ ໖ ທີ່ສຳປະຍຸດດ້ວຍກິເລດກໍມີ ທີ່ວິບປະຍຸດຈາກກິເລດກໍມີ ອິນຊີ ໑໐ ກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດ ຫຼື ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດ ອິນຊີ ໓ ກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດ ຫຼື ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດ ອິນຊີ ໙ ກ່າວບໍ່ໄດ້ວ່າ ເປັນກິເລດແລະເປັນອາລົມຂອງກິເລດ ທີ່ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດກໍມີ

ອິນຊີ ໑໕ ກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ຫຼື ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ຫຼື ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດ ອິນຊີ ໗ ກ່າວບໍ່ໄດ້ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ທີ່ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດກໍມີ

ອິນຊີ ໑໕ ກ່າວບໍ່ໄດ້ວ່າ ເປັນກິເລດແລະສຳປະຍຸດດ້ວຍກິເລດ ຫຼື ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ເປັນກິເລດແລະສຳປະຍຸດດ້ວຍ ກິເລດ ຫຼືສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ ອິນຊີ ໖ ກ່າວບໍ່ໄດ້ວ່າ ເປັນກິເລດແລະສຳປະຍຸດດ້ວຍກິເລດທີ່ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດກໍມີ

ອິນຊີ ໙ ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ ອິນຊີ ໖ ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດ ໂທມະນັດສິນຊີກ່າວບໍ່ໄດ້ວ່າ ວິບປະຍຸດຈາກກິເລດ ແຕ່ເປັນອາລົມຂອງກິເລດ ຫຼື ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດ ອິນຊີ ໖ ທີ່ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດກໍມີ ທີ່ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດກໍມີ ອິນຊີ ໖ ທີ່ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດກໍມີ ທີ່ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດກໍມີ ທີ່ກ່າວບໍ່ໄດ້ວ່າ ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ ຫຼື ວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດກໍມີ

## ໑໖. ປິດຖິທຸກະວິສັດຊະນາ

ອິນຊີ ໑໕ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ອິນຊີ ໗ ທີ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ

ອິນຊີ ໑໕ ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໖ ອິນຊີ ໗ ທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໖ ກໍມີ ທີ່ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໖ ກໍມີ

ອິນຊີ ໑໕ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ອິນຊີ ໗ ທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ

ອິນຊີ ໑໕ ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໖ ອິນຊີ ໗ ທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໖ ກໍມີ ທີ່ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໖ ກໍມີ

ອິນຊີ ໙ ບໍ່ມີວິຕົກ ໂທມະນັດສິນຊີມີວິຕົກ ອິນຊີ ໑໘ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ

ອິນຊີ ໙ ບໍ່ມີວິຈານ ໂທມະນັດສິນຊີມີວິຈານ ອິນຊີ ໑໘ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານກໍມີ

ອິນຊີ ໑໑ ບໍ່ມີປິຕິ ອິນຊີ ໑໑ ທີ່ມີປິຕິກໍມີ ທີ່ບໍ່ມີປິຕິກໍມີ

ອິນຊີ ໑໑ ບໍ່ປະກອບດ້ວຍປິຕິ ອິນຊີ ໑໑ ທີ່ປະກອບດ້ວຍປິຕິກໍມີ ທີ່ບໍ່ປະກອບດ້ວຍປິຕິກໍມີ

ອິນຊີ ໑໘ ບໍ່ປະກອບດ້ວຍສຸກ ອິນຊີ ໑໐ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ

ອິນຊີ ໑໔ ບໍ່ປະກອບດ້ວຍອຸເປກຂາ ອິນຊີ ໑໐ ທີ່ປະກອບດ້ວຍອຸເປກຂາ ກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ອິນຊີ ໑໐ ເປັນກາມາວະຈອນ ອິນຊີ ໓ ບໍ່ເປັນກາມາວະຈອນ ອິນຊີ ໙ ທີ່ເປັນກາມາວະຈອນກໍມີ ທີ່ບໍ່ເປັນກາມາວະຈອນກໍມີ

ອິນຊີ ໑໓ ບໍ່ເປັນອະຣູບປາວະຈອນ ອິນຊີ ໙ ທີ່ເປັນອະຣູບປາວະຈອນກໍມີ ທີ່ບໍ່ເປັນອະຣູບປາວະຈອນກໍມີ

ອິນຊີ ໑໔ ບໍ່ເປັນອະຣູບປາວະຈອນ ອິນຊີ ໗ ທີ່ເປັນອະຣູບປາວະຈອນກໍມີ ທີ່ບໍ່ເປັນ ອະຣູບປາວະຈອນກໍມີ

ອິນຊີ ໑໐ ນັບເນື່ອງໃນວັດຕະທຸກ ອິນຊີ ໓ ບໍ່ນັບເນື່ອງໃນວັດຕະທຸກ ອິນຊີ ໙ ທີ່ນັບເນື່ອງໃນວັດຕະທຸກກໍມີ ທີ່ບໍ່ນັບເນື່ອງໃນວັດຕະທຸກກໍມີ

ອິນຊີ ໑໑ ບໍ່ເປັນເຫດນຳອອກຈາກວັດຕະທຸກ ອະນັນຍາຕັນຍັດສາມີຕິນຊີ ເປັນເຫດນຳອອກຈາກວັດຕະທຸກ ອິນຊີ ໑໐ ທີ່ເປັນເຫດນຳອອກຈາກວັດຕະທຸກກໍມີ ທີ່ບໍ່ເປັນເຫດນຳອອກຈາກວັດຕະທຸກກໍມີ

ອິນຊີ ໑໐ ໃຫ້ຜົນບໍ່ແນ່ນອນ ອະນັນຍາຕັນຍັດສາມີຕິນຊີໃຫ້ຜົນແນ່ນອນ ອິນຊີ ໑໑ ທີ່ໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ອິນຊີ ໑໐ ມີທຳອື່ນຍິ່ງກວ່າ ອິນຊີ ໓ ບໍ່ມີທຳອື່ນຍິ່ງກວ່າ ອິນຊີ ໙ ທີ່ມີທຳອື່ນຍິ່ງກວ່າກໍມີ ທີ່ບໍ່ມີທຳອື່ນຍິ່ງກວ່າກໍມີ

ອິນຊີ ໑໕ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ ໂທມະນັດສິນຊີເປັນເຫດໃຫ້ສັດຮ້ອງໄຫ້ ອິນຊີ ໒ ທີ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ ທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ກໍມີ

**ປັນຫາປຸດສະກະ ຈົບ**

**ອິນທະຣິຍະວິພັງ ຈົບບໍລິບູນ**

# ໖. ປະຕິດຈະສະມຸປະປາທະວິພັງ

## ໑. ສຸດຕັນຕະພາຊະນີ

[໔໔໕] ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຣູບຈຶ່ງມີ
ຍ້ອນນາມຣູບເປັນປັດໄຈ ສະລາຍະຕະນະຈຶ່ງມີ

ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາ ມໍຣະນະ ໂສກະ ປະຣິເທວະ ທຸກຂະ ໂທມະນັດ ອຸປາຍາດຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໔໔໖] ບັນດາປັດຈະຍາການເຫຼົ່ານັ້ນ ອະວິດຊາ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມີນີປະຕິປະທາ ນີ້ຮຽກວ່າ ອະວິດຊາ

ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ປຸນຍາພິສັງຂານ ອະປຸນຍາພິສັງຂານ ອາເນນຊາພິສັງຂານ ກາຍະສັງຂານ ວະຈີສັງຂານ ແລະຈິດຕະສັງຂານ

ໃນສັງຂານເຫຼົ່ານັ້ນ ປຸນຍາພິສັງຂານ ເປັນແນວໃດ?

ເຈຕະນາທີ່ເປັນກຸສົນເຊິ່ງເປັນກາມາວະຈອນ ເປັນອະຣູບປາວະຈອນ ສຳເລັດດ້ວຍທານ ສີນ ແລະ ພາວະນາ ນີ້ຮຽກວ່າ ປຸນຍາພິສັງຂານ

ອະປຸນຍາພິສັງຂານ ເປັນແນວໃດ?

ເຈຕະນາທີ່ເປັນອະກຸສົນເຊິ່ງເປັນກາມາວະຈອນ ນີ້ຮຽກວ່າ ອະປຸນຍາພິສັງຂານ

ອາເນນຊາພິສັງຂານ ເປັນແນວໃດ?

ເຈຕະນາທີ່ເປັນກຸສົນເຊິ່ງເປັນອະຣູບປາວະຈອນ ນີ້ຮຽກວ່າ ອາເນນຊາພິສັງຂານ

ກາຍະສັງຂານ ເປັນແນວໃດ?

ກາຍະສັນເຈຕະນາເປັນກາຍສັງຂານ ວະຈີສັນເຈຕະນາເປັນວະຈີສັງຂານ ມະໂນສັນເຈຕະນາເປັນຈິດຕະສັງຂານ

ເຫຼົ່ານີ້ຮຽກວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ

[໔໔໗] ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈັກຂຸວິນຍານ ໂສຕະວິນຍານ ຄານະວິນຍານ ຊິວຫາວິນຍານ ກາຍະວິນຍານ ແລະມະໂນວິນຍານ ນີ້ຮຽກວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ

[໔໔໗] ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ເປັນແນວໃດ?

ນາມ ໑ ຮູບ ໑

ໃນນາມແລະຮູບນັ້ນ ນາມ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ນີ້ຮຽກວ່າ ນາມ

ຮູບ ເປັນແນວໃດ?

ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔ (ອຸປາທາຍະຮູບ) ນີ້ຮຽກວ່າ ຮູບ

ນາມແລະຮູບດັ່ງທີ່ກ່າວມານີ້ ນີ້ຮຽກວ່າ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ

[໔໔໙] ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ເປັນແນວໃດ?

ຈັກຂາຍະຕະນະ ໂສຕາຍະຕະນະ ຄານາຍະຕະນະ ຊິວຫາຍະຕະນະ ກາຍາຍະຕະນະ ແລະມະນາຍະຕະນະ ນີ້ຮຽກວ່າ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ

[໔໕໐] ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ເປັນແນວໃດ?

ຈັກຂຸສຳຜັດ ໂສຕະສຳຜັດ ຄານະສຳຜັດ ຊິວຫາສຳຜັດ ກາຍສຳຜັດ ແລະມະໂນສຳຜັດ ນີ້ຮຽກວ່າ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ

[໔໕໑] ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ເວທະນາທີ່ເກີດຈາກຈັກຂຸສຳຜັດ ເວທະນາທີ່ເກີດຈາກໂສຕະສຳຜັດ ເວທະນາທີ່ເກີດຈາກຄານະສຳຜັດ ເວທະນາທີ່ເກີດຈາກຊິວຫາສຳຜັດ ເວທະນາທີ່ເກີດຈາກກາຍສຳຜັດ ເວທະນາທີ່ເກີດຈາກມະໂນສຳຜັດ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

[໔໕໔] ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ ເປັນແນວໃດ?

ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ແລະທຳມະຕັນຫາ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ

[໔໕໕] ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ເປັນແນວໃດ?

ກາມຸປາທານ ທິດຖຸປາທານ ສີລັບພະຕຸປາທານ ແລະອັດຕະວາທຸປາທານ ນີ້ຮຽກວ່າ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ

[໔໕໔] ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ພົບ ໔ ຄື ກຳພົບແລະອຸປະປັດຕິພົບ

ໃນພົບ ໔ ນັ້ນ ກຳພົບ ເປັນແນວໃດ?

ປຸນຍາພິສັງຂານ ອະປຸນຍາພິສັງຂານ ແລະອາເນນຊາພິສັງຂານ ນີ້ຮຽກວ່າ ກຳພົບ ກຳທີ່ເປັນເຫດໃຫ້ໄປສູ່ພົບແມ່ນທັງໝົດຮຽກວ່າ ກຳພົບ

ອຸປະປັດຕິພົບ ເປັນແນວໃດ?

ກາມະພົບ ຮູບພົບ ອະຮູບພົບ ສັນຍາພົບ ອະສັນຍະາພົບ ເນວະສັນຍານາສັນຍາພົບເອກະໂວກາຣະພົບ ຈະຕຸໂວກາຣະພົບ ແລະປັນຈະໂວກາຣະພົບ ນີ້ຮຽກວ່າ ອຸປະປັດຕິພົບ

ກຳພົບແລະອຸປະປັດຕິພົບດັ່ງທີ່ກ່າວມານີ້ ນີ້ຮຽກວ່າ ຍ້ອນອຸປາທານເປັນປັດໄຈພົບຈຶ່ງມີ

[໔໓໕] ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ເປັນແນວໃດ?

ຄວາມເກີດ ຄວາມເກີດພ້ອມ ຄວາມຢັ່ງລົງ ຄວາມບັງເກີດສະເພາະ ຄວາມຜາກົດ ແຫ່ງຂັນ ຄວາມໄດ້ອາຍະຕະນະ ໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ

[໔໓໖] ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ເປັນແນວໃດ?

ຊະຣາ ໑ ມໍຣະນະ ໑

ໃນຊະຣາແລະມໍຣະນະນັ້ນ ຊະຣາ ເປັນແນວໃດ?

ຄວາມແກ່ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍານ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີ ໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

ມໍຣະນະ ເປັນແນວໃດ?

ຄວາມຈຸຕິ ຄວາມເຄື່ອນໄປ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄືຄວາມຕາຍ ການເຮັດກາລະ ຄວາມແຕກແຫ່ງຂັນ ຄວາມປະຖິ້ມຮ່າງກາຍ ຄວາມຂາດສູນແຫ່ງຊີວິຕິນຊີ ຂອງເຫຼົ່າສັດນັ້ນ ໆ ຈາກໝູ່ສັດນັ້ນ ໆ ນີ້ຮຽກວ່າ ມໍຣະນະ ຊະຣາແລະມໍຣະນະດັ່ງທີ່ກ່າວມານີ້ ນີ້ຮຽກວ່າ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

[໔໓໗] ໂສກະ ເປັນແນວໃດ?

ຄວາມເສົ້າໂສກ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມແຫ້ງຜາກພາຍໃນ ຄວາມແຫ້ງກອບພາຍໃນ ຄວາມແຫ້ນໃຈ ຄວາມໂທມະນັດ ລູກສອນຄືຄວາມໂສກ ຂອງຜູ້ທີ່ຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຄວາມເສື່ອມກ່ຽວດ້ວຍໂຣກ ຄວາມເສື່ອມສິນ ຫຼືຄວາມເສື່ອມທິດຖິກະທົບ ຂອງຜູ້ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ໂສກະ

[໔໓໘] ປະຣິເທວະ ເປັນແນວໃດ?

ຄວາມຮ້ອງໄຫ້ ຄວາມຄ່ຳຄວນ ກິຣິຍາທີ່ຮ້ອງໄຫ້ ກິຣິຍາທີ່ຄ່ຳຄວນ ພາວະທີ່ຮ້ອງໄຫ້ ພາວະທີ່ຄ່ຳຄວນ ຄວາມຈົ່ມເຖິງ ຄວາມພ່ຳເພີ້ ຄວາມຮ້ອງໄຫ້ ຄວາມພິໄຣລຳພັນ ກິຣິຍາທີ່ພິໄຣລຳພັນ ພາວະທີ່ພິໄຣລຳພັນ ຂອງຜູ້ທີ່ຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຄວາມເສື່ອມກ່ຽວດ້ວຍໂຣກ ຄວາມເສື່ອມສິນ ຫຼື ຄວາມເສື່ອມທິດຖິກະທົບຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງກະທົບ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ປະຣິເທວະ

[໔໓໙] ທຸກ ເປັນແນວໃດ?

ຄວາມບໍ່ສະບາຍທາງກາຍ ຄວາມທຸກທາງກາຍ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ນີ້ຮຽກວ່າ ທຸກ

[໔໔໐] ໂທມະນັດ ເປັນແນວໃດ?

ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ໂທມະນັດ

[໔໔໑] ອຸປາຍາດ ເປັນແນວໃດ?

ຄວາມແຄ້ນ ຄວາມຄັບແຄ້ນ ພາວະທີ່ແຄ້ນ ພາວະທີ່ຄັບແຄ້ນ ຂອງຜູ້ທີ່ຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຄວາມເສື່ອມກ່ຽວດ້ວຍໂຣກ ຄວາມເສື່ອມສິນ ຫຼື ຄວາມເສື່ອມທິດຖິກະທົບ ຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງກະທົບ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ອຸປາຍາດ

[໔໔໔] ຄຳວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ ນັ້ນອະທິບາຍ ວ່າ ກອງທຸກທັງມວນນີ້ໄປຮ່ວມ ມາຮ່ວມ ປະຊຸມຮ່ວມ ຜາກົດຂຶ້ນດ້ວຍອາການແນວນີ້

ຍ້ອນແນວນັ້ນ ຈຶ່ງຮຽກວ່າ ກອງທຸກທັງມວນນີ້ເກີດຂຶ້ນດ້ວຍອາການແນວນີ້

**ສຸດຕັນຕະພາຊະນີ ຈົບ**

# ໘. ອະພິທຳມະພາຊະນີ

## ໑. ປັດຈະຍະຈະຕຸກກະ

### ອະວິດຊາມູລະກະໄນ

[໔໕໓] ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ
ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ (ມະນາຍະຕະນະ) ຈຶ່ງມີ
ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໑)

ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ
ຍ້ອນນາມເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໒)

ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ
ຍ້ອນນາມຮູບເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ
ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໓)

ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ
ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ
ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໔)

**ປັດຈະຍະຈະຕຸກກະ ຈົບ**

# ໘. ເຫຕຸຈະຕຸກກະ

## ອະວິດຊາມູລະກະໄນ

[໘໘໘] ຍ້ອນອະວິດຊາເປັນປັດໄຈ ສັງຂານທີ່ມີອະວິດຊາເປັນເຫດຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານທີ່ມີສັງຂານເປັນເຫດຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມທີ່ມີວິນຍານເປັນເຫດຈຶ່ງມີ
ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ທີ່ມີນາມເປັນເຫດຈຶ່ງມີ
ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະທີ່ມີອາຍະຕະນະທີ ໖ ເປັນເຫດຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາທີ່ມີຜັດສະເປັນເຫດຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ຕັນຫາທີ່ມີເວທະນາເປັນເຫດຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານທີ່ມີຕັນຫາເປັນເຫດຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໑-໕)

ຍ້ອນອະວິດຊາເປັນປັດໄຈ ສັງຂານທີ່ມີອະວິດຊາເປັນເຫດຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານທີ່ມີສັງຂານເປັນເຫດຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມທີ່ມີວິນຍານເປັນເຫດຈຶ່ງມີ
ຍ້ອນນາມເປັນປັດໄຈ ຜັດສະທີ່ມີນາມເປັນເຫດຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາທີ່ມີຜັດສະເປັນເຫດຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາທີ່ມີເວທະນາເປັນເຫດຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານທີ່ມີຕັນຫາເປັນເຫດຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໘-໖)

ຍ້ອນອະວິດຊາເປັນປັດໄຈ ສັງຂານທີ່ມີອະວິດຊາເປັນເຫດຈຶ່ງມີ

ຍ້ອນສັງຂານເປັນປັດໄຈ ວິນຍານທີ່ມີສັງຂານເປັນເຫດຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຮູບທີ່ມີວິນຍານເປັນເຫດຈຶ່ງມີ
ຍ້ອນນາມຮູບເປັນປັດໄຈ ອາຍະຕະນະທີ ໖ ທີ່ມີນາມຮູບເປັນເຫດຈຶ່ງມີ
ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະທີ່ມີອາຍະຕະນະທີ ໖ ເປັນເຫດຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາທີ່ມີຜັດສະເປັນເຫດຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາທີ່ມີເວທະນາເປັນເຫດຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານທີ່ມີຕັນຫາເປັນເຫດຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ

ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໖-໗)

ຍ້ອນອະວິດຊາເປັນປັດໄຈ ສັງຂານທີ່ມີອະວິດຊາເປັນເຫດຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານທີ່ມີສັງຂານເປັນເຫດຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຮູບທີ່ມີວິນຍານເປັນເຫດຈຶ່ງມີ
ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະທີ່ມີນາມຮູບເປັນເຫດຈຶ່ງມີ
ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະທີ່ມີອາຍະຕະນະທີ ໖ ເປັນເຫດຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາທີ່ມີຜັດສະເປັນເຫດຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາທີ່ມີເວທະນາເປັນເຫດຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານທີ່ມີຕັນຫາເປັນເຫດຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໘-໙)

**ເຫຕຸຈະຕຸກກະ ຈົບ**

# ໓. ສຳປະຍຸດຕະຈະຕຸກກະ

## ອະວິດຊາມູລະກະໄນ

[໔໔໕] ຍ້ອນອະວິດຊາເປັນປັດໄຈ ສັງຂານທີ່ສຳປະຍຸດດ້ວຍອະວິດຊາຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານທີ່ສຳປະຍຸດດ້ວຍສັງຂານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມທີ່ສຳປະຍຸດດ້ວຍວິນຍານຈຶ່ງມີ
ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ທີ່ສຳປະຍຸດດ້ວຍນາມຈຶ່ງມີ
ຍ້ອນອາຍະຕະນະທີ ໖ ເປັນປັດໄຈຜັດສະທີ່ສຳປະຍຸດດ້ວຍອາຍະຕະນະທີ ໖ ຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາທີ່ສຳປະຍຸດດ້ວຍຜັດສະຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາທີ່ສຳປະຍຸດດ້ວຍເວທະນາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານທີ່ສຳປະຍຸດດ້ວຍຕັນຫາຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ

ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໑-໗)

ຍ້ອນອະວິດຊາເປັນປັດໄຈ ສັງຂານທີ່ສຳປະຍຸດດ້ວຍອະວິດຊາຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານທີ່ສຳປະຍຸດດ້ວຍສັງຂານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມທີ່ສຳປະຍຸດດ້ວຍວິນຍານຈຶ່ງມີ
ຍ້ອນນາມເປັນປັດໄຈ ຜັດສະທີ່ສຳປະຍຸດດ້ວຍນາມຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາທີ່ສຳປະຍຸດດ້ວຍຜັດສະຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາທີ່ສຳປະຍຸດດ້ວຍເວທະນາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານທີ່ສຳປະຍຸດດ້ວຍຕັນຫາຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໘-໑໐)

ຍ້ອນອະວິດຊາເປັນປັດໄຈ ສັງຂານທີ່ສຳປະຍຸດດ້ວຍອະວິດຊາຈຶ່ງມີ

ຍ້ອນສັງຂານເປັນປັດໄຈ ວິນຍານທີ່ສຳປະຍຸດດ້ວຍສັງຂານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຮູບແລະນາມທີ່ສຳປະຍຸດດ້ວຍວິນຍານຈຶ່ງມີ
ຍ້ອນນາມຮູບເປັນປັດໄຈ ອາຍະຕະນະທີ ໖ ທີ່ສຳປະຍຸດດ້ວຍນາມຮູບ ຈຶ່ງມີ
ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະທີ່ສຳປະຍຸດດ້ວຍອາຍະຕະນະທີ ໖ ຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາທີ່ສຳປະຍຸດດ້ວຍຜັດສະຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາທີ່ສຳປະຍຸດດ້ວຍເວທະນາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານທີ່ສຳປະຍຸດດ້ວຍຕັນຫາຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະລາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້ (໓-໑໑)

ຍ້ອນອະວິດຊາເປັນປັດໄຈ ສັງຂານທີ່ສຳປະຍຸດດ້ວຍອະວິດຊາຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານທີ່ສຳປະຍຸດດ້ວຍສັງຂານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຮູບແລະນາມທີ່ສຳປະຍຸດດ້ວຍວິນຍານຈຶ່ງມີ

ຍ້ອນນາມຮູບເປັນປັດໄຈ ອາຍະຕະນະທີ ໖ ແລະອາຍະຕະນະທີ ໖ ທີ່ສຳປະຍຸດດ້ວຍນາມຈຶ່ງມີ

ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະທີ່ສຳປະຍຸດດ້ວຍອາຍະຕະນະທີ ໖ ຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາທີ່ສຳປະຍຸດດ້ວຍຜັດສະຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາທີ່ສຳປະຍຸດດ້ວຍເວທະນາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານທີ່ສຳປະຍຸດດ້ວຍຕັນຫາຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະລາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້ (໔-໑໘)

**ສຳປະຍຸດຕະຈະຕຸກກະ ຈົບ**

# ໔. ອັນຍະມັນຍະຈະຕຸກກະ

## ອະວິດຊາມູລະກະໄນ

[໔໔໖] ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ແມ່ນຍ້ອນສັງຂານເປັນປັດໄຈ ອະວິດຊາຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ແມ່ນຍ້ອນວິນຍານເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ
ແມ່ນຍ້ອນນາມເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ
ແມ່ນຍ້ອນອາຍະຕະນະທີ ໖ ເປັນປັດໄຈ ນາມຈຶ່ງມີ
ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ
ແມ່ນຍ້ອນຜັດສະເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ
ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ
ແມ່ນຍ້ອນເວທະນາເປັນປັດໄຈ ຜັດສະຈຶ່ງມີ
ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ
ແມ່ນຍ້ອນຕັນຫາເປັນປັດໄຈ ເວທະນາຈຶ່ງມີ
ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ
ແມ່ນຍ້ອນອຸປາທານເປັນປັດໄຈ ຕັນຫາຈຶ່ງມີ
ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ
ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ
ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໑-໑໓)

ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ
ແມ່ນຍ້ອນສັງຂານເປັນປັດໄຈ ອະວິດຊາຈຶ່ງມີ
ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ
ແມ່ນຍ້ອນວິນຍານເປັນປັດໄຈ ສັງຂານຈຶ່ງມີ
ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ
ແມ່ນຍ້ອນນາມເປັນປັດໄຈ ວິນຍານຈຶ່ງມີ
ຍ້ອນນາມເປັນປັດໄຈ ຜັດສະຈຶ່ງມີ

| | |
|---|---|
| ແມ່ນຍ້ອນຜັດສະເປັນປັດໄຈ | ນາມຈຶ່ງມີ |
| ຍ້ອນຜັດສະເປັນປັດໄຈ | ເວທະນາຈຶ່ງມີ |
| ແມ່ນຍ້ອນເວທະນາເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນເວທະນາເປັນປັດໄຈ | ຕັນຫາຈຶ່ງມີ |
| ແມ່ນຍ້ອນຕັນຫາເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຕັນຫາເປັນປັດໄຈ | ອຸປາທານຈຶ່ງມີ |
| ແມ່ນຍ້ອນອຸປາທານເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນອຸປາທານເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນພົບເປັນປັດໄຈ | ຊາດຈຶ່ງມີ |
| ຍ້ອນຊາດເປັນປັດໄຈ | ຊະຣາມໍຣະນະຈຶ່ງມີ |

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ (໘-໑໔)

| | |
|---|---|
| ຍ້ອນອະວິດຊາເປັນປັດໄຈ | ສັງຂານຈຶ່ງມີ |
| ແມ່ນຍ້ອນສັງຂານເປັນປັດໄຈ | ອະວິດຊາຈຶ່ງມີ |
| ຍ້ອນສັງຂານເປັນປັດໄຈ | ວິນຍານຈຶ່ງມີ |
| ແມ່ນຍ້ອນວິນຍານເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນວິນຍານເປັນປັດໄຈ | ນາມຮູບຈຶ່ງມີ |
| ແມ່ນຍ້ອນນາມຮູບເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນນາມຮູບເປັນປັດໄຈ | ອາຍະຕະນະທີ ໖ ຈຶ່ງມີ |
| ແມ່ນຍ້ອນອາຍະຕະນະທີ ໖ ເປັນປັດໄຈ | ນາມຮູບຈຶ່ງມີ |
| ຍ້ອນອາຍະຕະນະທີ ໖ ເປັນປັດໄຈ | ຜັດສະຈຶ່ງມີ |
| ແມ່ນຍ້ອນຜັດສະເປັນປັດໄຈ | ອາຍະຕະນະທີ ໖ ຈຶ່ງມີ |
| ຍ້ອນຜັດສະເປັນປັດໄຈ | ເວທະນາຈຶ່ງມີ |
| ແມ່ນຍ້ອນເວທະນາເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນເວທະນາເປັນປັດໄຈ | ຕັນຫາຈຶ່ງມີ |
| ແມ່ນຍ້ອນຕັນຫາເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຕັນຫາເປັນປັດໄຈ | ອຸປາທານຈຶ່ງມີ |
| ແມ່ນຍ້ອນອຸປາທານເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນອຸປາທານເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນພົບເປັນປັດໄຈ | ຊາດຈຶ່ງມີ |
| ຍ້ອນຊາດເປັນປັດໄຈ | ຊະຣາມໍຣະນະຈຶ່ງມີ |

ຄວາມຟຸ້ງຊ່ານແຫ່ງຈິດ ຄວາມບໍ່ສະງົບ ຄວາມວຸ້ນວາຍໃຈ ຄວາມແລ່ນແຫ່ງຈິດນີ້ ຮຽກວ່າ ຍ້ອນເວທະນາເປັນປັດໄຈ ອຸດທັດຈະຈຶ່ງມີ

ຍ້ອນອຸດທັດຈະເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນອາລົມ ພາວະທີ່ຈິດຕັດສິນອາລົມນັ້ນ ນີ້ ຮຽກວ່າ ເພາະອຸດທັດຈະເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

**ອະກຸສົນນິດເທດ ຈົບ**

# ໑໐. ກຸສະລະນິດເທດ

## ການາວະຈອນກຸສົນຈິດ ໘

## ມະຫາກຸສົນຈິດດວງທີ ໑

[໔໔໔] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ຈິດທີ່ເປັນການາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼືຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໔໔໕] ບັນດາສະພາວະທຳທີ່ເປັນກຸສົນເຫຼົ່ານັ້ນ ກຸສົນມູນ ເປັນແນວໃດ?

ກຸສົນມູນ ຄື ອະໂລພະ ອະໂທສະ ແລະອະໂມຫະ

ໃນກຸສົນມູນນັ້ນ ອະໂລພະ ເປັນແນວໃດ?

ຄວາມບໍ່ໂລບ ກິຣິຍາທີ່ບໍ່ໂລບ ພາວະທີ່ບໍ່ໂລບ ຄວາມບໍ່ກຳໜັດ ກິຣິຍາທີ່ບໍ່ກຳໜັດ ພາວະທີ່ບໍ່ກຳໜັດ ຄວາມບໍ່ເພ່ງເລັງ ກຸສົນມູນຄືອະໂລພະ ນີ້ຮຽກວ່າ ອະໂລພະ

ອະໂທສະ ເປັນແນວໃດ?

ຄວາມບໍ່ຄິດປະທຸດສະຮ້າຍ ກິຣິຍາທີ່ບໍ່ຄິດປະທຸດສະຮ້າຍ ພາວະທີ່ບໍ່ຄິດປະທຸດສະຮ້າຍ ຄວາມບໍ່ຄິດພະຍາບາດ ຄວາມບໍ່ຄິດບຽດບຽນ ກຸສົນມູນຄືອະໂທສະ ນີ້ຮຽກວ່າ ອະໂທສະ

ອະໂມຫະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ອະໂມຫະ

ສະພາວະທຳເຫຼົ່ານີ້ຮຽກວ່າ ກຸສົນມູນ

ໃນປັດຈະຍາການນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ

ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຯລຯ

ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ

ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ? ຯລຯ

ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ເປັນແນວໃດ?

ສັດທາ ຄວາມເຊື່ອ ກິຣິຍາທີ່ປົງໃຈເຊື່ອ ຄວາມເຫຼື້ອມໃສຍິ່ງ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ

ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນອາລົມ ພາວະທີ່ຈິດຕັດສິນອາລົມນັ້ນ ນີ້ ຮຽກວ່າ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ມະຫາກຸສົນຈິດດວງທີ ໔ - ໕

[໔໘໔] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ມີຮູບເປັນອາລົມ ຯລຯ ໂດຍມີເຫດດີງຈູງ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານມີຮູບເປັນອາລົມ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໂດຍມີເຫດດຶງຈູງ ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໔໘໕] ບັນດາປັດຈະຍາການເຫຼົ່ານັ້ນ ກຸສົນມູນ ເປັນແນວໃດ?

ກຸສົນມູນ ຄື ອະໂລພະ ແລະອະໂທສະ

ໃນກຸສົນມູນນັ້ນ ອະໂລພະ ເປັນແນວໃດ?

ຄວາມບໍ່ໂລບ ກິຣິຍາທີ່ບໍ່ໂລບ ພາວະທີ່ບໍ່ໂລບ ຄວາມບໍ່ກຳໜັດ ກິຣິຍາທີ່ບໍ່ກຳໜັດ ພາວະທີ່ບໍ່ກຳໜັດ ຄວາມບໍ່ເພ່ງເລັງ ກຸສົນມູນຄືອະໂລພະ ນີ້ຮຽກວ່າ ອະໂລພະ

ອະໂທສະ ເປັນແນວໃດ?

ຄວາມບໍ່ຄິດປະທຸດສະຮ້າຍ ກິຣິຍາທີ່ບໍ່ຄິດປະທຸດສະຮ້າຍ ພາວະທີ່ບໍ່ຄິດປະທຸດສະຮ້າຍ ຄວາມບໍ່ຄິດພະຍາບາດ ຄວາມບໍ່ຄິດບຽດບຽນ ກຸສົນມູນຄືອະໂທສະ ນີ້ຮຽກວ່າ ອະໂທສະ ສະພາວະທຳເຫຼົ່ານີ້ຮຽກວ່າ ກຸສົນມູນ

ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ມະຫາກຸສົນຈິດດວງທີ ໕ - ໖

[໘໙໖] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ມີຮູບເປັນອາລົມ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼືພາຣົບອາລົມໃດ ໆ ເກີດຂຶ້ນ ໂດຍມີເຫດດຶງຈູງ ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໘໙໗] ບັນດາປັດຈະຍາການເຫຼົ່ານັ້ນ ກຸສົນມູນ ເປັນແນວໃດ?

ກຸສົນມູນ ຄື ອະໂລພະ ອະໂທສະ ແລະອະໂມຫະ ຯລຯ

ສະພາວະທຳເຫຼົ່ານີ້ຮຽກວ່າ ກຸສົນມູນ

ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມ ທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ມະຫາກຸສົນຈິດດວງທີ ໗ - ໘

[໘໙໘] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍອຸເປກຂາ ວິປປະຍຸດຈາກຍານ ມີຮູບເປັນອາລົມ ຯລຯ ປະກອບດ້ວຍອຸເປກຂາ ວິປປະຍຸດຈາກຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ພາຣົບອາລົມໃດ ໆ ເກີດຂຶ້ນ ໂດຍມີເຫດດຶງຈູງ ໃນສະໄໝໃດ ໃນສະໄໝນັ້ນ

ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້

[໔໙໙] ບັນດາປັດຈະຍາການເຫຼົ່ານັ້ນ ກຸສົນມູນ ເປັນແນວໃດ?

ກຸສົນມູນ ຄື ອະໂລພະ ແລະອະໂທສະ ສະພາວະທຳເຫຼົ່ານີ້ຮຽກວ່າ ກຸສົນມູນ

ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້

## ຮູບປາວະຈອນກຸສົນຈິດ

[໕໐໐] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້

[໕໐໑] ບັນດາປັດຈະຍາການເຫຼົ່ານັ້ນ ກຸສົນມູນ ເປັນແນວໃດ?

ກຸສົນມູນ ຄື ອະໂລພະ ອະໂທສະ ແລະອະໂມຫະ ສະພາວະທຳເຫຼົ່ານີ້ຮຽກວ່າ ກຸສົນມູນ

ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້

## ອະຣູບປາວະຈອນກຸສົນຈິດ

[໓໐໔] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງອະຣູບພົບ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໐໓] ບັນດາປັດຈະຍາການເຫຼົ່ານັ້ນ ກຸສົນມູນ ເປັນແນວໃດ?

ກຸສົນມູນ ຄື ອະໂລພະ ອະໂທສະ ແລະອະໂມຫະ ສະພາວະທຳເຫຼົ່ານີ້ຮຽກວ່າ ກຸສົນມູນ

ໃນກຸສົນມູນນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ۲ລ۲ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ۲ລ۲

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ໂລກຸດຕະຣະກຸສົນຈິດ

[໓໐໕] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ۲ລ۲ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ

ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ສະພາວະທຳເຫຼົ່ານີ້ມີການເກີດຂຶ້ນດ້ວຍອາການແບບນີ້

[໖໐໕] ບັນດາປັດຈະຍາການເຫຼົ່ານັ້ນ ກຸສົນມູນ ເປັນແນວໃດ?

ກຸສົນມູນ ຄື ອະໂລພະ ອະໂທສະ ແລະອະໂມຫະ

ໃນກຸສົນມູນເຫຼົ່ານັ້ນ ອະໂລພະ ຯລຯ ອະໂທສະ ຯລຯ ອະໂມຫະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ອະໂມຫະ ສະພາວະທຳເຫຼົ່ານີ້ຮຽກວ່າ ກຸສົນມູນ

ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ເປັນແນວໃດ?

ສັດທາ ຄວາມເຊື່ອ ກິຣິຍາທີ່ປົງໃຈເຊື່ອ ຄວາມເຫຼື້ອມໃສຍິ່ງ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ

ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນອາລົມ ພາວະທີ່ຈິດຕັດສິນອາລົມນັ້ນ ນີ້ຮຽກວ່າ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ຄຳວ່າ ສະພາວະທຳເຫຼົ່ານີ້ມີການເກີດຂຶ້ນດ້ວຍອາການແນວນີ້ນັ້ນ ໄດ້ແກ່ ສະພາວະເຫຼົ່ານີ້ໄປຮ່ວມ ມາຮ່ວມ ປະຊຸມຮ່ວມ ຜາກົດຂຶ້ນດ້ວຍອາການແນວນີ້

ຍ້ອນແນວນັ້ນຈຶ່ງຮຽກວ່າ ສະພາວະທຳເຫຼົ່ານີ້ມີການເກີດຂຶ້ນດ້ວຍອາການແນວນີ້

**ກຸສະລະນິດເທດ ຈົບ**

# ໑໑. ອັບພະຍາກະຕະນິດເທດ

## ອະເຫຕຸກະກຸສົນວິປາກະຈິດ ໘

### ໑. ຈັກຂຸວິນຍານຈິດ

[໕໐໖] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ຈັກຂຸວິນຍານທີ່ເປັນກຸສົນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ເກີດຂຶ້ນຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳ ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໕໐໗] ບັນດາປັດຈະຍາການເຫຼົ່ານັ້ນ ສັງຂານ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ສັງຂານ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ຈັກຂຸວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ

ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ນີ້ຮຽກວ່າ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ

ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ຈັກຂຸວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ

ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນເວທະນາແລ້ວ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໕໐໘] ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານທີ່ມີສັງຂານເປັນເຫດຈຶ່ງມີ

ຍ້ອນວິນຍານເປັນປັດໄຈ ນາມທີ່ມີວິນຍານເປັນເຫດຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ທີ່ມີນາມເປັນເຫດຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະທີ່ມີອາຍະຕະນະທີ ໖ ເປັນ ເຫດຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາທີ່ມີຜັດສະເປັນເຫດຈຶ່ງມີ ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໕໐໙] ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານທີ່ສຳປະຍຸດດ້ວຍສັງຂານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມທີ່ສຳປະຍຸດດ້ວຍວິນຍານຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ທີ່ສຳປະຍຸດດ້ວຍນາມຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະທີ່ສຳປະຍຸດດ້ວຍອາຍະຕະນະທີ ໖ ຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາທີ່ສຳປະຍຸດດ້ວຍຜັດສະຈຶ່ງມີ ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໕໑໐] ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ແມ່ນຍ້ອນວິນຍານເປັນປັດໄຈ ສັງຂານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ແມ່ນຍ້ອນນາມເປັນປັດໄຈ ວິນຍານຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ແມ່ນຍ້ອນອາຍະຕະນະທີ ໖ ເປັນປັດໄຈ ນາມຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ແມ່ນຍ້ອນຜັດສະເປັນປັດໄຈ ອາ

ຍະຕະນະທີ ໖ ຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ແມ່ນຍ້ອນເວທະນາເປັນປັດໄຈ ຜັດສະຈຶ່ງມີ ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ໔-໕. ໂສຕະ - ກາຍະວິນຍານຈິດ

[໓໑໑] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂສຕະວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີສຽງເປັນອາລົມເກີດຂຶ້ນ ຯລຯ ຄານະວິນຍານທີ່ປະກອບດ້ວຍອຸເປກຂາ ມີກິ່ນເປັນອາລົມເກີດຂຶ້ນ ຯລຯ ຊິວຫາວິນຍານທີ່ປະກອບດ້ວຍອຸເປກຂາ ມີຣົດເປັນອາລົມເກີດຂຶ້ນ ຯລຯ ກາຍະວິນຍານທີ່ປະກອບດ້ວຍສຸກມີໂຜດຖັບພະເປັນອາລົມເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ໃນ ສະໄໝໃດໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໑໔] ບັນດາປັດຈະຍາການເຫຼົ່ານັ້ນ ສັງຂານ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ສັງຂານ ຯລຯ

ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງກາຍ ຄວາມສຸກທາງກາຍ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກກາຍສຳຜັດນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນເວທະນາແລ້ວ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ

ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ຜ. ສຳປະຕິດສະນະຈິດ

[໓໑໓] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນທາດທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ມີໂຜດຖັບພະເປັນອາລົມ ຫຼືຜາຣົບອາລົມໃດໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໑໔] ບັນດາປັດຈະຍາການເຫຼົ່ານັ້ນ ສັງຂານ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ສັງຂານ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນສັງຂານເປັນ ປັດໄຈ ວິນຍານຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມ ທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນອາລົມ ພາວະທີ່ຈິດຕັດສິນອາລົມນັ້ນ ນີ້ ຮຽກວ່າ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ຖ. ໂສມະນັດສັນຕີຣະນະຈິດ

[໓໑໕] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນວິນຍານທາດທີ່ເປັນກຸສົນວິບາກ ປະກອບດ້ວຍໂສມະນັດ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼືຜາຣົບອາລົມໃດ ໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມການາວະຈອນ ກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໑໖] ບັນດາປັດຈະຍາການເຫຼົ່ານັ້ນ ສັງຂານ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ສັງຂານ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດນີ້ ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນອາລົມ ພາວະທີ່ຈິດຕັດສິນອາລົມນັ້ນ ນີ້ ຮຽກວ່າ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ໗. ອຸເປກຂາສັນຕີຣະນະຈິດ

[໖໑໗] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນວິນຍານທາດທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼືຜາຣົບອາລົມໃດ ໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໖໑໘] ບັນດາປັດຈະຍາການເຫຼົ່ານັ້ນ ສັງຂານ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ສັງຂານ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມ ທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນອາລົມ ພາວະທີ່ຈິດຕັດສິນອາລົມ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ກາມາວະຈອນວິປາກະຈິດ ໗

[໓໑໙] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນວິນຍານທາດທີ່ເປັນວິບາກ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ຯລຯ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ຯລຯ ປະກອບດ້ວຍ ອຸເປກຂາ ສຳປະຍຸດດ້ວຍຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼືຜາຣົບອາລົມໃດ ໆ ເກີດຂຶ້ນໂດຍມີເຫດດຶງຈູງ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໘໐] ບັນດາປັດຈະຍາການເຫຼົ່ານັ້ນ ສັງຂານ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ສັງຂານ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ເປັນແນວໃດ?

ສັດທາ ຄວາມເຊື່ອ ກິຣິຍາທີ່ປົງໃຈເຊື່ອ ຄວາມເຫຼື້ອມໃສຍິ່ງ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ

ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນອາລົມ ພາວະທີ່ຈິດຕັດສິນອາລົມນັ້ນ ນີ້ຮຽກວ່າ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ຮູບປາວະຈອນວິປາກະຈິດ

[໓໔໑] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກການ ຯລຯ ບັນລຸປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ໂຍຄາວະຈອນບຸກຄົນສະຫງັດຈາກການ ຯລຯ ບັນລຸປະຖົມຊານທີ່ມີປະຖະວີກະສິນເປັນອາລົມເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ອະຮູບປາວະຈອນວິປາກະຈິດ

[໓໔໔] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງອະຮູບພົບ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງອະຮູບພົບ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ຍ້ອນລະສຸກແລະທຸກໄດ້ ຯລຯ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະສັນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ສັ່ງສົມອະຮູບປາວະຈອນກຸສົນກຳນັ້ນ ໆ ໄວ້ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້

## ໂລກຸດຕະຣະວິປາກະຈິດ

[໓໔໓] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ໂຍຄາວະຈອນບຸກຄົນສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນສູນຍະຕະເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກ ຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ສະພາວະທຳເຫຼົ່ານີ້ມີການເກີດຂຶ້ນດ້ວຍອາການແບບນີ້

### ອະກຸສົນວິປາກະຈິດ ໗

### ໑-໕. ຈັກຂຸ-ກາຍະວິນຍານຈິດ

[໓໔໔] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ຈັກຂຸວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມເກີດຂຶ້ນ ຯລຯ
ໂສຕະວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີສຽງເປັນອາລົມເກີດຂຶ້ນ ຯລຯ

ຄານະວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີກິ່ນເປັນອາລົມເກີດຂຶ້ນ ຯລຯ

ຊິວຫາວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຣົດເປັນອາລົມເກີດຂຶ້ນ ຯລຯ

ກາຍະວິນຍານທີ່ເປັນວິບາກ ປະກອບດ້ວຍທຸກ ມີໂຜດຖັບພະເປັນອາລົມເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມອະກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານ

ຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໔໕] ບັນດາປັດຈະຍາການເຫຼົ່ານັ້ນ ສັງຂານ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ສັງຂານ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ກາຍະວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມບໍ່ສະບາຍທາງກາຍ ຄວາມທຸກທາງກາຍ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນເວທະນາແລ້ວ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ໖. ສຳປະຕິດສະນະຈິດ

[໓໔໖] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນທາດທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ມີໂຜດຖັບພະເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມອະກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໔໗] ບັນດາປັດຈະຍາການເຫຼົ່ານັ້ນ ສັງຂານ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ສັງຂານ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນອາລົມ ພາວະທີ່ຈິດຕັດສິນອາລົມນັ້ນ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ຖ. ອຸເປກຂາສັນຕີຣະນະຈິດ

[໓໔໗] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນວິນຍານທາດທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມອະກຸສົນກຳໄວ້ ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໔໘] ບັນດາປັດຈະຍາການເຫຼົ່ານັ້ນ ສັງຂານ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ສັງຂານ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນສັງຂານ ເປັນປັດໄຈ ວິນຍານຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ອະເຫຕຸກະກິຣິຍາຈິດ ໖

[໖໖໐] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນທາດທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກແຫ່ງກຳ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມຯລຯ ຫຼື ມີໂຜດຖັບພະເປັນອາລົມເກີດຂຶ້ນຯລຯ ມະໂນວິນຍານທາດທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກແຫ່ງກຳ ປະກອບດ້ວຍໂສມະນັດ ມີຮູບເປັນອາລົມ ຯລຯ ຫຼື ມີທຳເປັນອາລົມເກີດຂຶ້ນ ຯລຯ ມະໂນວິນຍານທາດທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກແຫ່ງກຳ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ກາມາວະຈອນກິຣິຍາຈິດ ໗

[໖໖໑] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນວິນຍານທາດທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກແຫ່ງກຳ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ຯລຯ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານເກີດຂຶ້ນ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມຫຼືຜາຣົບອາລົມໃດ ໆ ເກີດຂຶ້ນໂດຍມີເຫດດຶງຈູງໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານ ເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈເວທະນາຈຶ່ງມີ ຍ້ອນເວທະນາເປັນ

ປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ຮູບປາວະຈອນກິຣິຍາຈິດ

[໓໓໔] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ພຣະຂີນາສົບຈະເລີນອະຮູບປາວະຈອນຊານທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກຂອງກຳ ແຕ່ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ສະຫງັດຈາກການ ໆລໆ ບັນລຸປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍະຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໓໓] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ພຣະຂີນາສົບຈະເລີນອະອະຮູບປາວະຈອນຊານທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກແຫ່ງກຳ ແຕ່ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນກ້າວລ່ວງ ອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ໆລໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ອັບພະຍາກະຕະນິດເທດ ຈົບ

# ໑໔. ອະວິດຊາມູລະກະກຸສະລະນິດເທດ

## ກາມາວະຈອນກຸສົນຈິດ ໘

### ມະຫາກຸສົນຈິດດວງທີ ໑

[໓໓໔] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນ ເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ມີຮູບເປັນອາລົມ ໆລໆ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໓໕] ບັນດາປັດຈະຍາການເຫຼົ່ານັ້ນ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ໆລໆ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ເປັນແນວໃດ?

ສັດທາ ຄວາມເຊື່ອ ກິຣິຍາທີ່ປົງໃຈເຊື່ອ ຄວາມເຫຼື້ອມໃສຍິ່ງ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ

ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນອາລົມ ພາວະທີ່ຈິດຕັດສິນອາລົມນັ້ນ ນີ້ຮຽກວ່າ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໓໖] ໃນສະໄໝນັ້ນ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນ ປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໓໗] ໃນສະໄໝນັ້ນ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ຍ້ອນນາມຮູບເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໓໘] ໃນສະໄໝນັ້ນ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ຍ້ອນນາມຮູບເປັນປັດໄຈ

ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ມະຫາກຸສົນຈິດດວງທີ ໔ - ໘

[໓໓໙] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ປະກອບ

ດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ໂດຍມີເຫດດີງຈູງ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ຯລຯ ໂດຍມີເຫດດີງ ຈູງ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍອຸເປກຂາ ວິບ ປະຍຸດຈາກຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໂດຍ ມີເຫດດີງຈູງ ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງ ຂານເປັນປັດໄຈວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະ ຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວ ທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກ ຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດ ໄຈ ຊະຣາມໍຣະນະຈຶ່ງມີ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ຣູບປາວະຈອນກຸສົນ

[໓໔໐] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງຣູບພົບ ສະຫງັດຈາກກາມ ຯລຯ ບັນລຸ ປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນອະວິດຊາເປັນ ປັດໄຈສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງ ມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະ ຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈປະສາທະຈຶ່ງມີ ຍ້ອນປະ ສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ອະຣູບປາວະຈອນກຸສົນ

[໓໔໑] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງອະຣູບພົບ ຍ້ອນກ້າວລ່ວງອາກິນຈັນຍາ ຍະຕະນະໄດ້ໂດຍປະການທັງປວງ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາ ສັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດ ໃນສະໄໝ ນັ້ນ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນ ຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ

ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກ ເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້

## ໂລກຸດຕະຣະກຸສົນ

[໓໔໔] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກການ ໗ລ໗ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້

**ອະວິດຊາມູລະກະກຸສະລະນິດເທດ ຈົບ**

# ໑໓. ກຸສະລະມູລະກະວິປາກະນິດເທດ

## ອະເຫຕຸກະກຸສົນວິປາກະຈິດ

### ໑. ຈັກຂຸວິນຍານຈິດ

[໓໔໕] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ຈັກຂຸວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແບບນີ້

[໓໔໔] ບັນດາປັດຈະຍາການເຫຼົ່ານັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຯລຯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ໔ - ໙. ໂສຕະວິນຍານ - ອຸເປກຂາສັນຕີຣະນະຈິດ

[໓໔໕] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂສຕະວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີສຽງເປັນອາລົມເກີດຂຶ້ນ ຯລຯ ຄານະວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີກິ່ນເປັນອາລົມເກີດຂຶ້ນ ຯລຯ ຊິວຫາວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາມີຣົດເປັນອາລົມເກີດຂຶ້ນ ຯລຯ

ກາຍະວິນຍານທີ່ເປັນວິບາກ ປະກອບດ້ວຍສຸກ ມີໂຜດຖັບພະເປັນອາລົມເກີດຂຶ້ນຯລຯ

ມະໂນທາດທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ຫຼື ມີໂຜດຖັບພະເປັນອາລົມ ຯລຯ ມະໂນວິນຍານທາດທີ່ເປັນວິບາກ ປະກອບດ້ວຍໂສມະນັດ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ຯລຯ ມະໂນວິນຍານທາດທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳ ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ກາມາວະຈອນວິປາກະຈິດ ໙

[໓໔໖] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນວິນຍານທາດທີ່ເປັນວິບາກ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານເກີດຂຶ້ນ ຯລຯ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ຯລຯ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ວິບ

ປະຍຸດຈາກຍານ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼືພາຣົບອາລົມໃດ ໆ ເກີດຂຶ້ນໂດຍມີເຫດດຶງຈູງ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

**ຮູບປາວະຈອນວິປາກະຈິດ**

[໖໔ກ] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນໂຍຄາວະຈອນບຸກຄົນສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນວິບາກເຊິ່ງມີປະຖະວີກະສິນ ເປັນອາລົມ ຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

**ອະຮູບປາວະຈອນວິປາກະຈິດ**

[໖໔ຂ] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງອະຮູບພົບ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນໂຍຄາວະຈອນບຸກຄົນ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ຍ້ອນລະສຸກແລະທຸກໄດ້ ຯລຯ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາສັນຍາ ຍະຕະນະສັນຍາເຊິ່ງເປັນວິບາກ

ຍ້ອນໄດ້ເຮັດໄດ້ສັ່ງສົມອະຣູບປາວະຈອນກຸສົນກຳນັ້ນ ໆ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ໂລກຸດຕະຣະວິປາກະຈິດ

[໓໔໙] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດ ໓ ະທຸກໃຫ້ເຖິງ ນິບພານເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກການ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ໂຍຄາວະຈອນບຸກຄົນ ສະຫງັດຈາກການ ຯລຯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ປະສາທະຈຶ່ງມີ ຍ້ອນປະສາທະເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

**ກຸສະລະມູລະກະວິປາກະນິດເທດ ຈົບ**

# ໑໔. ອະກຸສົນມູລະກະວິປາກະນິດເທດ

## ອະກຸສົນວິປາກະຈິດ ໗

### ໑. ຈັກຂຸວິນຍານຈິດ

[໕໕໐] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ຈັກຂຸວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມອະກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໕໕໑] ບັນດາປັດຈະຍາການເຫຼົ່ານັ້ນ ຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນອະກຸສົນເປັນປັດໄຈ ສັງຂານຈຶ່ງມີ ฯລฯ

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

### ໔ - ໖. ໂສຕະວິນຍານ - ສຳປະຕິດສະນະຈິດ

[໕໕໔] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂສຕະວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີສຽງເປັນອາລົມເກີດຂຶ້ນฯລฯ ຄານະວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີກິ່ນເປັນອາລົມເກີດຂຶ້ນ ฯລฯ

ຊິວຫາວິນຍານທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຣົດເປັນອາລົມເກີດຂຶ້ນ ฯລฯ

ກາຍະວິນຍານທີ່ເປັນວິບາກ ປະກອບດ້ວຍທຸກ ມີໂຜດຖັບພະເປັນອາລົມເກີດຂຶ້ນ ฯລฯ ມະໂນທາດທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ฯລฯ ມີໂຜດຖັບພະເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມອະກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາ

ເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

## ກ. ອຸເປກຂາສັນຕີຣະນະຈິດ

[໓໔໓] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນວິນຍານທາດທີ່ເປັນວິບາກ ປະກອບດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມອະກຸສົນກຳ ໄວ້ໃນສະໄໝໃດ ໃນສະໄໝນັ້ນ ຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ຍ້ອນນາມເປັນປັດໄຈ

ອາຍະຕະນະທີ ໖ ຈຶ່ງມີ ຍ້ອນອາຍະຕະນະທີ ໖ ເປັນປັດຈະໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

[໓໔໔] ບັນດາປັດຈະຍາການເຫຼົ່ານັ້ນ ຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ນີ້ຮຽກວ່າ ຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ

ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ

ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ນີ້ຮຽກວ່າ ຍ້ອນວິນຍານເປັນປັດໄຈ ນາມຈຶ່ງມີ

ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຍ້ອນນາມເປັນປັດໄຈ ອາຍະຕະນະທີ ໖ ຈຶ່ງມີ

ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ນີ້ຮຽກວ່າ ຍ້ອນອາຍະຕະນະທີ ໖ ເປັນປັດໄຈ ຜັດສະຈຶ່ງມີ

ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ ເປັນແນວໃດ?

ຄວາມຕັດສິນອາລົມ ກິຣິຍາທີ່ຕັດສິນໃຈ ພາວະທີ່ຈິດຕັດສິນອາລົມນັ້ນ ນີ້ຮຽກວ່າ ຍ້ອນເວທະນາເປັນປັດໄຈ ອະທິໂມກຈຶ່ງມີ

ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ ເປັນແນວໃດ?

ເວັ້ນອະທິໂມກແລ້ວ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ຍ້ອນອະທິໂມກເປັນປັດໄຈ ພົບຈຶ່ງມີ

ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ເປັນແນວໃດ?

ຄວາມເກີດ ຄວາມເກີດພ້ອມ ຄວາມບັງເກີດ ຄວາມບັງເກີດສະເພາະ ຄວາມຜາກົດແຫ່ງສະພາວະທຳນັ້ນ ໆ ນີ້ຮຽກວ່າ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ

ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ເປັນແນວໃດ?

ຊະຣາ ໑ ມໍຣະນະ ໑

ໃນຊະຣາແລະມໍຣະນະນັ້ນ ຊະຣາ ເປັນແນວໃດ?

ຄວາມແກ່ ຄວາມຊຸດໂຊມ ຄວາມເສື່ອມອາຍຸແຫ່ງສະພາວະທຳນັ້ນ ໆ ນີ້ຮຽກວ່າ ຊະຣາ

ມໍຣະນະ ເປັນແນວໃດ?

ຄວາມສິ້ນໄປ ຄວາມເສື່ອມໄປ ຄວາມແຕກ ຄວາມແຕກສະຫຼາຍ ຄວາມບໍ່ທ່ຽງ ຄວາມຫາຍໄປແຫ່ງສະພາວະທຳນັ້ນ ໆ ນີ້ຮຽກວ່າ ມໍຣະນະ ຊະຣາແລະມໍຣະນະດັ່ງທີ່ກ່າວມານີ້ ນີ້ຮຽກວ່າ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ

ຄຳວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້ ໄດ້ແກ່ ກອງທຸກ ທັງມວນນີ້ໄປຮ່ວມ ມາຮ່ວມ ປະຊຸມຮ່ວມ ຜາກົດຂຶ້ນດ້ວຍອາການແນວນີ້

ຍ້ອນແນວນັ້ນຈຶ່ງຮຽກວ່າ ກອງທຸກທັງມວນນີ້ມີການເກີດຂຶ້ນດ້ວຍອາການແນວນີ້

**ອະກຸສົນມູລະກະວິປາກະນິດເທດ ຈົບ**

**ອະພິທຳມະພາຊະນີ ຈົບ**

**ປະຕິດຈະສະມຸປະປາທະວິພັງ ຈົບ**

# ຖ. ສະຕິປັດຖານວິພັງ

## ໑. ສຸດຕັນຕະພາຊະນີ

[໓໕໕] ສະຕິປັດຖານ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍພາຍໃນຕົນຢູ່
ພິຈາລະນາເຫັນກາຍໃນກາຍພາຍນອກຕົນຢູ່
ພິຈາລະນາເຫັນກາຍໃນກາຍພາຍໃນຕົນແລະພາຍນອກຕົນຢູ່
ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດ ໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາພາຍໃນຕົນຢູ່
ພິຈາລະນາເຫັນເວທະນາໃນເວທະນາພາຍນອກຕົນຢູ່
ພິຈາລະນາເຫັນເວທະນາໃນເວທະນາພາຍໃນຕົນແລະພາຍນອກຕົນຢູ່
ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດ ໃນໂລກໄດ້

໓. ພິຈາລະນາເຫັນຈິດໃນຈິດພາຍໃນຕົນຢູ່
ພິຈາລະນາເຫັນຈິດໃນຈິດພາຍນອກຕົນຢູ່
ພິຈາລະນາເຫັນຈິດໃນຈິດພາຍໃນຕົນແລະພາຍນອກຕົນຢູ່
ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນ ໂລກໄດ້

໔. ພິຈາລະນາເຫັນທຳໃນທຳພາຍໃນຕົນຢູ່
ພິຈາລະນາເຫັນທຳໃນທຳພາຍນອກຕົນຢູ່
ພິຈາລະນາເຫັນທຳໃນທຳພາຍໃນຕົນແລະພາຍນອກຕົນຢູ່
ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນ ໂລກໄດ້

# ໑. ກາຍານຸປັດສະນານິດເທດ

## ເຫັນກາຍໃນກາຍພາຍໃນຕົນ

[໓໔໓] ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຕົນຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ພິຈາລະນາເຫັນກາຍພາຍໃນຕົນ ເບື້ອງເທິງແຕ່ພື້ນຕີນຂຶ້ນໄປ ເບື້ອງຕ່ຳແຕ່ປາຍຜົມລົງມາ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍສິ່ງບໍ່ສະອາດຕ່າງ ໆ ວ່າໃນກາຍນີ້ ມີ ຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ບີ ສະເລດ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ

ພິກຂຸນັ້ນເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີແລ້ວຈຶ່ງສົ່ງຈິດໄປໃນກາຍພາຍນອກຕົນ ເຫັນກາຍໃນກາຍພາຍນອກຕົນ

ພິກຂຸພິຈາລະນາເຫັນກາຍໃນກາຍພາຍນອກຕົນຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ພິຈາລະນາເຫັນກາຍພາຍນອກຕົນ ເບື້ອງເທິງແຕ່ພື້ນຕີນຂຶ້ນໄປ ເບື້ອງຕ່ຳແຕ່ປາຍຜົມລົງມາ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍສິ່ງທີ່ບໍ່ສະອາດຕ່າງ ໆ ວ່າ ໃນກາຍຂອງເຂົາມີ ຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ບີ ສະເລດ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ

ພິກຂຸນັ້ນເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີແລ້ວຈຶ່ງສົ່ງຈິດໄປໃນກາຍພາຍໃນຕົນແລະພາຍນອກຕົນ

ເຫັນກາຍໃນກາຍພາຍໃນຕົນແລະພາຍນອກຕົນ

ພິກຂຸພິຈາລະນາເຫັນກາຍໃນກາຍພາຍໃນຕົນແລະພາຍນອກຕົນຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ພິຈາລະນາເຫັນກາຍພາຍໃນຕົນແລະພາຍນອກຕົນ ເບື້ອງເທິງ ແຕ່ພື້ນຕີນຂຶ້ນໄປ ເບື້ອງຕ່ຳແຕ່ປາຍຜົມລົງມາ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍສິ່ງທີ່ບໍ່ສະອາດຕ່າງ ໆ ວ່າ ໃນກາຍນີ້ ມີຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງພືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ບີ ສະເລດ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ

ດ້ວຍອາການແນວນີ້ ພິກຂຸຊື່ວ່າພິຈາລະນາເຫັນກາຍໃນກາຍພາຍໃນຕົນແລະພາຍນອກຕົນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

[໓໔໗] ໃນຄຳວ່າ ພິຈາລະນາເຫັນ ນັ້ນ ການພິຈາລະນາເຫັນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ການພິຈາລະນາເຫັນ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍການພິຈາລະນາເຫັນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ພິຈາລະນາເຫັນ

[໓໔໘] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ດຳເນີນໄປຢູ່ ຮັກສາຢູ່ ເປັນໄປຢູ່ ໃຫ້ເປັນໄປຢູ່ ທ່ຽວໄປຢູ່ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

[໓໔໙] ໃນຄຳວ່າ ມີຄວາມພຽນນັ້ນ ຄວາມພຽນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ນີ້ຮຽກວ່າ ຄວາມພຽນ ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວ ດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍຄວາມພຽນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີຄວາມພຽນ

[໓໕໐] ໃນຄຳວ່າ ມີສຳປະຊັນຍະ ນັ້ນ ສຳປະຊັນຍະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ສຳປະຊັນຍະ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍສຳປະຊັນຍະນີ້ ຍ້ອນແນວນັ້ນ ຈຶ່ງຮຽກວ່າ ມີສຳປະຊັນຍະ

[໓໕໑] ໃນຄຳວ່າ ມີສະຕິ ນັ້ນ ສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ນີ້ຮຽກວ່າ ສະຕິ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍສະຕິນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີສະຕິ

[໓໕໔] ໃນຄຳວ່າ ເພື່ອກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ນັ້ນໂລກ ເປັນແນວໃດ?

ກາຍນັ້ນ ໆ ຊື່ວ່າໂລກ ອຸປາທານຂັນທັງ ໕ ກໍຊື່ວ່າໂລກ ນີ້ຮຽກວ່າ ໂລກ

ອະພິດຊາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ຄວາມກຳໜັດແຮງແຫ່ງຈິດ ນີ້ຮຽກວ່າ ອະພິດຊາ

ໂທມະນັດ ເປັນແນວໃດ?

ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສໍາຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສໍາຜັດ ນີ້ຮຽກວ່າ ໂທມະນັດ

ອະພິດຊາແລະໂທມະນັດນີ້ ດັ່ງທີ່ກ່າວມານີ້ ຖືກກໍາຈັດ ຖືກກໍາຈັດຮາບຄາບ ສະງົບ ຣະງັບ ສະງົບງຽບ ດັບໄປ ດັບໄປຢ່າງຮາບຄາບ ຖືກເຮັດໃຫ້ພິນາດໄປ ຖືກເຮັດໃຫ້ພິນາດຍ່ອຍຍັບໄປ ຖືກເຮັດໃຫ້ເຫືອດແຫ້ງໄປ ຖືກເຮັດໃຫ້ເຫືອດແຫ້ງໄປດ້ວຍດີ ຖືກເຮັດໃຫ້ສິ້ນໄປໃນໂລກນີ້

ຍ້ອນແນວນັ້ນຈຶ່ງຮຽກວ່າ ເພິ່ງກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້

**ກາຍານຸປັດສະນານິດເທດ ຈົບ**

# ໔. ເວທະນານຸປັດສະນານິດເທດ

## ເຫັນເວທະນາໃນເວທະນາພາຍໃນຕົນ

[໓໘໓] ພິກຂຸພິຈາລະນາເຫັນເວທະນາໃນເວທະນາພາຍໃນຕົນຢູ່ ເປັນແນວໃດ?

ພິກຂຸໃນທໍາວິໄນນີ້ເມື່ອສະເຫວີຍສຸກຂະເວທະນາ ກໍຮູ້ແຈ້ງວ່າ ເຮົາສະເຫວີຍສຸກຂະເວທະນາ ເມື່ອສະເຫວີຍທຸກຂະເວທະນາ ກໍຮູ້ແຈ້ງວ່າ ເຮົາສະເຫວີຍທຸກຂະເວທະນາ ເມື່ອສະເຫວີຍອະທຸກຂະມະສຸຂະເວທະນາ ກໍຮູ້ແຈ້ງ ວ່າ ເຮົາສະເຫວີຍອະທຸກຂະມະສຸຂະເວທະນາ ເມື່ອສະເຫວີຍສຸກຂະເວທະນາມີອາມິດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍ ສຸກຂະເວທະນາມີອາມິດ ຫຼື ເມື່ອສະເຫວີຍສຸກຂະເວທະນາບໍ່ມີອາມິດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍສຸກຂະເວທະນາບໍ່ມີອາມິດ ເມື່ອສະເຫວີຍທຸກຂະເວທະນາມີອາມິດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍທຸກຂະເວທະນາມີອາມິດ ຫຼື ເມື່ອສະເຫວີຍທຸກຂະເວທະນາບໍ່ມີອາມິດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍທຸກຂະເວທະນາບໍ່ມີອາມິດ ເມື່ອສະເຫວີຍ ອະທຸກຂະມະສຸຂະເວທະນາມີອາມິດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍອະທຸກຂະມະສຸຂະເວທະນາມີອາມິດ ຫຼື ເມື່ອສະເຫວີຍອະທຸກຂະມະສຸຂະເວທະນາບໍ່ມີອາມິດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍອະທຸກຂະມະສຸຂະເວທະນາບໍ່ມີອາມິດພິກຂຸນັ້ນເສບ ຈະເລີນ ເຮັດໃຫ້ຫຼາຍ ກໍານົດນິມິດນັ້ນດ້ວຍດີ ເມື່ອເສບຈະເລີນເຮັດໃຫ້ຫຼາຍ ກໍານົດນິມິດນັ້ນດ້ວຍດີແລ້ວຈຶ່ງສົ່ງຈິດໄປໃນເວທະນາພາຍນອກຕົນ ເຫັນເວທະນາໃນເວທະນາພາຍນອກຕົນ

ພິກຂຸພິຈາລະນາເຫັນເວທະນາໃນເວທະນາພາຍນອກຕົນຢູ່ ເປັນແນວໃດ?

ພິກຂຸໃນທໍາວິໄນນີ້ຮູ້ແຈ້ງບຸກຄົນຜູ້ກໍາລັງສະເຫວີຍສຸກຂະເວທະນາວ່າ ເຂົາກໍາລັງສະເຫວີຍສຸກຂະເວທະນາ ຮູ້ແຈ້ງບຸກຄົນຜູ້ກໍາລັງສະເຫວີຍທຸກຂະເວທະນາວ່າ ເຂົາກໍາລັງສະເຫວີຍທຸກຂະເວທະນາ ຮູ້ແຈ້ງບຸກຄົນຜູ້ກໍາລັງສະເຫວີຍອະທຸກຂະມະສຸຂະເວທະນາວ່າ ເຂົາ

ກຳລັງສະເຫວີຍອະທຸກຂະມະສຸຂະເວທະນາ ຮູ້ແຈ້ງບຸກຄົນຜູ້ກຳລັງສະເຫວີຍສຸກຂະເວທະນາມີອາມິດວ່າ ເຂົາກຳລັງສະເຫວີຍສຸກຂະເວທະນາມີອາມິດ ຫຼື ຮູ້ແຈ້ງບຸກຄົນຜູ້ກຳລັງສະເຫວີຍສຸກຂະເວທະນາບໍ່ມີອາມິດວ່າ ເຂົາກຳລັງສະເຫວີຍສຸກຂະເວທະນາບໍ່ມີອາມິດ ຮູ້ແຈ້ງບຸກຄົນຜູ້ກຳລັງສະເຫວີຍທຸກຂະເວທະນາມີອາມິດວ່າ ເຂົາກຳລັງສະເຫວີຍທຸກຂະເວທະນາມີອາມິດ ຫຼື ຮູ້ແຈ້ງບຸກຄົນຜູ້ກຳລັງສະເຫວີຍທຸກຂະເວທະນາບໍ່ມີອາມິດວ່າ ເຂົາກຳລັງສະເຫວີຍທຸກຂະເວທະນາບໍ່ມີອາມິດ ຮູ້ແຈ້ງບຸກຄົນຜູ້ກຳລັງສະເຫວີຍອະທຸກຂະມະສຸຂະເວທະນາມີອາມິດວ່າ ເຂົາກຳລັງສະເຫວີຍອະທຸກຂະມະສຸຂະເວທະນາມີອາມິດ ຫຼື ຮູ້ແຈ້ງບຸກຄົນຜູ້ກຳລັງສະເຫວີຍອະທຸກຂະມະສຸຂະເວທະນາບໍ່ມີອາມິດວ່າ ເຂົາກຳລັງສະເຫວີຍອະທຸກຂະມະສຸຂະເວທະນາບໍ່ມີອາມິດ

ພິກຂຸນັ້ນເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີແລ້ວ ຈຶ່ງສົ່ງຈິດໄປໃນເວທະນາພາຍໃນຕົນແລະພາຍນອກຕົນເຫັນເວທະນາໃນເວທະນາພາຍໃນຕົນແລະພາຍນອກຕົນ

ພິກຂຸພິຈາລະນາເຫັນເວທະນາໃນເວທະນາພາຍໃນຕົນ ແລະພາຍນອກຕົນຢູ່ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຮູ້ແຈ້ງສຸກຂະເວທະນາວ່າ ເປັນສຸກຂະເວທະນາ ຮູ້ແຈ້ງທຸກຂະເວທະນາວ່າ ເປັນທຸກຂະເວທະນາ ຮູ້ແຈ້ງອະທຸກຂະມະສຸຂະເວທະນາວ່າ ເປັນອະທຸກຂະມະສຸຂະເວທະນາ ຮູ້ແຈ້ງສຸກຂະເວທະນາມີອາມິດວ່າເປັນສຸກຂະເວທະນາມີອາມິດ ຫຼື ຮູ້ແຈ້ງສຸກຂະເວທະນາບໍ່ມີອາມິດວ່າ ເປັນສຸກຂະເວທະນາບໍ່ມີອາມິດ ຮູ້ແຈ້ງທຸກຂະເວທະນາມີອາມິດວ່າ ເປັນທຸກຂະເວທະນາມີອາມິດ ຫຼື ຮູ້ແຈ້ງທຸກຂະເວທະນາບໍ່ມີອາມິດວ່າ ເປັນທຸກຂະເວທະນາບໍ່ມີອາມິດ ຮູ້ແຈ້ງອະທຸກຂະມະສຸຂະເວທະນາມີອາມິດວ່າ ເປັນອະທຸກຂະມະສຸຂະເວທະນາມີອາມິດ ຫຼື ຮູ້ແຈ້ງອະທຸກຂະມະສຸຂະເວທະນາບໍ່ມີອາມິດວ່າ ເປັນອະທຸກຂະມະສຸຂະເວທະນາບໍ່ມີອາມິດ

ດ້ວຍອາການແນວນີ້ ພິກຂຸຊື່ວ່າພິຈາລະນາເຫັນເວທະນາໃນເວທະນາພາຍໃນຕົນແລະພາຍນອກຕົນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພື່ອກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

[໓໖໘] ໃນຄຳວ່າ ພິຈາລະນາເຫັນ ຯລຯ ໃນຄຳວ່າ ຢູ່ ຯລຯ ໃນຄຳວ່າ ມີຄວາມພຽນ ຯລຯ ໃນຄຳວ່າ ມີສຳປະຊັນຍະ ຯລຯ ໃນຄຳວ່າ ມີສະຕິ ຯລຯ ໃນຄຳວ່າ ເພື່ອກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ນັ້ນ ໂລກ ເປັນແນວໃດ?

ເວທະນານັ້ນ ໆ ຊື່ວ່າໂລກ ແມ່ນອຸປາທານຂັນທັງ ໕ ກໍຊື່ວ່າໂລກ ນີ້ຮຽກວ່າ ໂລກ

ອະພິດຊາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ໆລໆ ຄວາມກຳໜັດແຮງແຫ່ງຈິດ ນີ້ຮຽກວ່າ ອະພິດຊາໂທມະນັດ ເປັນແນວໃດ?

ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍ ເປັນທຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ໂທມະນັດ

ອະພິດຊາແລະໂທມະນັດນີ້ ດັ່ງທີ່ກ່າວມານີ້ ຖືກກຳຈັດ ຖືກກຳຈັດຮາບຄາບ ສະງົບ ຣະງັບ ສະງົບງຽບ ດັບໄປ ດັບໄປຢ່າງຮາບຄາບ ຖືກເຮັດໃຫ້ພິນາດໄປ ຖືກເຮັດໃຫ້ພິນາດຍ່ອຍຍັບໄປ ຖືກເຮັດໃຫ້ເຫືອດແຫ້ງໄປ ຖືກເຮັດໃຫ້ເຫືອດແຫ້ງໄປດ້ວຍດີ ຖືກເຮັດໃຫ້ສິ້ນໄປໃນໂລກນີ້

ຍ້ອນແນວນັ້ນຈຶ່ງຮຽກວ່າ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

**ເວທະນານຸປັດສະນານິດເທດ ຈົບ**

# ໓. ຈິດຕານຸປັດສະນານິດເທດ

## ເຫັນຈິດໃນຈິດພາຍໃນຕົນ

[໓໙໕] ພິກຂຸພິຈາລະນາເຫັນຈິດໃນຈິດພາຍໃນຕົນຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຮູ້ແຈ້ງຈິດມີຣາຄະວ່າ ຈິດຂອງເຮົາມີຣາຄະ ຫຼື ຮູ້ແຈ້ງຈິດປາສະຈາກຣາຄະວ່າ ຈິດຂອງເຮົາປາສະຈາກຣາຄະ ຮູ້ແຈ້ງຈິດມີໂທສະວ່າ ຈິດຂອງເຮົາມີໂທສະ ຫຼືຮູ້ແຈ້ງ ຈິດປາສະຈາກໂທສະວ່າ ຈິດຂອງເຮົາປາສະຈາກໂທສະ ຮູ້ແຈ້ງຈິດມີໂມຫະວ່າ ຈິດຂອງເຮົາມີໂມຫະ ຫຼື ຮູ້ແຈ້ງຈິດປາສະຈາກໂມຫະວ່າ ຈິດຂອງເຮົາປາສະຈາກໂມຫະ ຮູ້ແຈ້ງຈິດຫົດຫູ່ວ່າ ຈິດຂອງເຮົາຫົດຫູ່ ຮູ້ແຈ້ງຈິດຟຸ້ງຊ່ານວ່າ ຈິດຂອງເຮົາຟຸ້ງຊ່ານ ຮູ້ແຈ້ງຈິດເປັນມະຫັກຄະຕະວ່າ ຈິດຂອງເຮົາເປັນມະຫັກຄະຕະ ຫຼືຮູ້ແຈ້ງຈິດທີ່ບໍ່ເປັນມະຫັກຄະຕະວ່າ ຈິດຂອງເຮົາບໍ່ເປັນມະຫັກຄະຕະ ຮູ້ແຈ້ງຈິດທີ່ເປັນສະອຸດຕະຣະວ່າ ຈິດຂອງເຮົາເປັນສະອຸດຕະຣະ ຫຼືຮູ້ແຈ້ງຈິດເປັນອະນຸດຕະຣະວ່າ ຈິດຂອງເຮົາເປັນອະນຸດຕະຣະ ຮູ້ແຈ້ງຈິດເປັນສະມາທິວ່າ ຈິດຂອງເຮົາເປັນສະມາທິ ຫຼືຮູ້ແຈ້ງຈິດບໍ່ເປັນສະມາທິ ວ່າຈິດຂອງເຮົາບໍ່ເປັນສະມາທິ ຮູ້ແຈ້ງຈິດຫຼຸດພົ້ນວ່າຈິດຂອງເຮົາຫຼຸດພົ້ນແລ້ວ ຫຼືຮູ້ແຈ້ງຈິດ ທີ່ຍັງບໍ່ຫຼຸດພົ້ນວ່າ ຈິດຂອງເຮົາຍັງບໍ່ຫຼຸດພົ້ນ

ພິກຂຸນັ້ນເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີແລ້ວຈຶ່ງສົ່ງຈິດໄປໃນຈິດພາຍນອກຕົນເຫັນຈິດໃນຈິດພາຍນອກຕົນ

ພິກຂຸພິຈາລະນາເຫັນຈິດໃນຈິດພາຍນອກຕົນຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງມີຣາຄະວ່າ ຈິດຂອງເຂົາມີຣາຄະ ຫຼື ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງປາສະຈາກຣາຄະວ່າ ຈິດຂອງເຂົາປາສະຈາກຣາຄະ ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງມີໂທສະວ່າ ຈິດຂອງເຂົາມີໂທສະ ຫຼື ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງປາສະຈາກໂທສະວ່າ ຈິດຂອງເຂົາປາສະຈາກໂທສະ ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງມີໂມຫະວ່າ ຈິດຂອງເຂົາມີໂມຫະ ຫຼືຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງປາສະຈາກໂມຫະວ່າ ຈິດຂອງເຂົາປາສະຈາກໂມຫະ ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງຫົດຫູ່ວ່າ ຈິດຂອງເຂົາຫົດຫູ່ ຫຼື ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງຟຸ້ງຊ່ານວ່າ ຈິດຂອງເຂົາຟຸ້ງຊ່ານ ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງເປັນມະຫັກຄະຕະວ່າ ຈິດຂອງເຂົາເປັນມະຫັກຄະຕະ ຫຼື ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງບໍ່ເປັນມະຫັກຄະຕະວ່າ ຈິດຂອງເຂົາບໍ່ເປັນມະຫັກຄະຕະ ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງເປັນສະອຸດຕະຣະວ່າ ຈິດຂອງເຂົາເປັນສະອຸດຕະຣະ ຫຼື ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງເປັນອະນຸດຕະຣະວ່າ ຈິດຂອງເຂົາເປັນອະນຸດຕະຣະ ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງເປັນສະມາທິວ່າ ຈິດຂອງເຂົາເປັນສະມາທິ ຫຼື ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງບໍ່ເປັນສະມາທິວ່າ ຈິດຂອງເຂົາບໍ່ເປັນສະມາທິ ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງຫຼຸດພົ້ນແລ້ວວ່າ ຈິດຂອງເຂົາຫຼຸດພົ້ນແລ້ວ ຫຼື ຮູ້ແຈ້ງຈິດຂອງຜູ້ນັ້ນເຊິ່ງຍັງບໍ່ຫຼຸດພົ້ນວ່າ ຈິດຂອງເຂົາຍັງບໍ່ຫຼຸດພົ້ນ

ພິກຂຸນັ້ນເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີແລ້ວຈຶ່ງສົ່ງຈິດໄປໃນຈິດພາຍໃນຕົນ ແລະພາຍນອກຕົນເຫັນຈິດໃນຈິດພາຍໃນຕົນແລະພາຍນອກຕົນ

ພິກຂຸພິຈາລະນາເຫັນຈິດໃນຈິດພາຍໃນຕົນແລະພາຍນອກຕົນຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຮູ້ແຈ້ງຈິດມີຣາຄະວ່າ ຈິດມີຣາຄະ ຫຼື ຮູ້ແຈ້ງຈິດປາສະຈາກຣາຄະ ວ່າຈິດປາສະຈາກຣາຄະ ຮູ້ແຈ້ງຈິດມີໂທສະວ່າ ຈິດມີໂທສະ ຫຼື ຮູ້ແຈ້ງຈິດປາສະຈາກໂທສະວ່າຈິດປາສະຈາກໂທສະ ຮູ້ແຈ້ງຈິດມີໂມຫະວ່າ ຈິດມີໂມຫະ ຫຼື ຮູ້ແຈ້ງຈິດ ປາສະຈາກໂມຫະວ່າຈິດປາສະຈາກໂມຫະ ຮູ້ແຈ້ງຈິດຫົດຫູ່ວ່າ ຈິດຫົດຫູ່ ຫຼື ຮູ້ແຈ້ງຈິດຟຸ້ງຊ່ານວ່າ ຈິດຟຸ້ງຊ່ານ ຮູ້ແຈ້ງ ຈິດທີ່ເປັນມະຫັກຄະຕະວ່າ ຈິດເປັນມະຫັກຄະຕະ ຫຼື ຮູ້ແຈ້ງຈິດທີ່ບໍ່ເປັນມະຫັກຄະຕະວ່າຈິດບໍ່ເປັນ ມະຫັກຄະຕະ ຮູ້ແຈ້ງຈິດທີ່ເປັນສະອຸດຕະຣະວ່າ ຈິດເປັນສະອຸດຕະຣະ ຫຼືຮູ້ແຈ້ງຈິດທີ່ເປັນອະນຸດຕະຣະວ່າ ຈິດເປັນອະນຸດຕະຣະ ຮູ້ແຈ້ງຈິດທີ່ເປັນສະມາທິວ່າ ຈິດເປັນສະມາທິ ຫຼື ຮູ້ແຈ້ງຈິດບໍ່ເປັນສະມາທິວ່າ ຈິດບໍ່ເປັນສະມາທິ ຮູ້ແຈ້ງຈິດທີ່ຫຼຸດພົ້ນແລ້ວວ່າ ຈິດຫຼຸດພົ້ນແລ້ວ ຫຼື ຮູ້ແຈ້ງຈິດທີ່ຍັງບໍ່ຫຼຸດພົ້ນວ່າ ຈິດຍັງບໍ່ຫຼຸດພົ້ນ ດ້ວຍອາການແນວນີ້ ພິກຂຸຊື່ວ່າພິຈາລະນາເຫັນຈິດໃນຈິດພາຍໃນຕົນ ແລະພາຍນອກຕົນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພື່ອກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

[໓໒໒] ໃນຄຳວ່າ ພິຈາລະນາເຫັນ ຯລຯ ໃນຄຳວ່າ ຢູ່ ຯລຯ ໃນຄຳວ່າ ມີຄວາມພຽນ ຯລຯ ໃນຄຳວ່າ ມີສຳປະຊັນຍະ ຯລຯ ໃນຄຳວ່າ ມີສະຕິ ຯລຯ ໃນຄຳວ່າ ເພື່ອກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ນັ້ນ ໂລກ ເປັນແນວໃດ?

ຈິດນັ້ນ ໆ ຊື່ວ່າໂລກ ແມ່ນອຸປາທານຂັນ ໕ ກໍຊື່ວ່າໂລກ ນີ້ຮຽກວ່າ ໂລກ

ອະພິດຊາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ຄວາມກຳໜັດແຮງແຫ່ງຈິດ ນີ້ຮຽກວ່າ ອະພິດຊາ

ໂທມະນັດ ເປັນແນວໃດ?

ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ໂທມະນັດ

ອະພິດຊາແລະໂທມະນັດນີ້ດັ່ງທີ່ກ່າວມານີ້ ຖືກກຳຈັດ ຖືກກຳຈັດຮາບຄາບ ສະງົບ ຣະງັບ ສະງົບງຽບ ດັບໄປ ດັບໄປຢ່າງຮາບຄາບ ຖືກເຮັດໃຫ້ພິນາດໄປ ຖືກເຮັດໃຫ້ພິນາດຍ່ອຍຍັບໄປ ຖືກເຮັດໃຫ້ເຫືອດແຫ້ງໄປ ຖືກເຮັດໃຫ້ເຫືອດແຫ້ງໄປດ້ວຍດີ ຖືກເຮັດໃຫ້ສິ້ນໄປໃນໂລກນີ້

ຍ້ອນແນວນັ້ນຈຶ່ງຮຽກວ່າ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

**ຈິດຕານຸປັດສະນານິດເທດ ຈົບ**

# ໔. ທຳມານຸປັດສະນານິດເທດ

## ເຫັນທຳໃນທຳພາຍໃນຕົນ

[໓໒໗] ພິກຂຸພິຈາລະນາເຫັນທຳໃນທຳພາຍໃນຕົນຢູ່ ເປັນແນວໃດ?

## ນີວະຣະນະປັບພະ

ພິກຂຸໃນທຳວິໄນນີ້ຮູ້ກາມສັນທະພາຍໃນຕົນເຊິ່ງມີຢູ່ວ່າ ກາມສັນທະພາຍໃນຕົນຂອງເຮົາມີຢູ່ ຫຼື ຮູ້ກາມສັນທະພາຍໃນຕົນເຊິ່ງບໍ່ມີຢູ່ວ່າ ກາມສັນທະພາຍໃນຕົນຂອງເຮົາບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງກາມສັນທະທີ່ຍັງບໍ່ເກີດ ເຫດລະກາມສັນທະທີ່ເກີດແລ້ວ ແລະເຫດທີ່ກາມສັນທະເຊິ່ງລະໄດ້ແລ້ວຈະບໍ່ເກີດຕໍ່ໄປ ຮູ້ພະຍາບາດພາຍໃນຕົນເຊິ່ງມີຢູ່ ຯລຯ ຮູ້ ຖີນະມິດທະພາຍໃນຕົນເຊິ່ງມີຢູ່ ຯລຯ ຮູ້ອຸດທັດຈະກຸກກຸດຈະພາຍໃນຕົນເຊິ່ງມີຢູ່ ຯລຯ ຮູ້ ວິຈິກິດສາພາຍໃນຕົນເຊິ່ງມີຢູ່ວ່າ ວິຈິກິດສາພາຍໃນຕົນຂອງເຮົາມີຢູ່ ຫຼື ຮູ້ວິຈິກິດສາພາຍໃນຕົນເຊິ່ງບໍ່ມີຢູ່ວ່າ ວິຈິກິດສາພາຍໃນຕົນຂອງເຮົາບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງວິຈິກິດສາທີ່ຍັງບໍ່ເກີດ ເຫດລະວິຈິກິດສາທີ່ເກີດແລ້ວ ແລະເຫດທີ່ ວິຈິກິດສາເຊິ່ງລະໄດ້ແລ້ວຈະບໍ່ເກີດຕໍ່ໄປ

## ໂພດຊັງຄະປັບພະ

ຮູ້ສະຕິສຳໂພດຊົງພາຍໃນຕົນເຊິ່ງມີຢູ່ວ່າ ສະຕິສຳໂພດຊົງພາຍໃນຕົນຂອງເຮົາມີຢູ່ ຮູ້ສະຕິສຳໂພດຊົງພາຍໃນຕົນເຊິ່ງບໍ່ມີຢູ່ວ່າ ສະຕິສຳໂພດຊົງພາຍໃນຕົນຂອງເຮົາ ບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງສະຕິສຳໂພດຊົງທີ່ຍັງບໍ່ເກີດ ແລະເຫດຈະເລີນບໍລິບູນແຫ່ງສະຕິສຳໂພດຊົງທີ່ເກີດແລ້ວ ຮູ້ທຳມະວິຈະຍະສຳໂພດຊົງພາຍໃນຕົນເຊິ່ງມີຢູ່ ຯລຯ ຮູ້ວິຣິຍະສຳໂພດຊົງພາຍໃນຕົນເຊິ່ງມີຢູ່ ຯລຯ ຮູ້ປີຕິສຳໂພດຊົງພາຍໃນຕົນເຊິ່ງມີຢູ່ ຯລຯ ຮູ້ ປັດສັດທິສຳໂພດຊົງພາຍໃນຕົນເຊິ່ງມີຢູ່ ຯລຯ ຮູ້ສະມາທິສຳໂພດຊົງພາຍໃນຕົນເຊິ່ງມີຢູ່ ຯລຯ ຮູ້ອຸເປກຂາສຳໂພດຊົງພາຍໃນຕົນເຊິ່ງມີຢູ່ວ່າ ອຸເປກຂາສຳໂພດຊົງພາຍໃນຕົນຂອງເຮົາມີຢູ່ ຫຼື ຮູ້ອຸເປກຂາສຳໂພດຊົງພາຍໃນຕົນຂອງເຮົາເຊິ່ງບໍ່ມີຢູ່ວ່າ ອຸເປກຂາສຳໂພດຊົງພາຍໃນຕົນຂອງເຮົາບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດ ແລະເຫດຈະເລີນບໍລິບູນແຫ່ງອຸເປກຂາສຳໂພດຊົງທີ່ເກີດແລ້ວ

ພິກຂຸນັ້ນເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີ ເມື່ອເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີແລ້ວຈຶ່ງສົ່ງຈິດໄປໃນທຳພາຍນອກຕົນ

ເຫັນທຳໃນທຳພາຍນອກຕົນ

ພິກຂຸພິຈາລະນາເຫັນທຳໃນທຳພາຍນອກຕົນຢູ່ ເປັນແນວໃດ?

## ນີວະຣະນະປັບພະ

ພິກຂຸໃນທຳວິໄນນີ້ຮູ້ການສັນທະຂອງຜູ້ນັ້ນເຊິ່ງມີຢູ່ວ່າ ການສັນທະຂອງເຂົາມີຢູ່ ຫຼືຮູ້ການສັນທະຂອງຜູ້ນັ້ນເຊິ່ງບໍ່ມີຢູ່ວ່າ ການສັນທະຂອງເຂົາບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງການສັນທະທີ່ຍັງບໍ່ເກີດ ເຫດລະການສັນທະທີ່ເກີດແລ້ວ ແລະເຫດທີ່ການສັນທະເຊິ່ງລະໄດ້ແລ້ວຈະບໍ່ເກີດຕໍ່ໄປ ຮູ້ພະຍາບາດຂອງຜູ້ນັ້ນເຊິ່ງມີຢູ່ ຯລຯ ຮູ້ ຖີນະມິດທະຂອງຜູ້ນັ້ນເຊິ່ງມີຢູ່ ຯລຯ ຮູ້ອຸດທັດຈະກຸກກຸດຈະຂອງຜູ້ນັ້ນເຊິ່ງມີຢູ່ ຯລຯ ຮູ້ວິຈິກິດສາຂອງຜູ້ນັ້ນເຊິ່ງມີຢູ່ວ່າ ວິຈິກິດສາຂອງເຂົາມີຢູ່ ຫຼື ຮູ້ວິຈິກິດສາຂອງເຂົາເຊິ່ງບໍ່ມີຢູ່ວ່າ ວິຈິກິດສາຂອງເຂົາບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງວິຈິກິດສາທີ່ຍັງບໍ່ເກີດ ເຫດລະວິຈິກິດສາທີ່ເກີດແລ້ວ ແລະເຫດທີ່ວິຈິກິດສາເຊິ່ງລະໄດ້ແລ້ວຈະບໍ່ເກີດຕໍ່ໄປ

## ໂພດຊັງຄະປັບພະ

ຮູ້ສະຕິສຳໂພດຊົງຂອງຜູ້ນັ້ນເຊິ່ງມີຢູ່ວ່າ ສະຕິສຳໂພດຊົງຂອງເຂົາມີຢູ່ ຫຼື ຮູ້ສະຕິສຳໂພດຊົງຂອງຜູ້ນັ້ນເຊິ່ງບໍ່ມີຢູ່ວ່າ ສະຕິສຳໂພດຊົງຂອງເຂົາບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງສະຕິສຳໂພດຊົງທີ່ຍັງບໍ່ເກີດ ແລະເຫດຈະເລີນບໍລິບູນແຫ່ງສະຕິສຳໂພດຊົງທີ່ເກີດແລ້ວ ຮູ້ທຳມະວິຈະຍະສຳໂພດຊົງຂອງຜູ້ນັ້ນເຊິ່ງມີຢູ່ ຯລຯ ຮູ້ວິຣິຍະສຳໂພດຊົງຂອງຜູ້ນັ້ນເຊິ່ງມີຢູ່ ຯລຯ ຮູ້ປີຕິສຳໂພດຊົງຂອງຜູ້ນັ້ນເຊິ່ງມີຢູ່ ຯລຯ ຮູ້ປັດສັດທິສຳໂພດຊົງຂອງຜູ້ນັ້ນເຊິ່ງມີຢູ່ ຯລຯ ຮູ້ສະມາທິສຳໂພດຊົງຂອງຜູ້ນັ້ນເຊິ່ງມີຢູ່ ຯລຯ ຮູ້ອຸເປກຂາສຳໂພດຊົງຂອງຜູ້ນັ້ນເຊິ່ງມີຢູ່ວ່າ ອຸເປກຂາສຳໂພດຊົງຂອງເຂົາມີຢູ່ ຫຼື ຮູ້ອຸເປກຂາສຳໂພດຊົງຂອງຜູ້ນັ້ນເຊິ່ງບໍ່ມີຢູ່ວ່າ ອຸເປກຂາສຳໂພດຊົງຂອງເຂົາບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດ ແລະເຫດຈະເລີນບໍລິບູນແຫ່ງອຸເປກຂາສຳໂພດຊົງທີ່ເກີດແລ້ວ

ພິກຂຸນັ້ນເສບ ຈະເລີນ ເຮັດໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີ ເມື່ອເສບ ຈະເລີນເຮັດ ໃຫ້ຫຼາຍ ກຳນົດນິມິດນັ້ນດ້ວຍດີແລ້ວ ຈຶ່ງສົ່ງຈິດໄປໃນທຳພາຍໃນຕົນແລະພາຍນອກຕົນເຫັນທຳໃນທຳພາຍໃນຕົນແລະພາຍນອກຕົນ

ພິກຂຸພິຈາລະນາເຫັນທຳໃນທຳໃນພາຍຕົນແລະພາຍນອກຕົນຢູ່ ເປັນແນວໃດ?

## ນີວະຣະນະປັບພະ

ພິກຂຸໃນທຳວິໄນນີ້ຮູ້ການສັນທະເຊິ່ງມີຢູ່ວ່າ ການສັນທະມີຢູ່ ຫຼື ຮູ້ການສັນທະ ເຊິ່ງບໍ່ມີຢູ່ວ່າ ການສັນທະບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງການສັນທະທີ່ຍັງບໍ່ເກີດ ເຫດລະການສັນທະທີ່ເກີດແລ້ວ ແລະເຫດທີ່ການສັນທະເຊິ່ງລະໄດ້ແລ້ວຈະບໍ່ເກີດຕໍ່ໄປ ຮູ້ພະຍາບາດເຊິ່ງມີຢູ່ ຯລຯ ຮູ້ຖີນະມິດທະເຊິ່ງມີຢູ່ ຯລຯ ຮູ້ອຸດທັດຈະກຸກກຸດຈະເຊິ່ງມີຢູ່ ຯລຯ ຮູ້ວິຈິກິດສາເຊິ່ງມີຢູ່ວ່າ ວິຈິກິດສາມີຢູ່ ຫຼື ຮູ້ວິຈິກິດສາເຊິ່ງບໍ່ມີຢູ່ວ່າ ວິຈິກິດສາບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງວິຈິກິດສາທີ່ຍັງບໍ່ເກີດ ເຫດລະວິຈິກິດສາທີ່ເກີດແລ້ວ ແລະເຫດທີ່ ວິຈິກິດສາເຊິ່ງລະໄດ້ແລ້ວຈະບໍ່ເກີດຕໍ່ໄປ

## ໂພດຊັງຄະປັບພະ

ຮູ້ສະຕິສຳໂພດຊົງເຊິ່ງມີຢູ່ວ່າ ສະຕິສຳໂພດຊົງມີຢູ່ ຫຼື ຮູ້ສະຕິສຳໂພດຊົງເຊິ່ງບໍ່ມີຢູ່ວ່າ ສະຕິສຳໂພດຊົງບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງສະຕິສຳໂພດຊົງທີ່ຍັງບໍ່ເກີດ ແລະເຫດຈະເລີນບໍລິບູນແຫ່ງສະຕິສຳໂພດຊົງທີ່ເກີດແລ້ວ ຮູ້ທຳມະວິຈະຍະສຳໂພດຊົງເຊິ່ງມີຢູ່ ຯລຯ ຮູ້ວິຣິຍະສຳໂພດຊົງເຊິ່ງມີຢູ່ ຯລຯ ຮູ້ປີຕິສຳໂພດຊົງເຊິ່ງມີຢູ່ ຯລຯ ຮູ້ປັດສັດທິສຳໂພດຊົງເຊິ່ງມີຢູ່ ຯລຯ ຮູ້ສະມາທິສຳໂພດຊົງເຊິ່ງມີຢູ່ ຯລຯ ຮູ້ອຸເປກຂາສຳໂພດຊົງເຊິ່ງມີຢູ່ວ່າ ອຸເປກຂາ ສຳໂພດຊົງມີຢູ່ ຫຼື ຮູ້ອຸເປກຂາສຳໂພດຊົງເຊິ່ງບໍ່ມີຢູ່ວ່າ ອຸເປກຂາສຳໂພດຊົງ ບໍ່ມີຢູ່

ອັນໜຶ່ງ ຮູ້ເຫດເກີດແຫ່ງອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດ ແລະເຫດຈະເລີນບໍລິບູນແຫ່ງອຸເປກຂາສຳໂພດຊົງທີ່ເກີດແລ້ວ

ດ້ວຍອາການແນວນີ້ ພິກຂຸຊື່ວ່າພິຈາລະນາເຫັນທຳໃນທຳພາຍໃນຕົນແລະພາຍນອກຕົນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

[໖໙໗] ໃນຄຳວ່າ ພິຈາລະນາເຫັນນັ້ນ ການພິຈາລະນາເຫັນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ພິຈາລະນາເຫັນ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍການພິຈາລະນາເຫັນນີ້ ຍ້ອນແນວນັ້ນ ຈຶ່ງຮຽກວ່າ ພິຈາລະນາເຫັນ

[໖໙໘] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ດຳເນີນໄປຢູ່ ຮັກສາຢູ່ ເປັນໄປຢູ່ ໃຫ້ເປັນໄປຢູ່ ທ່ຽວໄປຢູ່ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

[໖໗໐] ໃນຄຳວ່າ ມີຄວາມພຽນ ນັ້ນ ຄວາມພຽນ ເປັນແນວໃດ?

ການພາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ນີ້ຮຽກວ່າ ຄວາມພຽນ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍຄວາມພຽນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າມີຄວາມພຽນ

[໖໗໑] ໃນຄຳວ່າ ມີສຳປະຊັນຍະ ນັ້ນ ສຳປະຊັນຍະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ສຳປະຊັນຍະ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍສຳປະຊັນຍະນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີສຳປະຊັນຍະ

[໖໗໔] ໃນຄຳວ່າ ມີສະຕິ ນັ້ນ ສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ນີ້ຮຽກວ່າ ສະຕິ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍສະຕິນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີສະຕິ

[໓໗໓] ໃນຄໍາວ່າ ເພິ່ງກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້ ນັ້ນ ໂລກ ເປັນແນວໃດ?

ທໍາເຫຼົ່ານັ້ນ ໆ ຊື່ວ່າໂລກ ແມ່ນອຸປາທານຂັນ ໕ ກໍຊື່ວ່າໂລກ ນີ້ຮຽກວ່າ ໂລກ

ອະພິດຊາ ເປັນແນວໃດ?

ຄວາມກໍາໜັດ ຄວາມກໍາໜັດແຮງ ຯລຯ ຄວາມກໍາໜັດແຮງແຫ່ງຈິດ ນີ້ຮຽກວ່າ ອະພິດຊາ

ໂທມະນັດ ເປັນແນວໃດ?

ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສໍາຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກ ເຈໂຕສໍາຜັດ ນີ້ຮຽກວ່າ ໂທມະນັດ

ອະພິດຊາແລະໂທມະນັດນີ້ ດັ່ງທີ່ກ່າວມານີ້ ຖືກກໍາຈັດ ຖືກກໍາຈັດຣາບຄາບ ສະງົບ ຣະງັບ ສະງົບງຽບ ດັບໄປ ດັບໄປຢ່າງຣາບຄາບ ຖືກເຮັດໃຫ້ພິນາດໄປ ຖືກເຮັດໃຫ້ພິນາດຍ່ອຍຍັບໄປ ຖືກເຮັດໃຫ້ເຫືອດແຫ້ງໄປ ຖືກເຮັດໃຫ້ເຫືອດແຫ້ງໄປດ້ວຍດີ ຖືກເຮັດໃຫ້ສິ້ນໄປໃນໂລກນີ້

ຍ້ອນແນວນັ້ນຈຶ່ງຮຽກວ່າ ເພິ່ງກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້

**ທໍາມານຸປັດສະນານິດເທດ ຈົບ**

**ສຸດຕັນຕະພາຊະນີ ຈົບ**

# ໒. ອະພິທໍາມະພາຊະນີ

## ສະຕິປັດຖານອຸດເທດ

[໓໗໔] ສະຕິປັດຖານ ໔ ໄດ້ແກ່ ພິກຂຸໃນທໍາວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່
໒. ພິຈາລະນາເຫັນເວທະນາໃນເວທະນາຢູ່
໓. ພິຈາລະນາເຫັນຈິດໃນຈິດຢູ່
໔. ພິຈາລະນາເຫັນທໍາໃນທໍາຢູ່

# ສະຕິປັດຖານນິດເທດ

## ກາຍານຸປັດສະນາ

[໓໗໔] ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ພິຈາລະນາເຫັນກາຍໃນກາຍ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສະຕິປັດຖານ

## ເວທະນານຸປັດສະນາ

[໓໗໕] ພິກຂຸພິຈາລະນາເຫັນເວທະນາໃນເວທະນາຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ພິຈາລະນາເຫັນເວທະນາໃນເວທະນາຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສະຕິປັດຖານ

## ຈິດຕານຸປັດສະນາ

[໓໗໖] ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ພິຈາລະນາເຫັນຈິດໃນຈິດຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສະຕິປັດຖານ

## ທຳມານຸປັດສະນາ

[໓໗໗] ພິກຂຸພິຈາລະນາເຫັນທຳໃນທຳຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ໆລໆ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ພິຈາລະນາເຫັນທຳໃນທຳຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ໆລໆ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສະຕິປັດຖານ

## ສະຕິປັດຖານທຳ

[໕໗໙] ໃນສະພາວະທຳເຫຼົ່ານັ້ນ ສະຕິປັດຖານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ໆລໆ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ພິຈາລະນາເຫັນທຳໃນທຳຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ໆລໆ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສະຕິປັດຖານ

## ສະຕິປັດຖານອຸດເທດ

[໕໘໐] ສະຕິປັດຖານ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່
໒. ພິຈາລະນາເຫັນເວທະນາໃນເວທະນາຢູ່
໓. ພິຈາລະນາເຫັນຈິດໃນຈິດຢູ່
໔. ພິຈາລະນາເຫັນທຳໃນທຳຢູ່

# ສະຕິປັດຖານນິດເທດ

### ກາຍານຸປັດສະນາ

[໕໘໑] ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ໆລໆ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນຜັດສະ ໆລໆ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ພິຈາລະນາເຫັນກາຍໃນກາຍຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ฯລฯ

ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍສະຕິປັດຖານ

## ເວທະນານຸປັດສະນາ

[໓໗໔] ພິກຂຸພິຈາລະນາເຫັນເວທະນາໃນເວທະນາຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ພິຈາລະນາເຫັນເວທະນາໃນເວທະນາຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິຄວາມຕາມຣະລຶກ ฯລฯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍສະຕິປັດຖານ

## ຈິດຕານຸປັດສະນາ

[໓໗໓] ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ທຳໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ພິຈາລະນາເຫັນຈິດໃນຈິດ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ฯລฯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍສະຕິປັດຖານ

## ທຳມານຸປັດສະນາ

[໓໘໔] ພິກຂຸພິຈາລະນາເຫັນທຳໃນທຳຢູ່ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ພິກຂຸສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ພິຈາລະນາເຫັນທຳໃນທຳ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍສະຕິປັດຖານ

## ສະຕິປັດຖານທຳ

[໓໘໕] ໃນສະພາວະທຳເຫຼົ່ານັ້ນ ສະຕິປັດຖານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິປັດຖານ ສະພາວະທຳທີ່ເຫຼືອ ຊື່ວ່າ ສຳປະຍຸດດ້ວຍສະຕິປັດຖານ

**ອະພິທຳມະພາຊະນີ ຈົບ**

# ໓. ປັນຫາປຸດສະກະ

[໓໘໖] ສະຕິປັດຖານ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໔. ພິຈາລະນາເຫັນເວທະນາໃນເວທະນາຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໔. ພິຈາລະນາເຫັນທຳໃນທຳຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[໓໙໗] ບັນດາສະຕິປັດຖານ ໔ ສະຕິປັດຖານເທົ່າໃດ?ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ໆລໆ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

# ໑. ຕິກະມາຕິກາວິສັດຊະນາ

## ໑-໔໔. ກຸສະລະຕິກາທິວິສັດຊະນາ

[໓໙໘] ສະຕິປັດຖານ ໔ ທີ່ເປັນກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ໆລໆ

ສະຕິປັດຖານ ໔ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ

ສະຕິປັດຖານ ໔ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ

ສະຕິປັດຖານ ໔ ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມ ຂອງອຸປາທານ

ສະຕິປັດຖານ ໔ ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດ

ສະຕິປັດຖານ ໔ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

ສະຕິປັດຖານ ໔ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍ ອຸເປກຂາກໍມີ

ສະຕິປັດຖານ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສະຕິປັດຖານ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສະຕິປັດຖານ ໔ ທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະ ນິບພານກໍມີ

ສະຕິປັດຖານ ໔ ທີ່ເປັນຂອງເສຂະບຸກຄົນກໍມີ ທີ່ເປັນຂອງອະເສຂະບຸກຄົນກໍມີ

ສະຕິປັດຖານ ໔ ເປັນອັບປະມານະ

ສະຕິປັດຖານ ໔ ມີອັບປະມານະເປັນອາລົມ

ສະຕິປັດຖານ ໔ ເປັນຊັ້ນປະນີດ

ສະຕິປັດຖານ ໔ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ສະຕິປັດຖານ ໔ ບໍ່ແມ່ນມີມັກເປັນອາລົມ

ສະຕິປັດຖານ ໔ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີກໍມີ

ສະຕິປັດຖານ ໔ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ

ສະຕິປັດຖານ ໔ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ ທີ່ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມກໍມີ

ສະຕິປັດຖານ ໔ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

ສະຕິປັດຖານ ໔ ມີທຳພາຍນອກຕົນເປັນອາລົມ

ສະຕິປັດຖານ ໔ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

## ໔. ທຸກະມາຕິກາວິສັດຊະນາ

### ໑. ເຫຕຸໂຄດສະກະວິສັດຊະນາ

[໓໗໙] ສະຕິປັດຖານ ໔ ບໍ່ເປັນເຫດແຕ່ມີເຫດ ສະຕິປັດຖານ ໔ ສຳປະຍຸດດ້ວຍເຫດ

ສະຕິປັດຖານ ໔ ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ຫຼື ມີເຫດ ແຕ່ບໍ່ເປັນເຫດ

ສະຕິປັດຖານ ໔ ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ ຫຼື ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ

ສະຕິປັດຖານ ໔ ບໍ່ເປັນເຫດແຕ່ມີເຫດ

### ໔. ຈູລັນຕະຣະທຸກະວິສັດຊະນາ

ສະຕິປັດຖານ ໔ ມີປັດໄຈປຸງແຕ່ງ ສະຕິປັດຖານ ໔ ຖືກປັດໄຈປຸງແຕ່ງ

ສະຕິປັດຖານ ໔ ເຫັນບໍ່ໄດ້ ສະຕິປັດຖານ ໔ ກະທົບບໍ່ໄດ້

ສະຕິປັດຖານ ໔ ບໍ່ເປັນຮູບ ສະຕິປັດຖານ ໔ ເປັນໂລກຸດຕະຣະ

ສະຕິປັດຖານ ໔ ຈິດບາງດວງຮູ້ໄດ້ ສະຕິປັດຖານ ໔ ຈິດບາງດວງຮູ້ບໍ່ໄດ້

## ໓. ອາສະວະໂຄດສະກະວິສັດຊະນາ

ສະຕິປັດຖານ ໔ ບໍ່ເປັນອາສະວະ ສະຕິປັດຖານ ໔ ບໍ່ເປັນອາລົມຂອງອາສະວະ

ສະຕິປັດຖານ ໔ ວິບປະຍຸດຈາກອາສະວະ ສະຕິປັດຖານ ໔ ກ່າວບໍ່ໄດ້ວ່າ ເປັນອາສະວະ ແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ

ສະຕິປັດຖານ ໔ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ

ສະຕິປັດຖານ ໔ ວິບປະຍຸດຈາກອາສະວະ ສະຕິປັດຖານ ໔ ບໍ່ເປັນອາລົມຂອງອາສະວະ

## ໔-໑໐. ສັນໂຍຊະນະໂຄດສະກາທິວິສັດຊະນາ

ສະຕິປັດຖານ ໔ ບໍ່ເປັນສັງໂຍດ ຯລຯ ບໍ່ເປັນຄັນຖະ ຯລຯ ບໍ່ເປັນໂອຄະ ຯລຯ ບໍ່ເປັນໂຍຄະ ຯລຯ ໔ ບໍ່ເປັນນິວອນ ຯລຯ ບໍ່ເປັນປະຣາມາດ ຯລຯ

ສະຕິປັດຖານ ໔ ຮັບຮູ້ອາລົມໄດ້ ສະຕິປັດຖານ ໔ ບໍ່ເປັນຈິດ

ສະຕິປັດຖານ ໔ ເປັນເຈຕະສິກ ສະຕິປັດຖານ ໔ ສຳປະຍຸດດ້ວຍຈິດ

ສະຕິປັດຖານ ໔ ປະປົນກັບຈິດ ສະຕິປັດຖານ ໔ ມີຈິດເປັນສະມຸດຖານ

ສະຕິປັດຖານ ໔ ເກີດພ້ອມກັບຈິດ ສະຕິປັດຖານ ໔ ເປັນໄປຕາມຈິດ

ສະຕິປັດຖານ ໔ ປະປົນກັບຈິດແລະມີຈິດເປັນສະມຸດຖານ ສະຕິປັດຖານ ໔ ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ

ສະຕິປັດຖານ ໔ ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ສະຕິປັດຖານ ໔ ເປັນພາຍນອກ

ສະຕິປັດຖານ ໔ ບໍ່ເປັນອຸປາທາຍະຮູບ ສະຕິປັດຖານ ໔ ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື

## ໑໑-໑໓. ອຸປາທານໂຄດສະກາທິວິສັດຊະນາ

ສະຕິປັດຖານ ໔ ບໍ່ເປັນອຸປາທານ ຯລຯ ບໍ່ເປັນກິເລດ ຯລຯ

ສະຕິປັດຖານ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓

ສະຕິປັດຖານ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະດ້ວຍມັກເບື້ອງເທິງ ໓

ສະຕິປັດຖານ ໔ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ ສະຕິປັດຖານ ໔ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານກໍມີ

ສະຕິປັດຖານ ໔ ທີ່ມີປີຕິກໍມີ ທີ່ບໍ່ມີປີຕິກໍມີ ສະຕິປັດຖານ ໔ ທີ່ປະກອບດ້ວຍປີຕິກໍມີ ທີ່ບໍ່ປະກອບດ້ວຍປີຕິກໍມີ

ສະຕິປັດຖານ ໔ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ

ສະຕິປັດຖານ ໔ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ສະຕິປັດຖານ ໔ ບໍ່ເປັນກາມາວະຈອນ ສະຕິປັດຖານ ໔ ບໍ່ເປັນອະຣູບປາວະຈອນ

ສະຕິປັດຖານ ໔ ບໍ່ເປັນອະຣູບປາວະຈອນ ສະຕິປັດຖານ ໔ ບໍ່ນັບເນື່ອງໃນວັດຕະທຸກ

ສະຕິປັດຖານ ໔ ທີ່ເປັນເຫດນໍາອອກຈາກວັດຕະທຸກກໍມີ ທີ່ບໍ່ເປັນເຫດນໍາອອກຈາກວັດຕະທຸກກໍມີ ສະຕິປັດຖານ ໔ ທີ່ໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ສະຕິປັດຖານ ໔ ບໍ່ມີທໍາອື່ນຍິ່ງກວ່າ ສະຕິປັດຖານ ໔ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້

**ປັນຫາປຸດສະກະ ຈົບ**

**ສະຕິປັດຖານວິພັງ ຈົບບໍລິບູນ**

# ໙. ສໍາມັປປະທານວິພັງ

## ໑. ສຸດຕັນຕະພາຊະນີ

[໓໙໐] ສໍາມັປປະທານ ໔[១] ໄດ້ແກ່ ພິກຂຸໃນທໍາວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອປ້ອງກັນບາບອະກຸສົນທໍາທີ່ຍັງບໍ່ເກີດບໍ່ໃຫ້ເກີດ

໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອລະບາບອະກຸສົນທໍາທີ່ເກີດແລ້ວ

໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຍັງກຸສົນທໍາທີ່ຍັງບໍ່ເກີດໃຫ້ເກີດ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດໍາຣົງຢູ່ ບໍ່ເລືອນຫາຍ ພົນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທໍາທີ່ເກີດແລ້ວ ພຽນປ້ອງກັນບາບອະກຸສົນທໍາທີ່ຍັງບໍ່ເກີດບໍ່ໃຫ້ເກີດ

[໓໙໑] ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນບາບອະກຸສົນທໍາທີ່ຍັງບໍ່ເກີດບໍ່ໃຫ້ເກີດ ເປັນແນວໃດ?

ບັນດາທໍາເຫຼົ່ານັ້ນ ບາບອະກຸສົນທໍາທີ່ຍັງບໍ່ເກີດ ເປັນແນວໃດ?

ອະກຸສົນມູນ ໓ ຄື ໂລພະ ໂທສະ ໂມຫະ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັບອະກຸສົນມູນ ນັ້ນ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນທີ່ສຳປະຍຸດດ້ວຍອະກຸສົນມູນນັ້ນ ແລະກາຍຍະກຳ ວະຈີກຳ ມະໂນກຳທີ່ມີອະກຸສົນມູນນັ້ນ ເປັນສະມຸດຖານທຳເຫຼົ່ານີ້ ຮຽກວ່າ ບາບອະກຸສົນທຳທີ່ຍັງບໍ່ເກີດ

ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດດ້ວຍປະການດັ່ງນີ້

[໓໙໔] ໃນຄຳວ່າ ສ້າງສັນທະ ນັ້ນ ສັນທະ ເປັນແນວໃດ?

ຄວາມພໍໃຈ ການເຮັດຄວາມພໍໃຈ ຄວາມເປັນຜູ້ປະສົງຈະເຮັດຄວາມສະຫຼາດ ຄວາມພໍໃຈໃນທຳ ນີ້ຮຽກວ່າ ສັນທະ

ພິກຂຸທຳສັນທະນີ້ພາໃຫ້ເກີດ ໃຫ້ເກີດດ້ວຍດີ ໃຫ້ຕັ້ງຂຶ້ນ ໃຫ້ຕັ້ງຂຶ້ນດ້ວຍດີ ໃຫ້ບັງເກີດ ໃຫ້ບັງເກີດສະເພາະ ຍ້ອນແນວນັ້ນຈຶ່ງຮຽກວ່າ ສ້າງສັນທະ

[໓໙໓] ໃນຄຳວ່າ ພະຍາຍາມ ນັ້ນ ຄວາມພະຍາຍາມ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ນີ້ຮຽກວ່າ ຄວາມພະຍາຍາມ ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍຄວາມພະຍາຍາມນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ພະຍາຍາມ

[໓໙໔] ໃນຄຳວ່າ ຜາຣົບຄວາມພຽນ ນັ້ນ ຄວາມພຽນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ນີ້ຮຽກວ່າ ຄວາມພຽນ

ພິກຂຸຜາຣົບ ຜາຣົບດ້ວຍດີ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງຄວາມພຽນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຜາຣົບຄວາມພຽນ

[໓໙໕] ໃນຄຳວ່າ ປະຄອງຈິດ ນັ້ນ ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ພິກຂຸປະຄອງ ປະຄອງດ້ວຍດີ ອຸບປະຖຳຄ້ຳຊູຈິດນີ້ ຍ້ອນແນວນັ້ນ ຈຶ່ງຮຽກວ່າ ປະຄອງຈິດ

[໓໙໖] ໃນຄຳວ່າ ມຸ່ງໝັ້ນ ນັ້ນ ຄວາມມຸ່ງໝັ້ນ[໑] ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ນີ້ຮຽກວ່າ ຄວາມມຸ່ງໝັ້ນ ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍຄວາມມຸ້ງໝັ້ນນີ້ ຍ້ອນແນວນັ້ນ ຈຶ່ງຮຽກວ່າ ມຸ່ງໝັ້ນ ພຽນລະບາບອະກຸສົນທຳທີ່ເກີດແລ້ວ

[໓໙໗] ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດມຸ່ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດແລ້ວ ເປັນແນວໃດ?

ບັນດາທຳເຫຼົ່ານັ້ນ ບາບອະກຸສົນທຳທີ່ເກີດແລ້ວ ເປັນແນວໃດ?

ອະກຸສົນມູນ ໓ ຄື ໂລພະ ໂທສະ ໂມຫະແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບ ອະກຸສົນມູນນັ້ນ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານຂັນ ວິນຍານຂັນທີ່ສຳປະຍຸດດ້ວຍ ອະກຸສົນມູນນັ້ນ ແລະກາຍຍະກຳ ວະຈີກຳ ມະໂນກຳທີ່ມີອະກຸສົນມູນນັ້ນ ເປັນສະມຸດຖານ ທຳເຫຼົ່ານີ້ຮຽກວ່າ ບາບອະກຸສົນທຳທີ່ເກີດແລ້ວ

ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດແລ້ວເຫຼົ່ານີ້ ດ້ວຍປະການດັ່ງນີ້

[໓໙໘] ໃນຄຳວ່າ ສ້າງສັນທະ ນັ້ນ ສັນທະ ເປັນແນວໃດ?

ຄວາມພໍໃຈ ການເຮັດຄວາມພໍໃຈ ຄວາມເປັນຜູ້ປະສົງຈະເຮັດຄວາມສະຫຼາດ ຄວາມພໍໃຈໃນທຳ ນີ້ຮຽກວ່າ ສັນທະ

ພິກຂຸທຳສັນທະນີ້ພາໃຫ້ເກີດ ໃຫ້ເກີດດ້ວຍດີ ໃຫ້ຕັ້ງຂຶ້ນ ໃຫ້ຕັ້ງຂຶ້ນດ້ວຍດີ ໃຫ້ບັງເກີດໃຫ້ບັງເກີດສະເພາະ ຍ້ອນແນວນັ້ນຈຶ່ງຮຽກວ່າ ສ້າງສັນທະ

[໓໙໙] ໃນຄຳວ່າ ພະຍາຍາມ ນັ້ນ ຄວາມພະຍາຍາມ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ฯລฯ ສຳມາວາຍາມະ ນີ້ຮຽກວ່າ ຄວາມພະຍາຍາມ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ฯລฯ ປະກອບແລ້ວດ້ວຍຄວາມພະຍາຍາມນີ້ ຍ້ອນແນວນັ້ນ ຈຶ່ງຮຽກວ່າ ພະຍາຍາມ

[໔໐໐] ໃນຄຳວ່າ ຜາຣົບຄວາມພຽນ ນັ້ນ ຄວາມພຽນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ฯລฯ ສຳມາວາຍາມະ ນີ້ຮຽກວ່າ ຄວາມພຽນ

ພິກຂຸຜາຣົບ ຜາຣົບດ້ວຍດີ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງຄວາມພຽນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຜາຣົບຄວາມພຽນ

[໔໐໑] ໃນຄຳວ່າ ປະຄອງຈິດ ນັ້ນ ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ฯລฯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ພິກຂຸປະຄອງ ປະຄອງດ້ວຍດີ ອຸບປະຖຳຄ້ຳຊູຈິດນີ້ ຍ້ອນແນວນັ້ນ ຈຶ່ງຮຽກວ່າ ປະຄອງຈິດ

[໔໐໔] ໃນຄຳວ່າ ມຸ່ງໝັ້ນ ນັ້ນ ຄວາມມຸ່ງໝັ້ນ ເປັນແນວໃດ?

ການພາຣົບຄວາມພຽນທາງໃຈ ฯລฯ ສໍາມາວາຍາມະ ນີ້ຮຽກວ່າ ຄວາມມຸ່ງໝັ້ນພິກຂຸ ເປັນຜູ້ເຂົ້າໄປເຖິງແລ້ວ ฯລฯ ປະກອບແລ້ວດ້ວຍການຕັ້ງຄວາມພຽນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມຸ່ງໝັ້ນພຽນສ້າງກຸສົນທໍາທີ່ຍັງບໍ່ເກີດໃຫ້ເກີດ

[໔໐໓] ພິກຂຸສ້າງສັນທະ ພະຍາຍາມ ພາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອເຮັດກຸສົນທໍາທີ່ຍັງບໍ່ເກີດໃຫ້ເກີດ ເປັນແນວໃດ?

ບັນດາທໍາເຫຼົ່ານັ້ນ ກຸສົນທໍາທີ່ຍັງບໍ່ເກີດ ເປັນແນວໃດ?

ກຸສົນມູນ ໓ ຄື ອະໂລພະ ອະໂທສະ ແລະອະໂມຫະ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນທີ່ສໍາປະຍຸດດ້ວຍກຸສົນມູນນັ້ນ ແລະກາຍຍະກໍາ ວະຈີກໍາ ມະໂນກໍາທີ່ມີກຸສົນມູນນັ້ນເປັນສະມຸດຖານ ທໍາເຫຼົ່ານີ້ຮຽກວ່າ ກຸສົນທໍາທີ່ຍັງບໍ່ເກີດ

ພິກຂຸສ້າງສັນທະ ພະຍາຍາມ ພາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອເຮັດກຸສົນທໍາທີ່ຍັງບໍ່ເກີດໃຫ້ເກີດດ້ວຍປະການດັ່ງນີ້

[໔໐໔] ໃນຄໍາວ່າ ສ້າງສັນທະ ฯລฯ ໃນຄໍາວ່າ ພະຍາຍາມ ฯລฯ ໃນຄໍາວ່າ ພາຣົບຄວາມພຽນ ฯລฯ ໃນຄໍາວ່າ ປະຄອງຈິດ ฯລฯ ໃນຄໍາວ່າ ມຸ່ງໝັ້ນນັ້ນ ຄວາມມຸ່ງໝັ້ນ ເປັນແນວໃດ?

ການພາຣົບຄວາມພຽນທາງໃຈ ฯລฯ ສໍາມາວາຍາມະ ນີ້ຮຽກວ່າ ຄວາມມຸ່ງໝັ້ນ ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ฯລฯ ປະກອບແລ້ວດ້ວຍການຕັ້ງຄວາມພຽນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມຸ່ງໝັ້ນພຽນຮັກສາກຸສົນທໍາທີ່ເກີດແລ້ວບໍ່ໃຫ້ເສື່ອມ

[໔໐໕] ພິກຂຸສ້າງສັນທະ ພະຍາຍາມ ພາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດໍາຣົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທໍາທີ່ເກີດແລ້ວ ເປັນແນວໃດ?

ບັນດາທໍາເຫຼົ່ານັ້ນ ກຸສົນທໍາທີ່ເກີດແລ້ວ ເປັນແນວໃດ?

ກຸສົນມູນ ໓ ຄື ອະໂລພະ ອະໂທສະ ແລະອະໂມຫະ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນທີ່ສໍາປະຍຸດດ້ວຍກຸສົນມູນນັ້ນ ແລະກາຍຍະກໍາ ວະຈີກໍາ ມະໂນກໍາທີ່ມີກຸສົນມູນນັ້ນເປັນສະມຸດຖານ ທໍາເຫຼົ່ານີ້ຮຽກວ່າ ກຸສົນທໍາທີ່ເກີດແລ້ວ

ພິກຂຸສ້າງສັນທະ ພະຍາຍາມ ພາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມ ດໍາຣົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທໍາທີ່ເກີດແລ້ວດ້ວຍປະການດັ່ງນີ້

[໔໐໖] ຄຳວ່າ ເພື່ອຄວາມດຳຣົງຢູ່ ອະທິບາຍວ່າ ຄວາມດຳຣົງຢູ່ອັນໃດ ນັ້ນເປັນຄວາມບໍ່ເລືອນຫາຍ ຄວາມບໍ່ເລືອນຫາຍອັນໃດ ນັ້ນເປັນຄວາມພິນໂຍພາບ ຄວາມພິນໂຍພາບອັນໃດ ນັ້ນເປັນຄວາມໄພບູນ ຄວາມໄພບູນອັນໃດ ນັ້ນເປັນຄວາມຈະເລີນ ຄວາມຈະເລີນອັນໃດ ນັ້ນເປັນຄວາມບໍລິບູນ

[໔໐໗] ໃນຄຳວ່າ ສ້າງສັນທະ ຯລຯ ໃນຄຳວ່າ ພະຍາຍາມ ຯລຯ ໃນຄຳວ່າ ຜາຣົບຄວາມພຽນ ຯລຯ ໃນຄຳວ່າ ປະຄອງຈິດ ຯລຯ ໃນຄຳວ່າ ມຸ່ງໝັ້ນນັ້ນ ຄວາມມຸ່ງໝັ້ນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ນີ້ຮຽກວ່າ ຄວາມມຸ່ງໝັ້ນ ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍການຕັ້ງຄວາມພຽນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມຸ່ງໝັ້ນ

**ສຸດຕັນຕະພາຊະນີ ຈົບ**

## ໔. ອະພິທຳມະພາຊະນີ

[໔໐໘] ສຳມັບປະທານ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອປ້ອງກັນສະພາວະທຳທີ່ເປັນບາບອະກຸສົນເຊິ່ງຍັງບໍ່ເກີດບໍ່ໃຫ້ເກີດ
໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອລະສະພາວະທຳທີ່ເປັນບາບອະກຸສົນທຳເຊິ່ງເກີດແລ້ວ
໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອທຳສະພາວະທຳທີ່ເປັນກຸສົນເຊິ່ງຍັງບໍ່ເກີດໃຫ້ເກີດ
໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງສະພາວະທຳທີ່ເປັນກຸສົນເຊິ່ງເກີດແລ້ວ ພຽນປ້ອງກັນສະພາວະທຳທີ່ເປັນບາບອະກຸສົນເຊິ່ງຍັງບໍ່ເກີດບໍ່ໃຫ້ເກີດ

[໔໐໙] ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອປ້ອງກັນສະພາວະທຳທີ່ເປັນບາບອະກຸສົນເຊິ່ງຍັງບໍ່ເກີດບໍ່ໃຫ້ເກີດ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸ

ປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ພິກຂຸຊື່ວ່າ ສ້າງສັນທະພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນສະພາວະທຳທີ່ເປັນບາບອະກຸສົນເຊິ່ງຍັງບໍ່ເກີດບໍ່ໃຫ້ເກີດ

[໔໑໐] ໃນຄຳວ່າ ສ້າງສັນທະ ນັ້ນ ສັນທະ ເປັນແນວໃດ?

ຄວາມພໍໃຈ ການເຮັດຄວາມພໍໃຈ ຄວາມເປັນຜູ້ປະສົງຈະເຮັດຄວາມສະຫຼາດ ຄວາມພໍໃຈໃນທຳ ນີ້ຮຽກວ່າ ສັນທະ

ພິກຂຸທຳສັນທະນີ້ພາໃຫ້ເກີດ ໃຫ້ເກີດດ້ວຍດີ ໃຫ້ຕັ້ງຂຶ້ນ ໃຫ້ຕັ້ງຂຶ້ນດ້ວຍດີ ໃຫ້ບັງເກີດ ໃຫ້ບັງເກີດສະເພາະ ຍ້ອນແນວນັ້ນຈຶ່ງຮຽກວ່າ ສ້າງສັນທະ

[໔໑໑] ໃນຄຳວ່າ ພະຍາຍາມນັ້ນ ຄວາມພະຍາຍາມ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນແຂງຂັນ ຄວາມບາກບັ່ນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈໃສ່ທຸຣະດ້ວຍດີ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ຄວາມພະຍາຍາມ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍຄວາມພະຍາຍາມນີ້ ຍ້ອນແນວນັ້ນຈຶ່ງ ຮຽກວ່າ ພະຍາຍາມ

[໔໑໒] ໃນຄຳວ່າ ຜາຣົບຄວາມພຽນ ນັ້ນ ຄວາມພຽນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ฯລฯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ຄວາມພຽນ

ພິກຂຸຜາຣົບ ຜາຣົບດ້ວຍດີ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງຄວາມພຽນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຜາຣົບຄວາມພຽນ

[໔໑໓] ໃນຄຳວ່າ ປະຄອງຈິດ ນັ້ນ ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ฯລฯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ພິກຂຸປະຄອງ ປະຄອງດ້ວຍດີ ອຸບປະຖຳຄ້ຳຊູຈິດນີ້ ຍ້ອນແນວນັ້ນ ຈຶ່ງຮຽກວ່າປະຄອງຈິດ

[໔໑໔] ໃນຄຳວ່າ ມຸ່ງໝັ້ນ ນັ້ນ ສຳມັບປະທານ (ຄວາມມຸ່ງໝັ້ນໂດຍຊອບ) ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ฯລฯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມັບປະທານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍສຳມັບປະທານ ພຽນລະສະພາວະທຳທີ່ເປັນບາບອະກຸສົນເຊິ່ງເກີດແລ້ວ

[໔໑໕] ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອລະສະພາວະທຳທີ່ເປັນບາບອະກຸສົນເຊິ່ງເກີດແລ້ວ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ພິກຂຸຊື່ວ່າສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອລະສະພາວະທຳທີ່ເປັນບາບອະກຸສົນເຊິ່ງເກີດແລ້ວ

[໔໑໖] ໃນຄຳວ່າ ສ້າງສັນທະ ຯລຯ ໃນຄຳວ່າ ພະຍາຍາມ ຯລຯ ໃນຄຳວ່າ ຜາຣົບຄວາມພຽນ ຯລຯ ໃນຄຳວ່າ ປະຄອງຈິດ ຯລຯ ໃນຄຳວ່າ ມຸ່ງໝັ້ນ ນັ້ນ ສຳມັບປະທານ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມັບປະທານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສຳມັບປະທານ ພຽນສ້າງສະພາວະທຳທີ່ເປັນກຸສົນເຊິ່ງຍັງບໍ່ເກີດໃຫ້ເກີດ

[໔໑໗] ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອທຳສະພາວະທຳທີ່ເປັນກຸສົນເຊິ່ງຍັງບໍ່ເກີດໃຫ້ເກີດ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ພິກຂຸຊື່ວ່າສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອເຮັດກຸສົນທຳເຊິ່ງຍັງບໍ່ເກີດໃຫ້ເກີດ

[໔໑໘] ໃນຄຳວ່າ ສ້າງສັນທະ ຯລຯ ໃນຄຳວ່າ ພະຍາຍາມ ຯລຯ ໃນຄຳວ່າ ຜາຣົບຄວາມພຽນ ຯລຯ ໃນຄຳວ່າ ປະຄອງຈິດ ຯລຯ ໃນຄຳວ່າ ມຸ່ງໝັ້ນນັ້ນ ສຳມັບປະທານ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມັບປະທານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍສຳມັບປະທານ

ພຽນຮັກສາສະພາວະທຳທີ່ເປັນກຸສົນເຊິ່ງເກີດແລ້ວບໍ່ໃຫ້ເສື່ອມ

[໔໑໙] ພິກຂຸສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງສະພາວະທຳທີ່ເປັນກຸສົນເຊິ່ງເກີດແລ້ວ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ພິກຂຸຊື່ວ່າສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດຳຣົງຢູ່ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງສະພາວະທຳທີ່ເປັນກຸສົນເຊິ່ງເກີດແລ້ວ

[໔໘໐] ຄຳວ່າ ເພື່ອຄວາມດຳຣົງຢູ່ ອະທິບາຍວ່າ ຄວາມດຳຣົງຢູ່ອັນໃດນັ້ນ ເປັນຄວາມບໍ່ເລີເລືອນ ຄວາມບໍ່ເລີເລືອນອັນໃດ ນັ້ນເປັນຄວາມພິນໂຍພາບ ຄວາມພິນໂຍພາບອັນໃດ ນັ້ນເປັນຄວາມໄພບູນ ຄວາມໄພບູນອັນໃດ ນັ້ນເປັນຄວາມຈະເລີນ ຄວາມຈະເລີນອັນໃດ ນັ້ນເປັນຄວາມບໍລິບູນ

[໔໘໑] ໃນຄຳວ່າ ສ້າງສັນທະ ນັ້ນ ສັນທະ ເປັນແນວໃດ?

ຄວາມພໍໃຈ ການເຮັດຄວາມພໍໃຈ ຄວາມເປັນຜູ້ປະສົງຈະເຮັດຄວາມສະຫຼາດ ຄວາມພໍໃຈໃນທຳ ນີ້ຮຽກວ່າ ສັນທະ

ພິກຂຸທຳສັນທະໃຫ້ເກີດ ໃຫ້ເກີດດ້ວຍດີ ໃຫ້ຕັ້ງຂຶ້ນ ໃຫ້ຕັ້ງຂຶ້ນດ້ວຍດີ ໃຫ້ບັງເກີດ ໃຫ້ບັງເກີດສະເພາະ ຍ້ອນແນວນັ້ນຈຶ່ງຮຽກວ່າ ສ້າງສັນທະ

[໔໘໒] ໃນຄຳວ່າ ພະຍາຍາມ ນັ້ນ ຄວາມພະຍາຍາມ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນ ເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ຄວາມພະຍາຍາມ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍຄວາມພະຍາຍາມນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ພະຍາຍາມ

[໔໘໓] ໃນຄຳວ່າ ຜາຣົບຄວາມພຽນ ນັ້ນ ຄວາມພຽນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ຄວາມພຽນ

ພິກຂຸຜາຣົບ ຜາຣົບດ້ວຍດີ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງຄວາມພຽນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຜາຣົບຄວາມພຽນ

[໔໘໔] ໃນຄຳວ່າ ປະຄອງຈິດ ນັ້ນ ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ພິກຂຸປະຄອງ ປະຄອງດ້ວຍດີ ອຸບປະຖຳຄ້ຳຊູຈິດນີ້ ຍ້ອນແນວນັ້ນ ຈຶ່ງຮຽກວ່າປະຄອງຈິດ

[໔໘໕] ໃນຄຳວ່າ ມຸ່ງໝັ້ນ ນັ້ນ ສຳມັບປະທານ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມັບປະທານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສຳມັບປະທານ

[໔໘໕] ບັນດາທຳເຫຼົ່ານັ້ນ ສຳມັບປະທານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກການ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ

ນີ້ຮຽກວ່າ ສຳມັບປະທານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສຳມັບປະທານ

**ອະພິທຳມະພາຊະນີ ຈົບ**

## ໓. ປັນຫາປຸດສະກະ

[໔໘໖] ສຳມັບປະທານ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອປ້ອງກັນສະພາວະທຳທີ່ເປັນບາບອະກຸສົນເຊິ່ງຍັງບໍ່ເກີດບໍ່ໃຫ້ເກີດ
໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອລະສະພາວະທຳທີ່ເປັນບາບອະກຸສົນເຊິ່ງເກີດແລ້ວ
໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອທຳສະພາວະທຳທີ່ເປັນກຸສົນເຊິ່ງຍັງບໍ່ເກີດໃຫ້ເກີດ
໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງສະພາວະທຳທີ່ເປັນກຸສົນເຊິ່ງເກີດແລ້ວ

### ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[໔໘໗] ບັນດາສຳມັບປະທານ ໔ ສຳມັບປະທານເທົ່າໃດ?ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

## ໑. ຕິກະມາຕິກາວິສັດຊະນາ

### ໑-໔໔. ກຸສະລະຕິກາທິວິສັດຊະນາ

[໔໔໙] ສຳມັບປະທານ ໔ ເປັນກຸສົນຢ່າງດຽວ

ສຳມັບປະທານ ໔ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ກໍມີ

ສຳມັບປະທານ ໔ ເປັນເຫດໃຫ້ເກີດວິບາກ

ສຳມັບປະທານ ໔ ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານ

ສຳມັບປະທານ ໔ ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດ

ສຳມັບປະທານ ໔ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

ສຳມັບປະທານ ໔ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີທີ່ປະກອບດ້ວຍ ອຸເປກຂາກໍມີ

ສຳມັບປະທານ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສຳມັບປະທານ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສຳມັບປະທານ ໔ ເປັນເຫດໃຫ້ເຖິງນິບພານ

ສຳມັບປະທານ ໔ ເປັນຂອງເສຂະບຸກຄົນ

ສຳມັບປະທານ ໔ ເປັນອັບປະມານະ

ສຳມັບປະທານ ໔ ມີອັບປະມານະເປັນອາລົມ

ສຳມັບປະທານ ໔ ເປັນຊັ້ນປະນີດ

ສຳມັບປະທານ ໔ ມີສະພາວະຖືກແລະໃຫ້ຜົນແນ່ນອນ

ສຳມັບປະທານ ໔ ບໍ່ແມ່ນມີມັກເປັນອາລົມ

ສຳມັບປະທານ ໔ ມີມັກເປັນເຫດ

ສຳມັບປະທານ ໔ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນອະທິບໍດີກໍມີ

ສຳມັບປະທານ ໔ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ແຕ່ກ່າວບໍ່ໄດ້ວ່າ ຈັກເກີດຂຶ້ນແນ່ນອນ

ສຳມັບປະທານ ໔ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ ທີ່ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມກໍມີ

ສຳມັບປະທານ ໔ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

ສຳມັບປະທານ ໔ ມີທຳພາຍນອກຕົນເປັນອາລົມ

ສຳມັບປະທານ ໔ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

# ໔. ທຸກະມາຕິກາວິສັດຊະນາ

## ໑. ເຫຕຸໂຄດສະກະວິສັດຊະນາ

[໔໓໐] ສຳມັບປະທານ ໔ ບໍ່ເປັນເຫດ ແຕ່ມີເຫດ

ສຳມັບປະທານ ໔ ສຳປະຍຸດດ້ວຍເຫດ ແຕ່ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ ຫຼື ມີເຫດແຕ່ບໍ່ເປັນເຫດ

ສຳມັບປະທານ ໔ ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ ຫຼື ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ສຳມັບປະທານ ໔ ບໍ່ເປັນເຫດແຕ່ມີເຫດ

## ໒. ຈູລັນຕະຣະທຸກະວິສັດຊະນາ

ສຳມັບປະທານ ໔ ມີປັດໄຈປຸງແຕ່ງ ສຳມັບປະທານ ໔ ຖືກປັດໄຈປຸງແຕ່ງ

ສຳມັບປະທານ ໔ ເຫັນບໍ່ໄດ້ ສຳມັບປະທານ ໔ ກະທົບບໍ່ໄດ້

ສຳມັບປະທານ ໔ ບໍ່ເປັນຮູບ ສຳມັບປະທານ ໔ ເປັນໂລກຸດຕະຣະ

ສຳມັບປະທານ ໔ ຈິດບາງດວງຮູ້ໄດ້ ສຳມັບປະທານ ໔ ຈິດບາງດວງຮູ້ບໍ່ໄດ້

## ໓. ອາສະວະໂຄດສະກະວິສັດຊະນາ

ສຳມັບປະທານ ໔ ບໍ່ເປັນອາສະວະ ສຳມັບປະທານ ໔ ບໍ່ເປັນອາລົມຂອງອາສະວະ

ສຳມັບປະທານ ໔ ວິບປະຍຸດຈາກອາສະວະ ສຳມັບປະທານ ໔ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ

ສຳມັບປະທານ ໔ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ

ສຳມັບປະທານ ໔ ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະ

## ໔-໑໐. ສັນໂຍຊະນະໂຄດສະກາທິວິສັດຊະນາ

ສຳມັບປະທານ ໔ ບໍ່ເປັນສັງໂຍດ ຯລຯ ບໍ່ເປັນຄັນຖະ ຯລຯ ບໍ່ເປັນໂອຄະ ຯລຯ ບໍ່ເປັນໂຍຄະ ຯລຯ ບໍ່ເປັນນິວອນ ຯລຯ ບໍ່ເປັນປະຣາມາດ ຯລຯ

ສຳມັບປະທານ ໔ ຮັບຮູ້ອາລົມໄດ້ ສຳມັບປະທານ ໔ ບໍ່ເປັນຈິດ

ສຳມັບປະທານ ໔ ເປັນເຈຕະສິກ ສຳມັບປະທານ ໔ ສຳປະຍຸດດ້ວຍຈິດ

ສຳມັບປະທານ ໔ ປະປົນກັບຈິດ ສຳມັບປະທານ ໔ ມີຈິດເປັນສະມຸດຖານ

ສຳມັບປະທານ ໔ ເກີດພ້ອມກັບຈິດ ສຳມັບປະທານ ໔ ເປັນໄປຕາມຈິດ

ສຳມັບປະທານ ໔ ປະປົນກັບຈິດແລະມີຈິດເປັນສະມຸດຖານ ສຳມັບປະທານ ໔ ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ

ສຳມັບປະທານ ໔ ປະປົນກັບຈິດມີຈິດເປັນສະມຸດຖານ ແລະເປັນໄປຕາມຈິດ ສຳມັບປະທານ ໔ ເປັນພາຍນອກ

ສຳມັບປະທານ ໔ ບໍ່ເປັນອຸປາທາຍະຮູບ ສຳມັບປະທານ ໔ ກຳອັນປະກອບດ້ວຍ ຕັນຫາແລະທິດຖິບໍ່ຢຶດຖື

**໑໑-໑໓. ອຸປາທານາໂຄດສະກາທິວິສັດຊະນາ**

ສຳມັບປະທານ ໔ ບໍ່ເປັນອຸປາທານ ຯລຯ ບໍ່ເປັນກິເລດ ຯລຯ

ສຳມັບປະທານ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສຳມັບປະທານ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສຳມັບປະທານ ໔ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ

ສຳມັບປະທານ ໔ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານກໍມີ

ສຳມັບປະທານ ໔ ທີ່ມີປິຕິກໍມີ ທີ່ບໍ່ມີປິຕິກໍມີ

ສຳມັບປະທານ ໔ ທີ່ປະກອບດ້ວຍປິຕິກໍມີ ທີ່ບໍ່ປະກອບດ້ວຍປິຕິກໍມີ

ສຳມັບປະທານ ໔ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ

ສຳມັບປະທານ ໔ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ສຳມັບປະທານ ໔ ບໍ່ເປັນກາມາວະຈອນ

ສຳມັບປະທານ ໔ ບໍ່ເປັນອະຣູບປາວະຈອນ

ສຳມັບປະທານ ໔ ບໍ່ເປັນອະຣູບປາວະຈອນ

ສຳມັບປະທານ ໔ ບໍ່ນັບເນື່ອງໃນວັດຕະທຸກ

ສຳມັບປະທານ ໔ ເປັນເຫດນຳອອກຈາກວັດຕະທຸກ

ສຳມັບປະທານ ໔ ໃຫ້ຜົນແນ່ນອນ

ສຳມັບປະທານ ໔ ບໍ່ມີທຳອື່ນຍິ່ງກວ່າ

ສຳມັບປະທານ ໔ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້

**ປັນຫາປຸດສະກະ ຈົບ**

**ສຳມັບປະທານວິພັງ ຈົບບໍລິບູນ**

# ໙. ອິດທິປາທະວິພັງ

## ໑. ສຸດຕັນຕະພາຊະນີ

[໔໓໑] ອິດທິບາດ ໔[១] ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິ ແລະປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິ ແລະປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິ ແລະປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິ ແລະປະທານສັງຂານ

### ໑. ສັນທິດທິບາດ

[໔໓໒] ພິກຂຸຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິ ແລະປະທານສັງຂານເປັນແນວໃດ?

ຖ້າພິກຂຸທຳສັນທະໃຫ້ເປັນອະທິບໍດີແລ້ວໄດ້ສະມາທິ ໄດ້ເອກັກຄະຕາຈິດ ນີ້ຮຽກວ່າ ສັນທະສະມາທິ

ພິກຂຸນັ້ນສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດ

ພິກຂຸນັ້ນສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດແລ້ວ

ພິກຂຸນັ້ນສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຍັງກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດ

ພິກຂຸນັ້ນສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດແລ້ວ ທຳເຫຼົ່ານີ້ຮຽກວ່າ ປະທານສັງຂານ

ປະມວນຫຍໍ້ ສັນທະສະມາທິ ແລະປະທານສັງຂານເຂົ້າເປັນຢ່າງດຽວກັນ ຈຶ່ງນັບໄດ້ວ່າ ສັນທະສະມາທິແລະປະທານສັງຂານ ດ້ວຍປະການແນວນີ້

[໔໓໓] ບັນດາທຳເຫຼົ່ານັ້ນ ສັນທະ ເປັນແນວໃດ?

ຄວາມພໍໃຈ ການເຮັດຄວາມພໍໃຈ ຄວາມເປັນຜູ້ປະສົງຈະເຮັດຄວາມສະຫຼາດ ຄວາມພໍໃຈໃນທຳ ນີ້ຮຽກວ່າ ສັນທະ

ສະມາທິ ເປັນແນວໃດ?

ຄວາມຕັ້ງຢູ່ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ສ່າຍໄປ ຄວາມບໍ່ຟຸ້ງຊ່ານ ແຫ່ງຈິດ ພາວະທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ ນີ້ຮຽກວ່າ ສະມາທິ

ປະທານສັງຂານ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ້ນແຂງຂັນ ຄວາມບາກບັ່ນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມມຸ້ງໝັ້ນ ຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈໃສ່ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສຳມາວາຍາມະ ນີ້ຮຽກວ່າ ປະທານສັງຂານ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍສັນທະສະມາທິແລະປະທານສັງຂານນີ້ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ປະກອບດ້ວຍສັນທະສະມາທິປະທານສັງຂານ

[໔໓໔] ຄຳວ່າ ອິດທິ ມີອະທິບາຍວ່າ ຄວາມສຳເລັດ ຄວາມສຳເລັດດ້ວຍດີ ກິຣິຍາທີ່ສຳເລັດ ກິຣິຍາທີ່ສຳເລັດດ້ວຍດີ ຄວາມໄດ້ ຄວາມໄດ້ສະເພາະ ຄວາມເຖິງ ຄວາມເຖິງດ້ວຍດີ ຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ຄວາມເຂົ້າເຖິງທຳເຫຼົ່ານັ້ນ

ຄຳວ່າ ອິດທິບາດ ມີອະທິບາຍວ່າ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະ ວິນຍານຂັນຂອງບຸກຄົນຜູ້ເປັນແນວນັ້ນ

ຄຳວ່າ ຈະເລີນອິດທິບາດ ມີອະທິບາຍວ່າ ພິກຂຸ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງທຳເຫຼົ່ານັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ຈະເລີນອິດທິບາດ

## ໔. ວິຣິຍິດທິບາດ

[໔໓໕] ພິກຂຸຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິ ແລະປະທານສັງຂານ ເປັນແນວໃດ?

ຖ້າພິກຂຸທຳວິຣິຍະໃຫ້ເປັນອະທິບໍດີແລ້ວໄດ້ສະມາທິ ໄດ້ເອກັກຄະຕາຈິດ ນີ້ຮຽກວ່າ ວິຣິຍະສະມາທິ

ພິກຂຸນັ້ນສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດ

ຯລຯ ເພື່ອລະບາບອະກຸສົນທຳທີ່ເກີດແລ້ວ

ຯລຯ ເພື່ອຍັງກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດ

ພິກຂຸນັ້ນ ສ້າງສັນທະພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ພົນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດແລ້ວ ທຳເຫຼົ່ານີ້ຮຽກວ່າ ປະທານສັງຂານ

ປະມວນຫຍໍ້ວິຣິຍະສະມາທິແລະປະທານສັງຂານເຂົ້າເປັນຢ່າງດຽວກັນ ຈຶ່ງນັບໄດ້ວ່າ ວິຣິຍະສະມາທິແລະປະທານສັງຂານ ດ້ວຍປະການດັ່ງນີ້

[໔໙໖] ບັນດາທຳເຫຼົ່ານັ້ນ ວິຣິຍະ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ฯລฯ ສຳມາວາຍາມະ ນີ້ຮຽກວ່າ ວິຣິຍະ

ສະມາທິ ເປັນແນວໃດ?

ຄວາມຕັ້ງຢູ່ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ສ່າຍໄປ ຄວາມບໍ່ຟຸ້ງຊ່ານ ແຫ່ງຈິດ ພາວະທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ ນີ້ຮຽກວ່າ ສະມາທິ

ປະທານສັງຂານ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ฯລฯ ສຳມາວາຍາມະ ນີ້ຮຽກວ່າ ປະທານສັງຂານ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ฯລฯ ປະກອບແລ້ວດ້ວຍວິຣິຍະສະມາທິແລະປະທານສັງຂານນີ້ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ປະກອບດ້ວຍວິຣິຍະສະມາທິແລະປະທານສັງຂານ

[໔໙໗] ຄຳວ່າ ອິດທິ ມີອະທິບາຍວ່າ ຄວາມສຳເລັດ ຄວາມສຳເລັດດ້ວຍດີ ກິຣິຍາທີ່ສຳເລັດ ກິຣິຍາທີ່ສຳເລັດດ້ວຍດີ ຄວາມໄດ້ ຄວາມໄດ້ສະເພາະ ຄວາມເຖິງ ຄວາມເຖິງດ້ວຍດີ ຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ຄວາມເຂົ້າເຖິງທຳເຫຼົ່ານັ້ນ

ຄຳວ່າ ອິດທິບາດ ມີອະທິບາຍວ່າ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະ ວິນຍານຂັນຂອງບຸກຄົນຜູ້ເປັນແນວນັ້ນ

ຄຳວ່າ ຈະເລີນອິດທິບາດ ມີອະທິບາຍວ່າ ພິກຂຸ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງທຳເຫຼົ່ານັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ຈະເລີນອິດທິບາດ

## ໓. ຈິດຕິດທິບາດ

[໔໙໘] ພິກຂຸຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິ ແລະປະທານສັງຂານເປັນຢ່າງໃດ?

ຖ້າພິກຂຸທຳຈິດໃຫ້ເປັນອະທິບໍດີແລ້ວໄດ້ສະມາທິ ໄດ້ເອກັກຄະຕາຈິດ ນີ້ຮຽກວ່າ ຈິດຕະສະມາທິ

ພິກຂຸນັ້ນສ້າງສັນທະ ພະຍາຍາມ ຜາຮົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດ

ຯລຯ ເພື່ອລະບາບອະກຸສົນທຳອັນເກີດແລ້ວ

ຯລຯ ເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດ

ພິກຂຸນັ້ນສ້າງສັນທະ ພະຍາຍາມ ຜາຮົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດຳຣົງຢູ່ ບໍ່ເລືອຍຫາຍ ພົນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ທຳເຫຼົ່ານີ້ຮຽກວ່າ ປະທານສັງຂານ

ປະມວນຫຍໍ້ຈິດຕະສະມາທິ ແລະປະທານສັງຂານເຂົ້າເປັນຢ່າງດຽວກັນ ຈຶ່ງນັບໄດ້ວ່າຈິດຕະສະມາທິແລະປະທານສັງຂານ

[໔໓໙] ບັນດາທຳເຫຼົ່ານັ້ນ ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ສະມາທິ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຯລຯ ສຳມາສະມາທິ ນີ້ຮຽກວ່າ ສະມາທິ

ປະທານສັງຂານ ເປັນແນວໃດ?

ການຜາຮົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ນີ້ຮຽກວ່າ ປະທານສັງຂານ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍຈິດນີ້ ດ້ວຍສະມາທິນີ້ແລະດ້ວຍປະທານສັງຂານນີ້ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ປະກອບດ້ວຍຈິດຕະສະມາທິປະທານສັງຂານ

[໔໔໐] ຄຳວ່າ ອິດທິ ມີອະທິບາຍວ່າ ຄວາມສຳເລັດ ຄວາມສຳເລັດດ້ວຍດີ ກິຣິຍາທີ່ສຳເລັດ ກິຣິຍາທີ່ສຳເລັດດ້ວຍດີ ຄວາມໄດ້ ຄວາມໄດ້ສະເພາະ ຄວາມເຖິງ ຄວາມເຖິງດ້ວຍດີ ຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ຄວາມເຂົ້າເຖິງທຳເຫຼົ່ານັ້ນ

ຄຳວ່າ ອິດທິບາດ ມີອະທິບາຍວ່າ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນຂອງບຸກຄົນຜູ້ເປັນແນວນັ້ນ

ຄຳວ່າ ຈະເລີນອິດທິບາດ ມີອະທິບາຍວ່າ ພິກຂຸ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງທຳເຫຼົ່ານັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ຈະເລີນອິດທິບາດ

## ໔. ວິມັງສິດທິບາດ

[໔໔໑] ພິກຂຸຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິ ແລະປະທານສັງຂານເປັນແນວໃດ?

ຖ້າພິກຂຸເຮັດວິມັງສາໃຫ້ເປັນອະທິບໍດີແລ້ວໄດ້ສະມາທິ ໄດ້ເອກັກຄະຕາຈິດ ນີ້ຮຽກວ່າ ວິມັງສາສະມາທິ

ພິກຂຸນັ້ນສ້າງສັນທະ ພະຍາຍາມ ຜາຮົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດ

ຯລຯ ເພື່ອລະບາບອະກຸສົນທຳທີ່ເກີດແລ້ວ

ຯລຯ ເພື່ອຍັງກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດ

ພິກຂຸນັ້ນສ້າງສັນທະ ພະຍາຍາມ ຜາຮົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດແລ້ວ ທຳເຫຼົ່ານີ້ຮຽກວ່າ ປະທານສັງຂານ

ປະມວນຫຍໍ້ວິມັງສາສະມາທິ ແລະປະທານສັງຂານເຂົ້າເປັນຢ່າງດຽວກັນ ຈຶ່ງນັບໄດ້ວ່າວິມັງສາສະມາທິແລະປະທານສັງຂານ

[๘๘๘] ບັນດາທຳເຫຼົ່ານັ້ນ ວິມັງສາ ເປັນແນວໃດ?

ປັນຍາ ຄວາມຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ວິມັງສາ

ສະມາທິ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຯລຯ ສຳມາສະມາທິ ນີ້ຮຽກວ່າ ສະມາທິ

ປະທານສັງຂານ ເປັນແນວໃດ?

ການຜາຮົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ນີ້ຮຽກວ່າ ປະທານສັງຂານ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍວິມັງສາສະມາທິແລະປະທານ

ສັງຂານນີ້ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ປະກອບດ້ວຍວິມັງສາສະມາທິແລະປະທານສັງຂານ

[๘๘๙] ຄຳວ່າ ອິດທິ ມີອະທິບາຍວ່າ ຄວາມສຳເລັດ ຄວາມສຳເລັດດ້ວຍດີ ກິຣິຍາທີ່ສຳເລັດ ກິຣິຍາທີ່ສຳເລັດດ້ວຍດີ ຄວາມໄດ້ ຄວາມໄດ້ສະເພາະ ຄວາມເຖິງ ຄວາມເຖິງດ້ວຍດີ ຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ຄວາມເຂົ້າເຖິງທຳເຫຼົ່ານັ້ນ

ຄຳວ່າ ອິດທິບາດ ມີອະທິບາຍວ່າ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະ ວິນຍານຂັນຂອງບຸກຄົນຜູ້ເປັນແນວນັ້ນ

ຄຳວ່າ ຈະເລີນອິດທິບາດ ມີອະທິບາຍວ່າ ພິກຂຸ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງທຳເຫຼົ່ານັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ຈະເລີນອິດທິບາດ

**ສຸດຕັນຕະພາຊະນີ ຈົບ**

# ໔. ອະພິທຳມະພາຊະນີ

[໔໔໔] ອິດທິບາດ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິ ແລະປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິ ແລະປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິ ແລະປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິ ແລະປະທານສັງຂານ

## ໑. ສັນທິດທິບາດ

[໔໔໕] ພິກຂຸຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິ ແລະປະທານສັງຂານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ພິກຂຸຊື່ວ່າຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິ ແລະປະທານສັງຂານ

[໔໔໖] ບັນດາສະພາວະທຳເຫຼົ່ານັ້ນ ສັນທະ ເປັນແນວໃດ?

ຄວາມພໍໃຈ ການເຮັດຄວາມພໍໃຈ ຄວາມເປັນຜູ້ປະສົງຈະເຮັດຄວາມສະຫຼາດ ຄວາມພໍໃຈໃນທຳ ນີ້ຮຽກວ່າ ສັນທະ

ສະມາທິ ເປັນແນວໃດ?

ຄວາມຕັ້ງໝັ້ນແຫ່ງຈິດ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະມາທິ

ປະທານສັງຂານ ເປັນແນວໃດ?

ການພາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ປະທານສັງຂານ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍສັນທະສະມາທິແລະປະທານສັງຂານນີ້

ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ປະກອບດ້ວຍສັນທະສະມາທິແລະປະທານສັງຂານ

[໔໔໗] ຄຳວ່າ ອິດທິ ມີອະທິບາຍວ່າ ຄວາມສຳເລັດ ຄວາມສຳເລັດດ້ວຍດີ ກິຣິຍາທີ່ສຳເລັດ ກິຣິຍາທີ່ສຳເລັດດ້ວຍດີ ຄວາມໄດ້ ຄວາມໄດ້ສະເພາະ ຄວາມເຖິງ ຄວາມເຖິງດ້ວຍດີ ຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ຄວາມເຂົ້າເຖິງສະພາວະທຳເຫຼົ່ານັ້ນ

ຄຳວ່າ ອິດທິບາດ ມີອະທິບາຍວ່າ ຄວາມກະທົບ ຯລຯ ການປະຄອງຄວາມບໍ່ຟຸ້ງຊ່ານຂອງບຸກຄົນຜູ້ເປັນແນວນັ້ນ

ຄຳວ່າ ຈະເລີນອິດທິບາດ ມີອະທິບາຍວ່າ ພິກ ຂຸເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງສະພາວະທຳເຫຼົ່ານັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ຈະເລີນອິດທິບາດ

## ໔. ວິຣິຍິດທິບາດ

[໔໔໘] ພິກຂຸຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິແລະປະທານສັງຂານເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍະ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ພິກຂຸຊື່ວ່າຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິແລະປະທານສັງຂານ

[໔໔໙] ບັນດາສະພາວະທຳເຫຼົ່ານັ້ນ ວິຣິຍະ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ວິຣິຍະ

ສະມາທິ ເປັນແນວໃດ?

ຄວາມຕັ້ງໝັ້ນແຫ່ງຈິດ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະມາທິ

ປະທານສັງຂານ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກນັບເນື່ອງໃນມັກ ນີ້ຮຽກວ່າ ປະທານສັງຂານ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍວິຣິຍະສະມາທິແລະປະທານສັງຂານນີ້ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ປະກອບດ້ວຍວິຣິຍະສະມາທິແລະປະທານສັງຂານ

[໔໕໐] ຄຳວ່າ ອິດທິ ມີອະທິບາຍວ່າ ຄວາມສຳເລັດ ຄວາມສຳເລັດດ້ວຍດີ ກິຣິຍາທີ່ສຳເລັດ ກິຣິຍາທີ່ສຳເລັດດ້ວຍດີ ຄວາມໄດ້ ຄວາມໄດ້ສະເພາະ ຄວາມເຖິງ ຄວາມເຖິງດ້ວຍດີ ຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ຄວາມເຂົ້າເຖິງສະພາວະທຳເຫຼົ່ານັ້ນ

ຄຳວ່າ ອິດທິບາດ ມີອະທິບາຍວ່າ ຄວາມກະທົບ ຯລຯ ການປະຄອງ ຄວາມບໍ່ຟຸ້ງຊ່ານຂອງບຸກຄົນຜູ້ເປັນແນວນັ້ນ

ຄຳວ່າ ຈະເລີນອິດທິບາດ ມີອະທິບາຍວ່າ ພິກຂຸ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງສະພາວະທຳເຫຼົ່ານັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ຈະເລີນອິດທິບາດ

## ໓. ຈິດຕິດທິບາດ

[໔໕໑] ພິກຂຸຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິ ແລະປະທານສັງຂານ

ເປັນແນວໃດ?

ພິກຂຸໃນທຳວິໄນນີ້ ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ພິກຂຸຊື່ວ່າຈະເລີນ

ອິດທິບາດທີ່ປະກອບດ້ວຍຈິດຕະສະມາທິແລະປະທານສັງຂານ

[໔໕໔] ບັນດາສະພາວະທຳເຫຼົ່ານັ້ນ ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ສະມາທິ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະມາທິ

ປະທານສັງຂານ ເປັນແນວໃດ?

ການພາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ປະທານສັງຂານ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍຈິດນີ້ ດ້ວຍສະມາທິນີ້ ແລະດ້ວຍປະທານສັງຂານນີ້ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ປະກອບດ້ວຍຈິດຕະສະມາທິແລະປະທານສັງຂານ

[໔໕໓] ຄຳວ່າ ອິດທິ ມີອະທິບາຍວ່າ ຄວາມສຳເລັດ ຄວາມສຳເລັດດ້ວຍດີ ກິຣິຍາທີ່ສຳເລັດ ກິຣິຍາທີ່ສຳເລັດດ້ວຍດີ ຄວາມໄດ້ ຄວາມໄດ້ສະເພາະ ຄວາມເຖິງ ຄວາມເຖິງດ້ວຍດີ ຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ຄວາມເຂົ້າເຖິງສະພາວະທຳເຫຼົ່ານັ້ນ

ຄຳວ່າ ອິດທິບາດ ມີອະທິບາຍວ່າ ຄວາມກະທົບ ຯລຯ ການປະຄອງ ຄວາມບໍ່ຟຸ້ງຊ່ານຂອງບຸກຄົນຜູ້ເຂົ້າເຖິງສະພາວະທຳເຫຼົ່ານັ້ນ

ຄຳວ່າ ຈະເລີນອິດທິບາດ ມີອະທິບາຍວ່າ ພິກຂຸ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງສະພາວະທຳເຫຼົ່ານັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ຈະເລີນອິດທິບາດ

## ໔. ວີມັງສິດທິບາດ

[໔໕໔] ພິກຂຸຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິ ແລະປະທານສັງຂານເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ພິກຂຸຊື່ວ່າຈະເລີນ

ອິດທິບາດທີ່ປະກອບດ້ວຍວິມັງສາສະມາທິແລະປະທານສັງຂານ

[໔໕໕] ບັນດາທຳເຫຼົ່ານັ້ນ ວິມັງສາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ວິມັງສາ

ສະມາທິ ເປັນແນວໃດ?

ຄວາມຕັ້ງໝັ້ນແຫ່ງຈິດ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກນັບເນື່ອງໃນມັກ ນີ້ຮຽກວ່າ ສະມາທິ

ປະທານສັງຂານ ເປັນແນວໃດ?

ການພາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ປະທານສັງຂານ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວດ້ວຍວິມັງສາສະມາທິແລະປະທານສັງຂານນີ້ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ປະກອບດ້ວຍວິມັງສາສະມາທິແລະປະທານສັງຂານ

[໔໕໖] ຄຳວ່າ ອິດທິ ມີອະທິບາຍວ່າ ຄວາມສຳເລັດ ຄວາມສຳເລັດດ້ວຍດີ ກິຣິຍາທີ່ສຳເລັດ ກິຣິຍາທີ່ສຳເລັດດ້ວຍດີ ຄວາມໄດ້ ຄວາມໄດ້ສະເພາະ ຄວາມເຖິງ ຄວາມເຖິງດ້ວຍດີ ຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ຄວາມເຂົ້າເຖິງສະພາວະທຳເຫຼົ່ານັ້ນ

ຄຳວ່າ ອິດທິບາດ ມີອະທິບາຍວ່າ ຄວາມກະທົບ ຯລຯ ການປະຄອງ ຄວາມບໍ່ຟຸ້ງຊ່ານຂອງບຸກຄົນຜູ້ເປັນແນວນັ້ນ

ຄຳວ່າ ຈະເລີນອິດທິບາດ ມີອະທິບາຍວ່າ ພິກຂຸ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງສະພາວະທຳເຫຼົ່ານັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ຈະເລີນອິດທິບາດ

[໔໕໗] ອິດທິບາດ ໔ ຄື

໑. ສັນທິດທິບາດ (ທຳທີ່ເປັນເຫດໃຫ້ປະສົບຄວາມສຳເລັດຄືສັນທະ)
໒. ວິຣິຍິດທິບາດ (ທຳທີ່ເປັນເຫດໃຫ້ປະສົບຄວາມສຳເລັດຄືວິຣິຍະ)
໓. ຈິດຕິດທິບາດ (ທຳທີ່ເປັນເຫດໃຫ້ປະສົບຄວາມສຳເລັດຄືຈິດຕະ)
໔. ວິມັງສິດທິບາດ (ທຳທີ່ເປັນເຫດໃຫ້ປະສົບຄວາມສຳເລັດຄືວິມັງສາ)

## ໑. ສັນທິດທິບາດ

[໔໕໘] ບັນດາອິດທິບາດ ໔ ນັ້ນ ສັນທິດທິບາດ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພໍໃຈການເຮັດຄວາມພໍໃຈ ຄວາມເປັນຜູ້ປະສົງຈະເຮັດຄວາມສະຫຼາດ ຄວາມພໍໃຈໃນທຳນີ້ຮຽກວ່າສັນທິດທິບາດ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສັນທິດທິບາດ

## ໒. ວິຣິຍິດທິບາດ

[໔໕໙] ວິຣິຍິດທິບາດ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກນີ້ຮຽກວ່າ ວິຣິຍິດທິບາດ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍວິຣິຍິດທິບາດ

## ໓. ຈິດຕິດທິບາດ

[໔໓໐] ຈິດຕິດທິບາດ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຈິດ ມະໂນມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດຕິດທິບາດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຈິດຕິດທິບາດ

## ໔. ວິມັງສິດທິບາດ

[໔໓໑] ວິມັງສິດທິບາດ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ວິມັງສິດທິບາດ ສະພາວະທຳ ທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍວິມັງສິດທິບາດ

**ອະພິທຳມະພາຊະນີ ຈົບ**

## ໓. ປັນຫາປຸດສະກະ

[໔໓໒] ອິດທິບາດ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິ ແລະປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິ ແລະປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິ ແລະປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິ ແລະປະທານສັງຂານ

## ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[໔໓໓] ບັນດາອິດທິບາດ ໔ ອິດທິບາດເທົ່າໃດ?ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

# ໑. ຕິກະມາຕິກາວິສັດຊະນາ

## ໑-໒໘. ກຸສະລະຕິກາທີວິສັດຊະນາ

[໔໕໔] ອິດທິບາດ ໔ ເປັນກຸສົນຢ່າງດຽວ

ອິດທິບາດ ໔ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ

ອິດທິບາດ ໔ ເປັນເຫດໃຫ້ເກີດວິບາກ

ອິດທິບາດ ໔ ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແລະບໍ່ເປັນ

ອາລົມຂອງອຸປາທານ

ອິດທິບາດ ໔ ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດ

ອິດທິບາດ ໔ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

ອິດທິບາດ ໔ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍອຸເປກຂາກໍມີ

ອິດທິບາດ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ອິດທິບາດ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ອິດທິບາດ ໔ ເປັນເຫດໃຫ້ເຖິງນິບພານ

ອິດທິບາດ ໔ ເປັນຂອງເສຂະບຸກຄົນ

ອິດທິບາດ ໔ ເປັນອັບປະມານະ

ອິດທິບາດ ໔ ມີອັບປະມານະເປັນອາລົມ

ອິດທິບາດ ໔ ເປັນຊັ້ນປະນີດ

ອິດທິບາດ ໔ ມີສະພາວະຖືກແລະໃຫ້ຜົນແນ່ນອນ

ອິດທິບາດ ໔ ບໍ່ແມ່ນມີມັກເປັນອາລົມ

ອິດທິບາດ ໔ ມີມັກເປັນເຫດ

ອິດທິບາດ ໔ ບໍ່ແມ່ນມີມັກເປັນອະທິບໍດີ

ອິດທິບາດ ໔ ທີ່ເກີດຂຶ້ນກໍມີ ເຊິ່ງຍັງບໍ່ເກີດຂຶ້ນກໍມີ ແຕ່ກ່າວບໍ່ໄດ້ວ່າ ຈັກເກີດຂຶ້ນແນ່ນອນ

ອິດທິບາດ ໔ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ

ອິດທິບາດ ໔ ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນ

ອາລົມ ຫຼື ມີປັດຈຸບັນທຳເປັນອາລົມກໍມີ

ອິດທິບາດ ໔ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

ອິດທິບາດ ໔ ມີທຳພາຍນອກຕົນເປັນອາລົມ

ອິດທິບາດ ໔ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

## ໔. ທຸກະມາຕິກາວິສັດຊະນາ

### ໑. ເຫຕຸໂຄດສະກະວິສັດຊະນາ

[໔໖໔] ວິມັງສິດທິບາດເປັນເຫດ ອິດທິບາດ ໓ ບໍ່ເປັນເຫດ ອິດທິບາດ ໔ ມີເຫດອິດທິບາດ ໔ ສຳປະຍຸດດ້ວຍເຫດ ວິມັງສິດທິບາດເປັນເຫດແລະມີເຫດ ອິດທິບາດ ໓ ກ່າວບໍ່ ໄດ້ວ່າເປັນເຫດແລະມີເຫດ ຫຼື ມີເຫດແຕ່ບໍ່ເປັນເຫດ

ວິມັງສິດທິບາດເປັນເຫດແລະສຳປະຍຸດດ້ວຍເຫດ ອິດທິບາດ ໓ ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ ຫຼື ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ

ອິດທິບາດ ໓ ບໍ່ເປັນເຫດແຕ່ມີເຫດ ວິມັງສິດທິບາດກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດ ຫຼື ບໍ່ເປັນເຫດແລະບໍ່ມີເຫດ

### ໔-໙. ຈູລັນຕະຣະທຸກາທິວິສັດຊະນາ

ອິດທິບາດ ໔ ມີປັດໄຈປຸງແຕ່ງ ອິດທິບາດ ໔ ຖືກປັດໄຈປຸງແຕ່ງ

ອິດທິບາດ ໔ ເຫັນບໍ່ໄດ້ ອິດທິບາດ ໔ ກະທົບບໍ່ໄດ້

ອິດທິບາດ ໔ ບໍ່ເປັນຮູບ ອິດທິບາດ ໔ ເປັນໂລກຸດຕະຣະ

ອິດທິບາດ ໔ ຈິດບາງດວງຮູ້ໄດ້ ອິດທິບາດ ໔ ຈິດບາງດວງຮູ້ບໍ່ໄດ້

ອິດທິບາດ ໔ ບໍ່ເປັນອາສະວະ ອິດທິບາດ ໔ ບໍ່ເປັນອາລົມຂອງອາສະວະ

ອິດທິບາດ ໔ ວິບປະຍຸດຈາກອາສະວະ ອິດທິບາດ ໔ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ

ອິດທິບາດ ໔ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ ອິດທິບາດ ໔ ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະ

ອິດທິບາດ ໔ ບໍ່ເປັນສັງໂຍດ ຯລຯ ບໍ່ເປັນຄັນຖະ ຯລຯ ບໍ່ເປັນໂອຄະ ຯລຯ ບໍ່ເປັນໂຍຄະ ຯລຯ ບໍ່ເປັນນິວອນ ຯລຯ ບໍ່ເປັນປະຣາມາດ ຯລຯ

### ໑໐. ມະຫັນຕະຣະທຸກະວິສັດຊະນາ

ອິດທິບາດ ໔ ຮັບຮູ້ອາລົມໄດ້ ອິດທິບາດ ໓ ບໍ່ເປັນຈິດ ຈິດຕິດທິບາດເປັນຈິດ

ອິດທິບາດ ๔ ເປັນເຈຕະສິກ ຈິດຕິດທິບາດບໍ່ເປັນເຈຕະສິກ ອິດທິບາດ ๔ ສຳປະຍຸດດ້ວຍຈິດ ຈິດຕິດທິບາດກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍຈິດ ຫຼື ວິບປະຍຸດຈາກຈິດ

ອິດທິບາດ ๔ ປະປົນກັບຈິດ ຈິດຕິດທິບາດກ່າວບໍ່ໄດ້ວ່າ ປະປົນກັບຈິດ ຫຼື ບໍ່ປະປົນກັບຈິດ ອິດທິບາດ ๔ ມີຈິດເປັນສະມຸດຖານ ຈິດຕິດທິບາດບໍ່ມີຈິດເປັນສະມຸດຖານ

ອິດທິບາດ ๔ ເກີດພ້ອມກັບຈິດ ຈິດຕິດທິບາດບໍ່ເກີດພ້ອມກັບຈິດ ອິດທິບາດ ๔ ເປັນໄປຕາມຈິດ ຈິດຕິດທິບາດບໍ່ເປັນໄປຕາມຈິດ

ອິດທິບາດ ๔ ປະປົນກັບຈິດແລະມີຈິດເປັນສະມຸດຖານ ຈິດຕິດທິບາດບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານ ອິດທິບາດ ๔ ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ ຈິດຕິດທິບາດບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ

ອິດທິບາດ ๔ ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ຈິດຕິດທິບາດບໍ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ

ອິດທິບາດ ๔ ເປັນພາຍນອກ ຈິດຕິດທິບາດເປັນພາຍໃນ ອິດທິບາດ ໔ ບໍ່ເປັນ ອຸປາທາຍະຮູບ

ອິດທິບາດ ໔ ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື

## ໑໑-໑๔. ອຸປາທານໂຄດສະກາທິວິສັດຊະນາ

ອິດທິບາດ ໔ ບໍ່ເປັນອຸປາທານ ຯລຯ ບໍ່ເປັນກິເລດ ຯລຯ

ອິດທິບາດ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ๔

ອິດທິບາດ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ๔

ອິດທິບາດ ໔ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ ອິດທິບາດ ໔ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານກໍມີ

ອິດທິບາດ ໔ ທີ່ມີປີຕິກໍມີ ທີ່ບໍ່ມີປີຕິກໍມີ ອິດທິບາດ ໔ ທີ່ປະກອບດ້ວຍປີຕິກໍມີ ທີ່ບໍ່ປະກອບດ້ວຍປີຕິກໍມີ

ອິດທິບາດ ໔ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ ອິດທິບາດ ໔ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ອິດທິບາດ ໔ ບໍ່ເປັນກາມາວະຈອນ ອິດທິບາດ ໔ ບໍ່ເປັນອະຮູບປາວະຈອນ

ອິດທິບາດ ໔ ບໍ່ເປັນອະຮູບປາວະຈອນ ອິດທິບາດ ໔ ບໍ່ນັບເນື່ອງໃນວັດຕະທຸກ

ອິດທິບາດ ໔ ເປັນເຫດນຳອອກຈາກວັດຕະທຸກ ອິດທິບາດ ໔ ໃຫ້ຜົນແນ່ນອນ

ອິດທິບາດ ໔ ບໍ່ມີທຳອື່ນຍິ່ງກວ່າ ອິດທິບາດ ໔ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້

**ປັນຫາປຸດສະກະ ຈົບ**

**ອິດທິປາທະວິພັງ ຈົບບໍລິບູນ**

# ໑໐. ໂພຊັງຄະວິພັງ

## ໑. ສຸດຕັນຕະພາຊະນີ

### ໂພຊົງ ໗ ໄນທີ ໑

[໔໖໖] ໂພຊົງ ໗ ຄື

໑. ສະຕິສຳໂພຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືສະຕິ)
໒. ທຳມະວິຈະຍະສຳໂພຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືທຳມະວິຈະຍະ)
໓. ວິຣິຍະສຳໂພຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືວິຣິຍະ)
໔. ປິຕິສຳໂພຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືປິຕິ)
໕. ປັດສັດທິສຳໂພຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືປັດສັດທິ)
໖. ສະມາທິສຳໂພຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືສະມາທິ)
໗. ອຸເປກຂາສຳໂພຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ຄືອຸເປກຂາ)

[໔໖໗] ບັນດາໂພຊົງ ໗ ເຫຼົ່ານັ້ນ ສະຕິສຳໂພຊົງ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ເປັນຜູ້ມີສະຕິ ປະກອບດ້ວຍສະຕິແລະປັນຍາອັນຍິ່ງ ເປັນຜູ້ຣະລຶກໄດ້ຣະລຶກເຖິງກິດທີ່ເຮັດໄວ້ດົນ ໆ ຫຼື ວາຈາທີ່ກ່າວໄວ້ດົນ ໆ ໄດ້ ນີ້ຮຽກວ່າ ສະຕິສຳໂພຊົງ (໑)

(ທຳມະວິຈະຍະສຳໂພຊົງ ເປັນແນວໃດ?)

ພິກຂຸນັ້ນເປັນຜູ້ມີສະຕິຢູ່ແນວນັ້ນ ວິໄຈ ໄຈ້ແຍກ ທົບທວນ ສອບສວນທຳນັ້ນດ້ວຍປັນຍາ ນີ້ຮຽກວ່າ ທຳມະວິຈະຍະສຳໂພຊົງ (໒)

(ວິຣິຍະສຳໂພຊົງ ເປັນແນວໃດ?)

ຄວາມພຽນ ຄວາມບໍ່ທໍ້ຖອຍ ອັນພິກຂຸນັ້ນຜູ້ວິໄຈ ໄຈ້ແຍກ ທົບທວນ ສອບສວນ ທຳນັ້ນດ້ວຍປັນຍາ ຜາຣົບແລ້ວ ນີ້ຮຽກວ່າ ວິຣິຍະສຳໂພຊົງ (໓)

(ປິຕິສຳໂພຊົງ ເປັນແນວໃດ?)

ປິຕິທີ່ປາສະຈາກອາມິດຍ່ອມເກີດຂຶ້ນແກ່ພິກຂຸຜູ້ຜາຣົບຄວາມພຽນ ນີ້ຮຽກວ່າ ປິຕິ ສຳໂພຊົງ (໔)

(ປັດສັດທິສຳໂພຊົງ ເປັນແນວໃດ?)

ກາຍກໍດີ ຈິດກໍດີ ຂອງພິກຂຸຜູ້ມີໃຈເອີບອີ່ມ ຍ່ອມສະງົບຣະງັບ ນີ້ຮຽກວ່າ ປັດສັດທິສຳໂພດຊົງ (໕)

(ສະມາທິສຳໂພດຊົງ ເປັນແນວໃດ?)

ຈິດຂອງພິກຂຸຜູ້ມີກາຍສະງົບ ຜູ້ມີຄວາມສຸກ ຍ່ອມຕັ້ງໝັ້ນ ນີ້ຮຽກວ່າ ສະມາທິສຳໂພດຊົງ (໖)

(ອຸເປກຂາສຳໂພດຊົງ ເປັນແນວໃດ?)

ພິກຂຸນັ້ນເປັນຜູ້ວາງເສີຍດ້ວຍດີເຊິ່ງຈິດທີ່ຕັ້ງໝັ້ນແນວນັ້ນ ນີ້ຮຽກວ່າ ອຸເປກຂາສຳໂພດຊົງ (໗)

## ໂພດຊົງ ໗ ໃນທີ ໘

[໔໖໗] ໂພດຊົງ ໗ ຄື

໑. ສະຕິສຳໂພດຊົງ
໒. ທຳມະວິຈະຍະສຳໂພດຊົງ
໓. ວິຣິຍະສຳໂພດຊົງ
໔. ປີຕິສຳໂພດຊົງ
໕. ປັດສັດທິສຳໂພດຊົງ
໖. ສະມາທິສຳໂພດຊົງ
໗. ອຸເປກຂາສຳໂພດຊົງ

[໔໖໘] ບັນດາໂພດຊົງ ໗ ເຫຼົ່ານັ້ນ ສະຕິສຳໂພດຊົງ ເປັນແນວໃດ?

ສະຕິໃນທຳພາຍໃນຕົນກໍມີ ໃນທຳພາຍນອກຕົນກໍມີ ສະຕິໃນທຳພາຍໃນຕົນກໍຄື ສະຕິສຳໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຮູ້ ເພື່ອນິບພານ ເຖິງສະຕິໃນທຳພາຍນອກຕົນ ກໍຄືສະຕິສຳໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຮູ້ເພື່ອນິບພານ (໑)

ທຳມະວິຈະຍະສຳໂພດຊົງ ເປັນແນວໃດ?

ຄວາມໄຈ້ແຍກທຳໃນທຳພາຍໃນຕົນກໍມີ ໃນທຳພາຍນອກຕົນກໍມີ ຄວາມໄຈ້ແຍກທຳໃນທຳພາຍໃນຕົນ ກໍຄືທຳມະວິຈະຍະສຳໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຮູ້ ເພື່ອນິບພານ ເຖິງຄວາມໄຈ້ແຍກທຳໃນທຳພາຍນອກຕົນກໍຄື ທຳມະວິຈະຍະສຳໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຮູ້ ເພື່ອນິບພານ (໒)

ວິຣິຍະສຳໂພດຊົງ ເປັນແນວໃດ?

ຄວາມພຽນທາງກາຍກໍມີ ທາງໃຈກໍມີ ຄວາມພຽນທາງກາຍ ກໍຄືວິຣິຍະສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ ເຖິງຄວາມພຽນທາງໃຈກໍຄື ວິຣິຍະສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ (໓)

ປິຕິສໍາໂພດຊົງ ເປັນແນວໃດ?

ປິຕິທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ປິຕິທີ່ມີທັງວິຕົກແລະວິຈານກໍຄືປິຕິສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ ເຖິງປິຕິທີ່ບໍ່ມີທັງວິຕົກແລະວິຈານ ກໍຄືປິຕິສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ (໔)

ປັດສັດທິສໍາໂພດຊົງ ເປັນແນວໃດ?

ກາຍະປັດສັດທິກໍມີ ຈິດຕະປັດສັດທິກໍມີ ກາຍະປັດສັດທິ ກໍຄືປັດສັດທິສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ ເຖິງຈິດຕະປັດສັດທິກໍຄືປັດສັດທິສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ເພື່ອນິບພານ (໕)

ສະມາທິສໍາໂພດຊົງ ເປັນແນວໃດ?

ສະມາທິທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ສະມາທິທີ່ມີທັງວິຕົກແລະວິຈານກໍຄືສະມາທິສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ ເຖິງສະມາທິທີ່ບໍ່ມີທັງວິຕົກແລະວິຈານ ກໍຄືສະມາທິສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ (໖)

ອຸເປກຂາສໍາໂພດຊົງ ເປັນແນວໃດ?

ອຸເປກຂາໃນທໍາພາຍໃນຕົນກໍມີ ໃນທໍາພາຍນອກຕົນກໍມີ ອຸເປກຂາໃນທໍາພາຍໃນຕົນກໍຄືອຸເປກຂາສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ ເຖິງອຸເປກຂາໃນທໍາພາຍນອກຕົນ ກໍຄືອຸເປກຂາສໍາໂພດຊົງ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ (໗)

## ໂພດຊົງ ໗ ໄນທີ ໓

[໔໗໐] ໂພດຊົງ ໗ ຄື

໑. ສະຕິສໍາໂພດຊົງ
໒. ທໍາມະວິຈະຍະສໍາໂພດຊົງ
໓. ວິຣິຍະສໍາໂພດຊົງ
໔. ປິຕິສໍາໂພດຊົງ
໕. ປັດສັດທິສໍາໂພດຊົງ
໖. ສະມາທິສໍາໂພດຊົງ

໗. ອຸເປກຂາສຳໂພດຊົງ

[໔໗໑] ບັນດາໂພດຊົງ ໗ ເຫຼົ່ານັ້ນ ສະຕິສຳໂພດຊົງ ເປັນແນວໃດ?
ພິກຂຸໃນທຳວິໄນນີ້

(໑) ຈະເລີນສະຕິສຳໂພດຊົງທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປເພື່ອຄວາມປ່ອຍວາງ
(໒) ຈະເລີນທຳມະວິຈະຍະສຳໂພດຊົງ ຯລຯ
(໓) ຈະເລີນວິຣິຍະສຳໂພດຊົງ ຯລຯ
(໔) ຈະເລີນປິຕິສຳໂພດຊົງ ຯລຯ
(໕) ຈະເລີນປັດສັດທິສຳໂພດຊົງ ຯລຯ
(໖) ຈະເລີນສະມາທິສຳໂພດຊົງ ຯລຯ
(໗) ຈະເລີນອຸເປກຂາສຳໂພດຊົງ ທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປເພື່ອຄວາມປ່ອຍວາງ

**ສຸດຕັນຕະພາຊະນີ ຈົບ**

# ໒. ອະພິທຳມະພາຊະນີ

## ເອກະໂຕປຸດສາວິສັດຊະນາໄນ

[໔໗໒] ໂພດຊົງ ໗ ຄື

| | |
|---|---|
| ໑. ສະຕິສຳໂພດຊົງ | ໒. ທຳມະວິຈະຍະສຳໂພດຊົງ |
| ໓. ວິຣິຍະສຳໂພດຊົງ | ໔. ປິຕິສຳໂພດຊົງ |
| ໕. ປັດສັດທິສຳໂພດຊົງ | ໖. ສະມາທິສຳໂພດຊົງ |
| ໗. ອຸເປກຂາສຳໂພດຊົງ | |

[໔໗໓] ໃນສະພາວະທຳເຫຼົ່ານັ້ນ ໂພດຊົງ ໗ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ໂພດຊົງ ໗ ຄື ສະຕິສຳໂພດຊົງ ຯລຯ ອຸເປກຂາສຳໂພດຊົງ ກໍເກີດຂຶ້ນ

[໔໗໔] ບັນດາໂພດຊົງ ໗ ເຫຼົ່ານັ້ນ ສະຕິສຳໂພດຊົງ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິສຳໂພດຊົງ (໑)

ທຳມະວິຈະຍະສຳໂພດຊົງ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ທຳມະວິຈະຍະສຳໂພດຊົງ (໒)

ວິຣິຍະສຳໂພດຊົງ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ວິຣິຍະສຳໂພດຊົງ (໓)

ປີຕິສຳໂພດຊົງ ເປັນແນວໃດ?

ຄວາມອີ່ມເອີບ ຄວາມປາໂມດ ຄວາມຍິນດີຢ່າງຍິ່ງ ຄວາມບັນເທີງ ຄວາມຣ່າເຣີງ ຄວາມຣື່ນເຣີງ ຄວາມພໍໃຈ ຄວາມຕື່ນເຕັ້ນ ຄວາມທີ່ຈິດຊື່ນຊົມຍິນດີ ປີຕິສຳໂພດຊົງ ນີ້ຮຽກວ່າ ປີຕິສຳໂພດຊົງ (໔)

ປັດສັດທິສຳໂພດຊົງ ເປັນແນວໃດ?

ຄວາມສະງົບ ຄວາມສະງົບຣະງັບ ກິຣິຍາທີ່ສະງົບ ກິຣິຍາທີ່ສະງົບຣະງັບ ພາວະທີ່ສະງົບຣະງັບແຫ່ງເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ປັດສັດທິສຳໂພດຊົງ ນີ້ຮຽກວ່າ ປັດສັດທິສຳໂພດຊົງ (໕)

ສະມາທິສຳໂພດຊົງ ເປັນແນວໃດ?

ຄວາມຕັ້ງໝັ້ນແຫ່ງຈິດ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະມາທິສຳໂພດຊົງ (໖)

ອຸເປກຂາສຳໂພດຊົງ ເປັນແນວໃດ?

ອຸເປກຂາ ຄວາມວາງເສີຍ ຄວາມເພ່ງເສີຍ ຄວາມວາງຈິດເປັນກາງ ອຸເປກຂາ ສຳໂພດຊົງ ນີ້ຮຽກວ່າ ອຸເປກຂາສຳໂພດຊົງ (໗)

ສະພາວະທຳເຫຼົ່ານີ້ຮຽກວ່າ ໂພດຊົງ ໗ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດ ດ້ວຍໂພດຊົງ ໗

## ປາຕິເຍກກະປຸດສາວິສັດຊະນາໄນ

[໔໗໕] ໂພດຊົງ ໗ ຄື

໑. ສະຕິສຳໂພດຊົງ ໒. ທຳມະວິຈະຍະສຳໂພດຊົງ

๓. ວິຣິຍະສຳໂພດຊົງ ๔. ປີຕິສຳໂພດຊົງ
๕. ປັດສັດທິສຳໂພດຊົງ ๖. ສະມາທິສຳໂພດຊົງ
๗. ອຸເປກຂາສຳໂພດຊົງ

[๔๗๖] ບັນດາໂພດຊົງ ๗ ເຫຼົ່ານັ້ນ ສະຕິສຳໂພດຊົງ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ฯລฯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິສຳໂພດຊົງ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສະຕິສຳໂພດຊົງ ฯລฯ

ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍທຳມະວິຈະຍະສຳໂພດຊົງ ฯລฯ

ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍວິຣິຍະສຳໂພດຊົງ ฯລฯ

ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍປີຕິສຳໂພດຊົງ ฯລฯ

ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍປັດສັດທິສຳໂພດຊົງ ฯລฯ

ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສະມາທິສຳໂພດຊົງ ฯລฯ

ອຸເປກຂາສຳໂພດຊົງ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນອຸເປກຂາ ຄວາມວາງເສີຍ ຄວາມເພ່ງເສີຍ ຄວາມວາງຈິດເປັນກາງ ອຸເປກຂາສຳໂພດຊົງ ນີ້ຮຽກວ່າ ອຸເປກຂາສຳໂພດຊົງ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍອຸເປກຂາສຳໂພດຊົງ

## ເອກະໂຕປຸດສາວິສັດຊະນາໄນ

[๔๗๗] ໂພດຊົງ ๗ ຄື

๑. ສະຕິສຳໂພດຊົງ ๒. ທຳມະວິຈະຍະສຳໂພດຊົງ
๓. ວິຣິຍະສຳໂພດຊົງ ๔. ປີຕິສຳໂພດຊົງ
๕. ປັດສັດທິສຳໂພດຊົງ ๖. ສະມາທິສຳໂພດຊົງ
๗. ອຸເປກຂາສຳໂພດຊົງ

[๔๗๘] ໃນສະພາວະທຳເຫຼົ່ານັ້ນ ໂພດຊົງ ๗ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ໂພດຊົງ ໗ ຄື ສະຕິສຳໂພດຊົງ ຯລຯ ອຸເປກຂາສຳໂພດຊົງ ກໍເກີດຂຶ້ນ

[໔໗໙] ບັນດາໂພດຊົງ ໗ ເຫຼົ່ານັ້ນ ສະຕິສຳໂພດຊົງ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິສຳໂພດຊົງ

ຯລຯ

ອຸເປກຂາສຳໂພດຊົງ ເປັນແນວໃດ?

ອຸເປກຂາ ຄວາມວາງເສີຍ ຄວາມເພ່ງເສີຍ ຄວາມວາງຈິດເປັນກາງອຸເປກຂາ ສຳໂພດຊົງ ນີ້ຮຽກວ່າ ອຸເປກຂາສຳໂພດຊົງ ສະພາວະທຳເຫຼົ່ານີ້ຮຽກວ່າ ໂພດຊົງ ໗ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍໂພດຊົງ ໗

[໔໘໐] ໂພດຊົງ ໗ ຄື

໑. ສະຕິສຳໂພດຊົງ
໒. ທຳມະວິຈະຍະສຳໂພດຊົງ
໓. ວິຣິຍະສຳໂພດຊົງ
໔. ປີຕິສຳໂພດຊົງ
໕. ປັດສັດທິສຳໂພດຊົງ
໖. ສະມາທິສຳໂພດຊົງ
໗. ອຸເປກຂາສຳໂພດຊົງ

[໔໘໑] ບັນດາໂພດຊົງ ໗ ເຫຼົ່ານັ້ນ ສະຕິສຳໂພດຊົງ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ

ຢູ່ໃນສະໄໝໃດ ໃນສະໄໝນັ້ນ ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສະຕິສຳໂພດຊົງ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍສະຕິສຳໂພດຊົງ ຯລຯ

ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍທຳມະວິຈະຍະສຳໂພດຊົງ ຯລຯ
ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍວິຣິຍະສຳໂພດຊົງ ຯລຯ
ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍປີຕິສຳໂພດຊົງ ຯລຯ
ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍປັດສັດທິສຳໂພດຊົງ ຯລຯ
ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສະມາທິສຳໂພດຊົງ
ອຸເປກຂາສຳໂພດຊົງ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ພິກຂຸສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ອຸເປກຂາ ຄວາມວາງເສີຍ ຄວາມເພ່ງເສີຍ ຄວາມວາງຈິດເປັນກາງ ອຸເປກຂາສຳໂພດຊົງ ນີ້ຮຽກວ່າ ອຸເປກຂາສຳໂພດຊົງ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍອຸເປກຂາສຳໂພດຊົງ

**ອະພິທຳມະພາຊະນີ ຈົບ**

# ໓. ປັນຫາປຸດສະກະ

[໔໗໔] ໂພດຊົງ ໗ ຄື

໑. ສະຕິສຳໂພດຊົງ
໒. ທຳມະວິຈະຍະສຳໂພດຊົງ
໓. ວິຣິຍະສຳໂພດຊົງ
໔. ປີຕິສຳໂພດຊົງ
໕. ປັດສັດທິສຳໂພດຊົງ
໖. ສະມາທິສຳໂພດຊົງ
໗. ອຸເປກຂາສຳໂພດຊົງ

# ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[໔໘໓] ບັນດາໂພດຊົງ ກ ໂພດຊົງເທົ່າໃດ?ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ฯລฯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

## ໑. ຕິກະມາຕິກາວິສັດຊະນາ

### ໑-໔໘. ກຸສະລະຕິກາທິວິສັດຊະນາ

[໔໘໔] ໂພດຊົງ ກ ທີ່ເປັນກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ປີຕິສຳໂພດຊົງ ສຳປະຍຸດດ້ວຍສຸກຂະເວທະນາ ໂພດຊົງ ໖ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ

ໂພດຊົງ ກ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ

ໂພດຊົງ ກ ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງ ອຸປາທານ

ໂພດຊົງ ກ ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດ

ໂພດຊົງ ກ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ປີຕິສຳໂພດຊົງບໍ່ປະກອບດ້ວຍປີຕິ ແຕ່ປະກອບດ້ວຍສຸກບໍ່ປະກອບດ້ວຍອຸເປກຂາ ໂພດຊົງ ໖ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍອຸເປກຂາກໍມີ

ໂພດຊົງ ກ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ໂພດຊົງ ກ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ໂພດຊົງ ກ ທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

ໂພດຊົງ ກ ທີ່ເປັນຂອງເສຂະບຸກຄົນກໍມີ ທີ່ເປັນຂອງອະເສຂະບຸກຄົນກໍມີ

ໂພດຊົງ ກ ເປັນອັບປະມານະ

ໂພດຊົງ ກ ມີອັບປະມານະເປັນອາລົມ

ໂພດຊົງ ກ ເປັນຊັ້ນປະນີດ

ໂພດຊົງ ກ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ໂພດຊົງ ກ ບໍ່ແມ່ນມີມັກເປັນອາລົມ

ໂພດຊົງ ກ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີກໍມີ

ໂພດຊົງ ກ ທີ່ເກີດຂື້ນກໍມີ ທີ່ຍັງບໍ່ເກີດຂື້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ

ໂພດຊົງ ກ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ

ໂພດຊີງ ກ ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມຫຼືມີປັດຈຸບັນທຳເປັນອາລົມ

ໂພດຊີງ ກ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

ໂພດຊີງ ກ ມີທຳເປັນພາຍນອກຕົນເປັນອາລົມ

ໂພດຊີງ ກ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

## ໔. ທຸກະມາຕິກາວິສັດຊະນາ

### ໑. ເຫຕຸໂຄດສະກະວິສັດຊະນາ

[໔໗໔] ທຳມະວິຈະຍະສຳໂພດຊີງເປັນເຫດ ໂພດຊີງ ຜ ສຳປະຍຸດດ້ວຍເຫດ

ທຳມະວິຈະຍະສຳໂພດຊີງເປັນເຫດແລະມີເຫດ ໂພດຊີງ ຜ ກ່າວບໍ່ໄດ້ວ່າເປັນເຫດແລະມີເຫດ ຫຼືມີເຫດແຕ່ບໍ່ເປັນເຫດ

ທຳມະວິຈະຍະສຳໂພດຊີງເປັນເຫດແລະສຳປະຍຸດດ້ວຍເຫດ ໂພດຊີງ ຜ ກ່າວບໍ່ໄດ້ວ່າເປັນເຫດແລະສຳປະຍຸດດ້ວຍເຫດ ຫຼື ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ

ໂພດຊີງ ຜ ບໍ່ເປັນເຫດແຕ່ມີເຫດ ທຳມະວິຈະຍະສຳໂພດຊີງກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດ ຫຼື ບໍ່ເປັນເຫດແລະບໍ່ມີເຫດ

### ໔. ຈູລັນຕະຣະທຸກະວິສັດຊະນາ

ໂພດຊີງ ກ ມີປັດໄຈປຸງແຕ່ງ ໂພດຊີງ ກ ຖືກປັດໄຈປຸງແຕ່ງ

ໂພດຊີງ ກ ເຫັນບໍ່ໄດ້ ໂພດຊີງ ກ ກະທົບບໍ່ໄດ້

ໂພດຊີງ ກ ບໍ່ເປັນຮູບ ໂພດຊີງ ກ ເປັນໂລກຸດຕະຣະ

ໂພດຊີງ ກ ຈິດບາງດວງຮູ້ໄດ້ ໂພດຊີງ ກ ຈິດບາງດວງຮູ້ບໍ່ໄດ້

### ໓. ອາສະວະໂຄດສະກະວິສັດຊະນາ

ໂພດຊີງ ກ ບໍ່ເປັນອາສະວະ ໂພດຊີງ ກ ບໍ່ເປັນອາລົມຂອງອາສະວະ

ໂພດຊີງ ກ ວິບປະຍຸດຈາກອາສະວະ ໂພດຊີງ ກ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ

ໂພດຊີງ ກ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ

ໂພດຊີງ ກ ວິບປະຍຸດຈາກອາສະວະ ໂພດຊີງ ກ ບໍ່ເປັນອາລົມຂອງອາສະວະ

## ໔-໗. ສັນໂຍຊະນະໂຄດສະກາທິວິສັດຊະນາ

ໂພດຊົງ ກ ບໍ່ເປັນສັງໂຍດ ໆລໆ ບໍ່ເປັນຄັນຖະ ໆລໆ ບໍ່ເປັນໂອຄະ ໆລໆ ບໍ່ເປັນໂຍຄະ ໆລໆ ບໍ່ເປັນນິວອນ ໆລໆ ບໍ່ເປັນປະຣາມາດ ໆລໆ

## ໑໐-໑໘. ມະຫັນຕະຣະທຸກາທິວິສັດຊະນາ

ໂພດຊົງ ກ ຮັບຮູ້ອາລົມໄດ້ ໂພດຊົງ ກ ບໍ່ເປັນຈິດ

ໂພດຊົງ ກ ເປັນເຈຕະສິກ ໂພດຊົງ ກ ສໍາປະຍຸດດ້ວຍຈິດ

ໂພດຊົງ ກ ປະປົນກັບຈິດ ໂພດຊົງ ກ ມີຈິດເປັນສະມຸດຖານ

ໂພດຊົງ ກ ເກີດພ້ອມກັບຈິດ ໂພດຊົງ ກ ເປັນໄປຕາມຈິດ

ໂພດຊົງ ກ ປະປົນກັບຈິດແລະມີຈິດເປັນສະມຸດຖານ ໂພດຊົງ ກ ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ

ໂພດຊົງ ກ ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ໂພດຊົງ ກ ເປັນພາຍນອກ

ໂພດຊົງ ກ ບໍ່ເປັນອຸປາທາຍະຣູບ ໂພດຊົງ ກ ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຢຶດຖື

ໂພດຊົງ ກ ບໍ່ເປັນອຸປາທານ ໆລໆ ບໍ່ເປັນກິເລດ ໆລໆ

## ໑໓. ປິດຖິທຸກະວິສັດຊະນາ

ໂພດຊົງ ກ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ໂພດຊົງ ກ ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓

ໂພດຊົງ ກ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ໂພດຊົງ ກ ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓

ໂພດຊົງ ກ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ ໂພດຊົງ ກ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານ ກໍມີ

ປີຕິສໍາໂພດຊົງບໍ່ມີປີຕິ ໂພດຊົງ ໖ ທີ່ມີປີຕິກໍມີ ທີ່ບໍ່ມີປີຕິກໍມີ

ປີຕິສໍາໂພດຊົງບໍ່ປະກອບດ້ວຍປີຕິ ໂພດຊົງ ໖ ທີ່ປະກອບດ້ວຍປີຕິກໍມີ ທີ່ບໍ່ປະກອບດ້ວຍປີຕິກໍມີ

ປີຕິສໍາໂພດຊົງປະກອບດ້ວຍສຸກ ໂພດຊົງ ໖ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ

ປີຕິສໍາໂພດຊົງບໍ່ປະກອບດ້ວຍອຸເປກຂາ ໂພດຊົງ ໖ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ໂພດຊົງ ກ ບໍ່ເປັນກາມາວະຈອນ ໂພດຊົງ ກ ບໍ່ເປັນອະຣູບປາວະຈອນ

ໂພດຊົງ ໆ ບໍ່ເປັນອະຣູບປາວະຈອນ ໂພດຊົງ ໆ ບໍ່ນັບເນື່ອງໃນວັດຕະທຸກ

ໂພດຊົງ ໆ ທີ່ເປັນເຫດນຳອອກຈາກວັດຕະທຸກກໍມີ ທີ່ບໍ່ເປັນເຫດນຳອອກຈາກວັດຕະທຸກກໍມີ ໂພດຊົງ ໆ ທີ່ໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ໂພດຊົງ ໆ ບໍ່ມີທຳອື່ນຍິ່ງກວ່າ ໂພດຊົງ ໆ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້

**ປັນຫາປຸດສະກະ ຈົບ**

**ໂພດຊັງຄະວິພັງ ຈົບບໍລິບູນ**

# ໑໑. ມັກຄະວິພັງ

## ໑. ສຸດຕັນຕະພາຊະນີ

### ອະຣິຍະມັກມີອົງ ໘ ໃນທີ່ ໑

[໔໘໖] ອະຣິຍະມັກມີອົງ ໘ ຄື

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ດຳຣິຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການກະທຳຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີບຖືກ) | ໖. ສຳມາວາຍາມະ | (ພຽນຖືກ) |
| ໗. ສຳມາສະຕິ | (ຣະລຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

[໔໘໗] ບັນດາອະຣິຍະມັກມີອົງ ໘ ເຫຼົ່ານັ້ນ ສຳມາທິດຖິ ເປັນແນວໃດ?

ຄວາມຮູ້ໃນທຸກ ຄວາມຮູ້ໃນທຸກຂະສະມຸໄທ ຄວາມຮູ້ໃນທຸກຂະນິໂຣທະ ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ນີ້ຮຽກວ່າ ສຳມາທິດຖິ (໑)

ສຳມາສັງກັບປະ ເປັນແນວໃດ?

ຄວາມດຳຣິໃນການອອກຈາກກາມ ຄວາມດຳຣິໃນການບໍ່ພະຍາບາດ ຄວາມດຳຣິໃນການບໍ່ບຽດບຽນ ນີ້ຮຽກວ່າ ສຳມາສັງກັບປະ (໒)

ສຳມາວາຈາ ເປັນແນວໃດ?

ເຈຕະນາເປັນເຫດງົດເວັ້ນຈາກການເວົ້າຕົວະ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າສັບສໍ່ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າຄຳຫຍາບ ເຈຕະນາເປັນເຫດງົດເວັ້ນຈາກການເວົ້າເພີ້ເຈີ້ ນີ້ຮຽກວ່າ ສຳມາວາຈາ (໓)

ສຳມາກຳມັນຕະ ເປັນແນວໃດ?

ເຈຕະນາເປັນເຫດງົດເວັ້ນຈາກການຂ້າສັດ ເຈຕະນາເປັນເຫດງົດເວັ້ນຈາກການລັກຊັບ ເຈຕະນາເປັນເຫດງົດເວັ້ນຈາກການປະພຶດຜິດໃນກາມ ນີ້ຮຽກວ່າ ສຳມາກຳມັນຕະ (໔)

ສຳມາອາຊີວະ ເປັນແນວໃດ?

ພຣະອະຣິຍະສາວົກໃນທຳວິໄນນີ້ລະມິດສາອາຊີວະແລ້ວ ລ້ຽງຊີວິດຢູ່ດ້ວຍສຳມາອາຊີວະ ນີ້ຮຽກວ່າ ສຳມາອາຊີວະ (໕)

ສຳມາວາຍາມະ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

ฯລฯ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

ฯລฯ ເພື່ອເຮັດກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

ฯລฯ ເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ພົນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ນີ້ຮຽກວ່າ ສຳມາວາຍາມະ (໖)

ສຳມາສະຕິ ເປັນແນວໃດ?

ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໔. ພິຈາລະນາເຫັນທຳໃນທຳຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ນີ້ຮຽກວ່າ ສຳມາສະຕິ (໗)

ສຳມາສະມາທິ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ມີວິຈານ ມີປີຕິ ແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍກ່າວສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ສຳມາສະມາທິ (໘)

## ອະຣິຍະມັກມີອົງ ໘

[໔໗໗] ອະຣິຍະມັກມີອົງ ໘ ຄື

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຈາ
໔. ສຳມາກຳມັນຕະ
໕. ສຳມາອາຊີວະ
໖. ສຳມາວາຍາມະ
໗. ສຳມາສະຕິ
໘. ສຳມາສະມາທິ

[໔໗໘] ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາທິດຖິ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນສຳມາທິດຖິທີ່ອາໄສວິເວກ ວິຣາຄະ ແລະນິໂຣດ ນ້ອມໄປເພື່ອຄວາມປ່ອຍວາງ ຯລຯ ຈະເລີນສຳມາສັງກັບປະ ຯລຯ ຈະເລີນສຳມາວາຈາ ຯລຯ ຈະເລີນສຳມາກຳມັນຕະ ຯລຯ ຈະເລີນສຳມາອາຊີວະ ຯລຯ ຈະເລີນສຳມາວາຍາມະ ຯລຯ ຈະເລີນສຳມາສະຕິ ຯລຯ ຈະເລີນສຳມາສະມາທິທີ່ອາໄສວິເວກ ວິຣາຄະ ແລະນິໂຣດ ນ້ອມໄປເພື່ອຄວາມປ່ອຍວາງ

**ສຸດຕັນຕະພາຊະນີ ຈົບ**

## ໒. ອະພິທຳມະພາຊະນີ

[໔໘໐] ມັກມີອົງ ໘ ຄື

໑. ສຳມາທິດຖິ
ຯລຯ
໘. ສຳມາສະມາທິ

[໔໗໑] ບັນດາສະພາວະທຳເຫຼົ່ານັ້ນ ມັກມີອົງ ໘ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ໘ ຄື ສຳມາທິດຖິ ຯລຯ ສຳມາສະມາທິ ກໍເກີດຂຶ້ນ

[໔໗໒] ບັນດາມັກມີອົງ ໘ ເຫຼົ່ານັ້ນ ສຳມາທິດຖິ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາທິດຖິ (໑)

ສຳມາສັງກັບປະ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິ ຄວາມທີ່ຈິດແນບແໜ້ນໃນອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່ອາລົມ ສຳມາສັງກັບປະ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສັງກັບປະ (໒)

ສຳມາວາຈາ ເປັນແນວໃດ?

ຄວາມງົດ ຄວາມເວັ້ນ ຄວາມເວັ້ນຂາດ ເຈຕະນາເປັນເຫດເວັ້ນຈາກວະຈີທຸດຈະຣິດ ໔ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດ (ແຫ່ງວະຈີທຸດຈະຣິດ ໔) ສຳມາວາຈາ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາວາຈາ໓ (໓)

ສຳມາກຳມັນຕະ ເປັນແນວໃດ?

ຄວາມງົດ ຄວາມເວັ້ນ ຄວາມເວັ້ນຂາດ ເຈຕະນາເປັນເຫດເວັ້ນຈາກກາຍທຸດຈະຣິດ ໓ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດ (ແຫ່ງກາຍທຸດຈະຣິດ ໓) ສຳມາກຳມັນຕະ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາກຳມັນຕະ (໔)

ສຳມາອາຊີວະ ເປັນແນວໃດ?

ຄວາມງົດ ຄວາມເວັ້ນ ຄວາມເວັ້ນຂາດ ເຈຕະນາເປັນເຫດເວັ້ນຈາກມິດສາອາຊີວະ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະມິດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດ (ແຫ່ງມິດສາອາຊີວະ) ສຳມາອາຊີວະ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາອາຊີວະ (໕)

ສຳມາວາຍາມະ ເປັນແນວໃດ?

ການພາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາວາຍາມະ (໖)

ສຳມາສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະຕິ (໗)

ສຳມາສະມາທິ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະມາທິ (໘)

ນີ້ຮຽກວ່າ ມັກມີອົງ ໘ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍມັກມີອົງ ໘

# ປັນຈັງຄິກະວາຣະ

## ເອກະໂຕປຸດສາວິສັດຊະນາໄນ

[໔໙໓] ມັກມີອົງ ໕ ຄື

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຍາມະ
໔. ສຳມາສະຕິ
໕. ສຳມາສະມາທິ

[໔໙໔] ບັນດາສະພາວະທຳເຫຼົ່ານັ້ນ ມັກມີອົງ ໕ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ໕ ຄື ສຳມາທິດຖິ ສຳມາສັງກັບປະ ສຳມາວາຍາມະ ສຳມາສະຕິ ແລະສຳມາສະມາທິກໍເກີດຂຶ້ນ

[໔໙໕] ບັນດາມັກມີອົງ ໕ ນັ້ນ ສຳມາທິດຖິ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາທິດຖິ

ສຳມາສັງກັບປະ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິ ຯລຯ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສັງກັບປະ

ສຳມາວາຍາມະ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ ວິຣິຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາວາຍາມະ

ສຳມາສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ສະຕິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະຕິ

ສຳມາສະມາທິ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະມາທິ

ນີ້ຮຽກວ່າ ມັກມີອົງ ໕ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍມັກມີອົງ ໕

## ປາຕິເຍກກະປຸດສາວິສັດຊະນາໄນ

[໔໙໖] ມັກມີອົງ ໕ ຄື

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຍາມະ
໔. ສຳມາສະຕິ
໕. ສຳມາສະມາທິ

[໔໙໗] ບັນດາມັກມີອົງ ໕ ເຫຼົ່ານັ້ນ ສຳມາທິດຖິ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ປັນຍາກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາທິດຖິ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສຳມາທິດຖິ ຯລຯ

ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສຳມາສັງກັບປະ ຯລຯ

ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສຳມາວາຍາມະ ຯລຯ

ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍສຳມາສະຕິ

ສຳມາສະມາທິ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຕັ້ງຢູ່ແຫ່ງຈິດ ຯລຯ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະມາທິ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍສຳມາສະມາທິ

## ອັດຖັງຄິກະວາຣະ

[໔໙໗] ມັກມີອົງ ໗ ຄື

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຈາ
໔. ສຳມາກຳມັນຕະ
໕. ສຳມາອາຊີວະ
໖. ສຳມາວາຍາມະ
໗. ສຳມາສະຕິ
໘. ສຳມາສະມາທິ

[໔໙໙] ບັນດາສະພາວະທຳເຫຼົ່ານັ້ນ ມັກມີອົງ ໗ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ພິກຂຸສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ໗ ຄື ສຳມາທິດຖິ ຯລຯ ສຳມາສະມາທິ ກໍເກີດຂຶ້ນ ນີ້ຮຽກວ່າ ມັກມີອົງ ໗ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍມັກ ມີອົງ ໗

## ປັນຈັງຄິກະວາຣະ

### ເອກະໂຕປຸດສາວິສັດຊະນາໄນ

[໕໐໐] ມັກມີອົງ ໕ ຄື

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຍາມະ
໔. ສຳມາສະຕິ
໕. ສຳມາສະມາທິ

[໕໐໑] ບັນດາສະພາວະທຳເຫຼົ່ານັ້ນ ມັກມີອົງ ໕ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ພິກຂຸສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ມັກມີອົງ ๕ ຄື ສໍາມາທິດຖິ ສໍາມາສັງກັບປະ ສໍາມາວາຍາມະ ສໍາມາສະຕິ ແລະສໍາມາສະມາທິ ກໍເກີດຂຶ້ນ ນີ້ຮຽກວ່າ ມັກມີອົງ ๕ ສະພາວະທໍາທີ່ເຫຼືອຊື່ວ່າສໍາປະຍຸດດ້ວຍມັກມີອົງ ๕

## ປາຕິເຍກກະບຸດສາວິສັດຊະນາໄນ

[๕๐๘] ມັກມີອົງ ๕ ຄື

๑. ສໍາມາທິດຖິ
๒. ສໍາມາສັງກັບປະ
๓. ສໍາມາວາຍາມະ
๔. ສໍາມາສະຕິ
๕. ສໍາມາສະມາທິ

[๕๐๙] ບັນດາມັກມີອົງ ๕ ນັ້ນ ສໍາມາທິດຖິ ເປັນແນວໃດ?

ພິກຂຸໃນທໍາວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນໍາອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທໍາເຫຼົ່ານີ້ຊື່ວ່າເປັນກຸສົນ

ພິກຂຸສະຫງັດຈາກກາມ ฯລฯ ບັນລຸປະຖົມຊານ ທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ປັນຍາ ກິຣິຍາທີ່ຮູ້ແຈ້ງ ฯລฯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທໍາ ສໍາມາທິດຖິ ທໍາມະວິຈະຍະສໍາໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສໍາມາທິດຖິ ສະພາວະທໍາທີ່ເຫຼືອຊື່ວ່າ ສໍາປະຍຸດດ້ວຍສໍາມາທິດຖິ ฯລฯ

ສະພາວະທໍາທີ່ເຫຼືອຊື່ວ່າສໍາປະຍຸດດ້ວຍສໍາມາສັງກັບປະ ฯລฯ

ສະພາວະທໍາທີ່ເຫຼືອຊື່ວ່າສໍາປະຍຸດດ້ວຍສໍາມາວາຍາມະ ฯລฯ

ສະພາວະທໍາທີ່ເຫຼືອຊື່ວ່າສໍາປະຍຸດດ້ວຍສໍາມາສະຕິ

ສໍາມາສະມາທິ ເປັນແນວໃດ?

ພິກຂຸໃນທໍາວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນໍາອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທໍາເຫຼົ່ານີ້ຊື່ວ່າເປັນກຸສົນ

ພິກຂຸສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຕັ້ງຢູ່ແຫ່ງຈິດ ຄວາມຕັ້ງໝັ້ນດ້ວຍດີ ຄວາມດຳຣົງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານແຫ່ງຈິດ ພາວະທີ່ຈິດບໍ່ຊັດສ່າຍ ສະມາທິ ສະມາທິນຊີ ສະມາທິພະລະ ສຳມາສະມາທິ ສະມາທິສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຮຽກວ່າ ສຳມາສະມາທິ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍສຳມາສະມາທິ

**ອະພິທຳມະພາຊະນີ ຈົບ**

# ໓. ປັນຫາປຸດສະກະ

[໕໐໘] ອະຣິຍະມັກມີອົງ ໘ ຄື

| | |
|---|---|
| ໑. ສຳມາທິດຖິ | ໒. ສຳມາສັງກັບປະ |
| ໓. ສຳມາວາຈາ | ໔. ສຳມາກຳມັນຕະ |
| ໕. ສຳມາອາຊີວະ | ໖. ສຳມາວາຍາມະ |
| ໗. ສຳມາສະຕິ | ໘. ສຳມາສະມາທິ |

## ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[໕໐໙] ບັນດາອົງມັກ ໘ ອົງມັກເທົ່າໃດ? ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

## ໑. ຕິກະມາຕິກາວິສັດຊະນາ

### ໑-໒໒. ກຸສະລະຕິກາທິວິສັດຊະນາ

[໕໐໖] ອົງມັກ ໘ ທີ່ເປັນກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ສຳມາສັງກັບປະສຳປະຍຸດດ້ວຍສຸກຂະເວທະນາ ອົງມັກ ໗ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ

ອົງມັກ ໘ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ

ອົງມັກ ໘ ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ແລະບໍ່ເປັນອາລົມຂອງອຸປາທານ

ອົງມັກ ໘ ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດ

ສຳມາສັງກັປປະບໍ່ມີວິຕົກມີພຽງວິຈານ ອີງມັກ ໆ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

ສຳມາສັງກັປປະປະກອບດ້ວຍປີຕິ ປະກອບດ້ວຍສຸກແຕ່ບໍ່ປະກອບດ້ວຍອຸເປກຂາ ອີງມັກ ໆ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍອຸເປກຂາກໍມີ

ອີງມັກ ໗ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ອີງມັກ ໗ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ອີງມັກ ໗ ທີ່ເປັນເຫດໃຫ້ເຖິງນິບພານກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

ອີງມັກ ໗ ທີ່ເປັນຂອງເສຂະບຸກຄົນກໍມີ ທີ່ເປັນຂອງອະເສຂະບຸກຄົນກໍມີ

ອີງມັກ ໗ ເປັນອັບປະມານະ

ອີງມັກ ໗ ມີອັບປະມານະເປັນອາລົມ

ອີງມັກ ໗ ເປັນຊັ້ນປະນີດ

ອີງມັກ ໗ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ອີງມັກ ໗ ບໍ່ແມ່ນມີມັກເປັນອາລົມ

ອີງມັກ ໗ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີກໍມີ

ອີງມັກ ໗ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ

ອີງມັກ ໗ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ

ອີງມັກ ໗ ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼືມີປັດຈຸບັນທຳເປັນອາລົມ

ອີງມັກ ໗ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

ອີງມັກ ໗ ມີທຳພາຍນອກຕົນເປັນອາລົມ

ອີງມັກ ໗ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

## ໔. ທຸກະມາຕິກາວິສັດຊະນາ

### ໑. ເຫຕຸໂຄດສະກະວິສັດຊະນາ

[໕໐໗] ສຳມາທິດຖິເປັນເຫດ ອີງມັກ ໆ ບໍ່ເປັນເຫດ

ອີງມັກ ໗ ມີເຫດແລະສຳປະຍຸດດ້ວຍເຫດ

ສຳມາທິດຖິເປັນເຫດແລະມີເຫດ ອີງມັກ ໆ ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດຫຼືມີເຫດແຕ່ບໍ່ເປັນເຫດ

ສຳມາທິດຖິເປັນເຫດແລະສຳປະຍຸດດ້ວຍເຫດ ອິງມັກ ໆ ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ ຫຼື ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ

ອິງມັກ ໆ ບໍ່ເປັນເຫດແຕ່ມີເຫດ ສຳມາທິດຖິກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດ ຫຼືບໍ່ເປັນເຫດແລະບໍ່ມີເຫດ

## ໘. ຈູລັນຕະຣະທຸກະວິສັດຊະນາ

ອິງມັກ ໗ ມີປັດໄຈປຸງແຕ່ງ ອິງມັກ ໗ ຖືກປັດໄຈປຸງແຕ່ງ

ອິງມັກ ໗ ເຫັນບໍ່ໄດ້ ອິງມັກ ໗ ກະທົບບໍ່ໄດ້

ອິງມັກ ໗ ບໍ່ເປັນຮູບ ອິງມັກ ໗ ເປັນໂລກຸດຕະຣະ

ອິງມັກ ໗ ຈິດບາງດວງຮູ້ໄດ້ ອິງມັກ ໗ ຈິດບາງດວງຮູ້ບໍ່ໄດ້

## ໓-໙. ອາສະວະໂຄດສະກາທິວິສັດຊະນາ

ອິງມັກ ໗ ບໍ່ເປັນອາສະວະ ອິງມັກ ໗ ບໍ່ເປັນອາລົມຂອງອາສະວະ

ອິງມັກ ໗ ວິບປະຍຸດຈາກອາສະວະ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ຫຼື ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ

ອິງມັກ ໗ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼືສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ

ອິງມັກ ໗ ວິບປະຍຸດຈາກອາສະວະ

ອິງມັກ ໗ ບໍ່ເປັນອາລົມຂອງອາສະວະ

ອິງມັກ ໗ ບໍ່ເປັນສັງໂຍດ ຯລຯ ບໍ່ເປັນຄັນຖະ ຯລຯ ບໍ່ເປັນໂອຄະ ຯລຯ ບໍ່ເປັນໂຍຄະ ຯລຯ ບໍ່ເປັນນິວອນ ຯລຯ ບໍ່ເປັນປະຣາມາດ ຯລຯ

## ໑໐-໑໘. ມະຫັນຕະຣະທຸກາທິວິສັດຊະນາ

ອິງມັກ ໗ ຮັບຮູ້ອາລົມໄດ້ ອິງມັກ ໗ ບໍ່ເປັນຈິດ

ອິງມັກ ໗ ເປັນເຈຕະສິກ ອິງມັກ ໗ ສຳປະຍຸດດ້ວຍຈິດ

ອິງມັກ ໗ ປະປົນກັບຈິດ ອິງມັກ ໗ ມີຈິດເປັນສະມຸດຖານ

ອິງມັກ ໗ ເກີດພ້ອມກັບຈິດ ອິງມັກ ໗ ເປັນໄປຕາມຈິດ

ອິງມັກ ໗ ປະປົນກັບຈິດແລະມີຈິດເປັນສະມຸດຖານ ອິງມັກ ໗ ປະປົນກັບຈິດ ມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ

ອົງມັກ ໘ ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ອົງມັກ ໘ ເປັນພາຍນອກ

ອົງມັກ ໘ ບໍ່ເປັນອຸປາທາຍະຮູບ ອົງມັກ ໘ ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື

ອົງມັກ ໘ ບໍ່ເປັນອຸປາທານ ໗ລ໗ ບໍ່ເປັນກິເລດ ໗ລ໗

## ໑໓. ປິດຖິທຸກະວິສັດຊະນາ

ອົງມັກ ໘ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓

ອົງມັກ ໘ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓

ສໍາມາສັງກັບປະບໍ່ມີວິຕົກ ອົງມັກ ໗ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ

ສໍາມາສັງກັບປະມີວິຈານ ອົງມັກ ໗ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານກໍມີ

ສໍາມາສັງກັບປະມີປີຕິ ອົງມັກ ໗ ທີ່ມີປີຕິກໍມີ ທີ່ບໍ່ມີປີຕິກໍມີ

ສໍາມາສັງກັບປະ ປະກອບດ້ວຍປີຕິ ອົງມັກ ໗ ທີ່ປະກອບດ້ວຍປີຕິກໍມີ ທີ່ບໍ່ປະກອບດ້ວຍປີຕິກໍມີ

ສໍາມາສັງກັບປະປະກອບດ້ວຍສຸກ ອົງມັກ ໗ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ

ສໍາມາສັງກັບປະບໍ່ປະກອບດ້ວຍອຸເປກຂາ ອົງມັກ ໗ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ອົງມັກ ໘ ບໍ່ເປັນກາມາວະຈອນ

ອົງມັກ ໘ ບໍ່ເປັນຮູບປາວະຈອນ

ອົງມັກ ໘ ບໍ່ເປັນອະຮູບປາວະຈອນ

ອົງມັກ ໘ ບໍ່ນັບເນື່ອງໃນວັດຕະທຸກ

ອົງມັກ ໘ ທີ່ເປັນເຫດນໍາອອກຈາກວັດຕະທຸກກໍມີ ທີ່ບໍ່ເປັນເຫດນໍາອອກຈາກວັດຕະທຸກກໍມີ

ອົງມັກ ໘ ທີ່ໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ອົງມັກ ໘ ບໍ່ມີທໍາອື່ນຍິ່ງກວ່າ

ອົງມັກ ໘ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້

**ປັນຫາປຸດສະກະ ຈົບ**

**ມັກຄະວິພັງ ຈົບບໍລິບູນ**

# ໑໔. ຊານະວິພັງ

## ໑. ສຸດຕັນຕະພາຊະນີ

### ມາຕິກາ

[໔໐໗] ພິກຂຸໃນທຳວິໄນນີ້ເປັນຜູ້ສັງລວມດ້ວຍປາຕິໂມກສັງວອນຢູ່ ເຖິງພ້ອມດ້ວຍ ອາຈາຣະແລະໂຄຈອນ ເຫັນໄພໃນໂທດທີ່ມີປະມານໜ້ອຍ ສະມາທານສຶກສາໃນສິກຂາບົດທັງຫຼາຍ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຮູ້ຈັກປະມານໃນການບໍຣິໂພກ ໝັ່ນປະກອບຄວາມພຽນເປັນເຄື່ອງຕື່ນຢູ່ຕະຫຼອດປະຖົມຍາມແລະປັດສິມຍາມ ໝັ່ນປະກອບຄວາມພຽນໃນການຈະເລີນໂພທິປັກຂິຍະທຳຢ່າງຕໍ່ເນື່ອງ ມີປັນຍາເປັນອຸປາຍໃນກິດທັງປວງ

ພິກຂຸນັ້ນກະທຳຄວາມຮູ້ສຶກຕົວໃນການກ້າວໄປ ການຖອຍກັບ ໑ ກະທຳຄວາມຮູ້ສຶກຕົວໃນການແນມເບິ່ງ ການຫຼຽວເບິ່ງ ໑ ກະທຳຄວາມຮູ້ສຶກຕົວໃນການຄູ້ເຂົ້າ ການຢຽດອອກ ໑ ກະທຳຄວາມຮູ້ສຶກຕົວໃນການຄອງຜ້າສັງຄາຕິ ບາດ ແລະຈີວອນ ໑ ກະທຳຄວາມຮູ້ສຶກຕົວໃນການສັນ ການດື່ມ ການຫຍ້ຳ ການຊີມ ໑ ກະທຳຄວາມຮູ້ສຶກຕົວໃນການຖ່າຍອຸດຈາຣະປັດສາວະ ໑ ກະທຳຄວາມຮູ້ສຶກຕົວໃນການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ແລະການນິ່ງ

ພິກຂຸນັ້ນອາໄສເສນາສະນະທີສະຫງັດ ເຊັ່ນ ປ່າ ເຫງົ້າໄມ້ ພູເຂົາ ຮ່ອມພູ ຖ້ຳ ປ່າຊ້າ ດົງ ທີ່ແຈ້ງ ກອງເຟືອງ ທີ່ສະຫງັດມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ບໍ່ມີຄົນສັນຈອນໄປມາ ບໍ່ມີຄົນນອງນັນ ເໝາະເປັນທີ່ຫຼີບຫຼີກ ພິກຂຸນັ້ນຢູ່ປ່າ ຢູ່ເຫງົ້າໄມ້ ຫຼື ຢູ່ເຮືອນວ່າງ ນັ່ງຄູ້ບັນລັງຕັ້ງກາຍກົງດຳຣົງສະຕິໝັ້ນມຸ້ງສະເພາະກຳມະຖານ

ພິກຂຸນັ້ນລະອະພິດຊາໃນໂລກໄດ້ ມີຈິດປາສະຈາກອະພິດຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະຄວາມພະຍາບາດ ແລະຄວາມຄິດປະທຸດສະຮ້າຍໄດ້ແລ້ວ ມີຈິດບໍ່ພະຍາບາດຢູ່ ເປັນຜູ້ອະນຸເຄາະເກື້ອກູນແກ່ສັດທັງມວນ ຊຳຣະຈິດໃຫ້ບໍລິສຸດຈາກຄວາມພະຍາບາດ ແລະຄວາມຄິດປະທຸດສະຮ້າຍ ລະຖີນະມິດທະໄດ້ແລ້ວ ເປັນຜູ້ປາສະຈາກຖີນະມິດທະຢູ່ ເປັນຜູ້ໄດ້ອາໂລກະສັນຍາ ມີສະຕິສຳປະຊັນຍະ ຊຳຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະໄດ້ແລ້ວ ເປັນຜູ້ບໍ່ຟຸ້ງຊ່ານຢູ່ ມີຈິດສະງົບພາຍໃນຕົນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາໄດ້ແລ້ວ ເປັນຜູ້ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີຄວາມສົງໄສໃນກຸສົນທຳຢູ່ ຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

ພິກຂຸນັ້ນລະນິວອນ ໕ ເຫຼົ່ານີ້ທີ່ເປັນເຫດເຮັດໃຫ້ຈິດເສົ້າໝອງ ທອນກຳລັງປັນຍາ ສະຫງັດຈາກການແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ມີວິຈານ ມີປີຕິ ແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ບັນລຸທຸຕິຍະຊານທີ່ມີຄວາມ

ຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍກ່າວສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ຍ້ອນກ້າວລ່ວງຮູບສັນຍາໄດ້ໂດຍປະການທັງປວງ ຍ້ອນຄວາມດັບໄປແຫ່ງປະຕິຄະສັນຍາ ຍ້ອນບໍ່ມະນະສິການນານັດຕະສັນຍາ ຈຶ່ງໄດ້ບັນລຸອາກາສານັນຈາຍະຕະນະ ໂດຍບໍຣິກຳວ່າ “ອາກາດບໍ່ມີບ່ອນສຸດ” ດັ່ງນີ້ຢູ່ຍ້ອນກ້າວລ່ວງອາກາສານັນຈາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງໄດ້ບັນລຸວິນຍານັນຈາຍະຕະນະ ໂດຍບໍຣິກຳວ່າ “ວິນຍານບໍ່ມີບ່ອນສຸດ” ດັ່ງນີ້ຢູ່ ຍ້ອນກ້າວລ່ວງວິນຍານັນຈາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງໄດ້ບັນລຸອາກິນຈັນຍາຍະຕະນະໂດຍບໍຣິກຳວ່າ “ອັນໃດ ໆ ແມ່ນໜ້ອຍໜຶ່ງກໍບໍ່ມີ” ດັ່ງນີ້ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງໄດ້ບັນລຸເນວະສັນຍານາສັນຍາຍະຕະນະຢູ່

**ມາຕິກາ ຈົບ**

## ມາຕິການິດເທດ

[໕໐໙] ຄຳວ່າ ໃນທຳວິໄນນີ້ ອະທິບາຍວ່າ ໃນຄວາມເຫັນນີ້ ໃນຄວາມພໍໃຈນີ້ ໃນຖືກໃຈນີ້ ໃນລັດທິນີ້ ໃນທຳນີ້ ໃນວິໄນນີ້ ໃນທຳວິໄນນີ້ ໃນປາພົດນີ້ ໃນພົມມະຈັນນີ້ ແລະໃນຄຳສອນຂອງພຣະສາດສະດານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ໃນທຳວິໄນນີ້

[໕໑໐] ຄຳວ່າ ພິກຂຸ ອະທິບາຍວ່າ ຊື່ວ່າພິກຂຸ ຍ້ອນສະມັນຍາ ຊື່ວ່າພິກຂຸ ຍ້ອນການປະຕິນຍາຕົນ ຊື່ວ່າພິກຂຸ ຍ້ອນຂໍ ຊື່ວ່າພິກຂຸ ຍ້ອນເປັນຜູ້ຂໍ ຊື່ວ່າພິກຂຸ ຍ້ອນເປັນຜູ້ເຂົ້າເຖິງພິກຂາຈານ ຊື່ວ່າພິກຂຸ ຍ້ອນຊົງຜ້າທີ່ຖືກທຳລາຍ ຊື່ວ່າພິກຂຸ ຍ້ອນທຳລາຍບາບອະກຸສົນທຳໄດ້ແລ້ວ ຊື່ວ່າພິກຂຸ ຍ້ອນລະກິເລດໄດ້ສະເພາະສ່ວນ ຊື່ວ່າພິກຂຸ ຍ້ອນລະກິເລດໄດ້ໂດຍບໍ່ສະເພາະສ່ວນ ຊື່ວ່າພິກຂຸ ຍ້ອນເປັນພຣະເສຂະ ຊື່ວ່າພິກຂຸ ຍ້ອນເປັນພຣະອະເສຂະ ຊື່ວ່າພິກຂຸ ຍ້ອນບໍ່ເປັນພຣະເສຂະແລະພຣະອະເສຂະ ຊື່ວ່າພິກຂຸ ຍ້ອນເປັນຜູ້ເລີດ ຊື່ວ່າພິກຂຸ ຍ້ອນເປັນຜູ້ຈະເລີນ ຊື່ວ່າພິກຂຸ ຍ້ອນເປັນຜູ້ ຜຸດຜ່ອງ ຊື່ວ່າພິກຂຸ ຍ້ອນເປັນຜູ້ມີສາຣະ ຊື່ວ່າພິກຂຸ ຍ້ອນເປັນຜູ້ອຸປະສົມບົທດ້ວຍຍັດຕິດະຕຸດຖະກຳທີ່ບໍ່ກຳເຣີບ ສົມຄວນແກ່ເຫດ ດ້ວຍສົງຜູ້ພ້ອມພຽງກັນ

[໕໑໑] ຄຳວ່າ ປາຕິໂມກ ອະທິບາຍວ່າ ສີນເປັນບ່ອນເພິ່ງ ເປັນເບື້ອງຕົ້ນ ເປັນຄວາມປະພຶດ ເປັນຄວາມສັງລວມ ເປັນຄວາມຣະວັງ ເປັນຫົວໜ້າ ເປັນປະທານ ເພື່ອຄວາມເຖິງພ້ອມແຫ່ງທຳທີ່ເປັນກຸສົນ

ຄຳວ່າ ສັງວອນ ອະທິບາຍວ່າ ຄວາມບໍ່ລ່ວງລະເມີດທາງກາຍ ທາງວາຈາ ແລະທັງທາງກາຍແລະວາຈາ

ຄຳວ່າ ເປັນຜູ້ສັງລວມ ອະທິບາຍວ່າ ເປັນຜູ້ເຂົ້າໄປເຖິງແລ້ວ ເຂົ້າໄປເຖິງແລ້ວດ້ວຍດີ ເຂົ້າມາເຖິງແລ້ວ ເຂົ້າມາເຖິງພ້ອມແລ້ວດ້ວຍດີ ເຂົ້າເຖິງແລ້ວ ເຂົ້າເຖິງແລ້ວດ້ວຍດີ ປະກອບແລ້ວ ດ້ວຍປາຕິໂມກສັງວອນນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ເປັນຜູ້ສັງລວມດ້ວຍປາຕິໂມກສັງວອນ

[໕໑໘] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ດຳເນີນໄປຢູ່ ຮັກສາຢູ່ ເປັນໄປຢູ່ ໃຫ້ເປັນໄປຢູ່ ທ່ຽວໄປຢູ່ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

[໕໑໓] ຄຳວ່າ ເຖິງພ້ອມດ້ວຍອາຈາຣະແລະໂຄຈອນ ອະທິບາຍວ່າ ອາຈາຣະກໍມີ ອະນາຈາຣະກໍມີ

ໃນ ໔ ຢ່າງນັ້ນ ອະນາຈາຣະ ເປັນແນວໃດ?

ຄວາມລ່ວງລະເມີດທາງກາຍ ທາງວາຈາ ທັງທາງກາຍແລະວາຈາ ນີ້ຮຽກວ່າ ອະນາຈາຣະ ຄວາມເປັນຜູ້ທຸສິນແມ່ນທັງໝົດກໍຮຽກວ່າ ອະນາຈາຣະ

ພິກຂຸບາງອົງໃນທຳວິໄນນີ້ລ້ຽງຊີວິດດ້ວຍການໃຫ້ໄມ້ໄຜ່ ໃຫ້ໃບໄມ້ ໃຫ້ດອກໄມ້ໃຫ້ໝາກໄມ້ ໃຫ້ເຄື່ອງນ້ຳ ໃຫ້ໄມ້ເຈຍ ການເວົ້າຍ້ອງຍໍຍ້ອນຕ້ອງການປະຈົບໃຫ້ເຂົາຮັກ ການເວົ້າທີ່ຫຼິ້ນທີຈິງເໝືອນແກງຖົ່ວ ການຮັບລ້ຽງເດັກ ການຮັບໃຊ້ສົ່ງຂ່າວສານ ຫຼື ດ້ວຍມິດສາອາຊີວະແນວໃດແນວໜຶ່ງທີ່ພຣະພຸດທະເຈົ້າຊົງຮັງກຽດ ນີ້ຮຽກວ່າ ອນາຈາຣະ

ອາຈາຣະ ເປັນແນວໃດ?

ຄວາມບໍ່ລ່ວງລະເມີດທາງກາຍ ທາງວາຈາ ທັງທາງກາຍແລະວາຈາ ນີ້ຮຽກວ່າ

ອາຈາຣະ ສິນສັງວອນແມ່ນທັງໝົດກໍຮຽກວ່າ ອາຈາຣະ

ພິກຂຸບາງອົງໃນທຳວິໄນນີ້ບໍ່ລ້ຽງຊີວິດດ້ວຍການໃຫ້ໄມ້ໄຜ່ ໃຫ້ໃບໄມ້ ໃຫ້ດອກໄມ້ ໃຫ້ໝາກໄມ້ ໃຫ້ເຄື່ອງນ້ຳ ໃຫ້ໄມ້ເຈຍ ການເວົ້າຍ້ອງຍໍຍ້ອນຕ້ອງການປະຈົບໃຫ້ເຂົາຮັກ ການເວົ້າທີ່ຫຼິ້ນທີຈິງເໝືອນແກງຖົ່ວ ການຮັບລ້ຽງເດັກ ການຮັບໃຊ້ສົ່ງຂ່າວສານ ຫຼື ດ້ວຍມິດສາອາຊີວະແນວໃດແນວໜຶ່ງທີ່ພຣະພຸດທະເຈົ້າຊົງຮັງກຽດ ນີ້ຮຽກວ່າ ອາຈາຣະ

[໕໑໔] ຄຳວ່າ ໂຄຈອນ ອະທິບາຍວ່າ ໂຄຈອນກໍມີ ອະໂຄຈອນກໍມີ

ໃນ ໔ ຢ່າງນັ້ນ ອະໂຄຈອນ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ເປັນຜູ້ມີຍິງແພດສະຫຍາເປັນໂຄຈອນ ມີຍິງໝ້າຍເປັນໂຄຈອນ ມີສາວເທື້ອເປັນໂຄຈອນ ມີບັນເດາະເປັນໂຄຈອນ ມີພິກຂຸນີເປັນໂຄຈອນ ຫຼື ມີຮ້ານສຸຣາເປັນໂຄຈອນ ເປັນຜູ້ຢູ່ຄຸກຄີກັບພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ສາວົກ

ເດຍຣະຖີ ດ້ວຍການຄຸກຄີກັບຄະລຶຫັດທີ່ບໍ່ສົມຄວນ ຫຼື ເສບຄົບເຂົ້າໄປນັ່ງໃກ້ຕະກູນ ທີ່ບໍ່ມີສັດທາ ບໍ່ເຫຼື້ອມໃສ ບໍ່ເປັນເໝືອນບໍ່ນໍ້າ ມັກດ່າແລະບໍຣິພາດ ປາຖະໜາແຕ່ສິ່ງທີ່ບໍ່ແມ່ນປະໂຫຍດ ປາຖະໜາແຕ່ສິ່ງທີ່ບໍ່ເກື້ອກູນ ປາຖະໜາແຕ່ສິ່ງທີ່ບໍ່ຜາສຸກ ບໍ່ປາຖະໜາຄວາມຫຼຸດພົ້ນຈາກໂຍຄະແກ່ພວກພິກຂຸ ພິກຂຸນີ ອຸປາສົກແລະອຸປາສິກາເຊັ່ນນັ້ນນີ້ຮຽກວ່າ ອະໂຄຈອນ

ໂຄຈອນ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ບໍ່ເປັນຜູ້ມີຍິງແພດສະຫຍາເປັນໂຄຈອນ ບໍ່ເປັນຜູ້ມີຍິງໝ້າຍເປັນໂຄຈອນ ບໍ່ເປັນຜູ້ມີສາວເທື້ອເປັນໂຄຈອນ ບໍ່ເປັນຜູ້ມີບັນເດາະເປັນໂຄຈອນ ບໍ່ເປັນຜູ້ມີພິກຂຸນີເປັນໂຄຈອນ ບໍ່ເປັນຜູ້ມີຮ້ານສຸຣາເປັນໂຄຈອນ ບໍ່ຢູ່ຄຸກຄີກັບພຣະຣາຊາມະຫາອຳມາດຂອງພຣະຣາຊາ ເດຍຣະຖີ ສາວົກເດຍຣະຖີ ດ້ວຍການຄຸກຄີກັບຄະລຶຫັດ ທີ່ບໍ່ສົມຄວນ ຫຼື ເສບຄົບເຂົ້າໄປນັ່ງໃກ້ຕະກູນທີ່ມີສັດທາເຫຼື້ອມໃສເປັນເໝືອນບໍ່ນໍ້າ ຮຸ່ງເຮືອງໄປດ້ວຍຜ້າກາສາວະ ອົບອວນໄປດ້ວຍກິ່ນຂອງລືສີ ປາຖະໜາແຕ່ສິ່ງທີ່ເປັນປະໂຫຍດ ປາຖະໜາແຕ່ສິ່ງທີ່ເກື້ອກູນ ປາຖະໜາແຕ່ສິ່ງທີ່ເປັນຄວາມຜາສຸກ ປາຖະໜາແຕ່ຄວາມຫຼຸດພົ້ນຈາກໂຍຄະແກ່ພວກພິກຂຸ ພິກຂຸນີ ອຸປາສົກແລະອຸປາສິກາເຊັ່ນນັ້ນ ນີ້ຮຽກວ່າ ໂຄຈອນ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ໆລໆ ປະກອບແລ້ວດ້ວຍອາຈາຣະນີ້ແລະດ້ວຍໂຄຈອນນີ້ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ເຖິງພ້ອມດ້ວຍອາຈາຣະແລະໂຄຈອນ

[໕໑໕] ໃນຄຳວ່າ ເຫັນໄພໃນໂທດມີປະມານໜ້ອຍ ອະທິບາຍວ່າ ໃນຄຳວ່າ ເຫັນໄພໃນໂທດມີປະມານໜ້ອຍນັ້ນ ໂທດມີປະມານໜ້ອຍ ເປັນແນວໃດ?

ໂທດຢ່າງຕໍ່າ ຢ່າງເບົາ ທີ່ສົມມຸດກັນວ່າໂທດເບົາ ທີ່ຈະເພິ່ງເຮັດດ້ວຍຄວາມສັງລວມ ຣະວັງ ແລະດ້ວຍຈິດຕຸບບາດທີ່ເນື່ອງດ້ວຍມະນະສິການ ເຫຼົ່ານີ້ຮຽກວ່າ ໂທດມີປະມານໜ້ອຍ

ພິກຂຸເປັນຜູ້ເຫັນໂທດ ໄພ ຄວາມຊົ່ວຮ້າຍ ແລະເຫັນການສະລັດອອກໃນໂທດທີ່ມີປະມານໜ້ອຍເຫຼົ່ານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ເຫັນໄພໃນໂທດມີປະມານໜ້ອຍ ດ້ວຍປະການດັ່ງນີ້

[໕໑໖] ໃນຄຳວ່າ ສະມາທານສຶກສາໃນສິກຂາທັງຫຼາຍນັ້ນ ສິກຂາ ເປັນແນວໃດ?

ສິກຂາ ໔ ຄື

| | | |
|---|---|---|
| ໑. ສິກຂາຂອງພິກຂຸ | ຮຽກວ່າ | ພິກຂຸສິກຂາ |
| ໒. ສິກຂາຂອງພິກຂຸນີ | ຮຽກວ່າ | ພິກຂຸນີສິກຂາ |
| ໓. ສິກຂາຂອງອຸປາສົກ | ຮຽກວ່າ | ອຸປາສະກະສິກຂາ |
| ໔. ສິກຂາຂອງອຸປາສິກາ | ຮຽກວ່າ | ອຸປາສິກາສິກະຂາ |

ເຫຼົ່ານີ້ຮຽກວ່າ ສິກຂາ

ພິກຂຸສະມາທານໃນສິກຂາເຫຼົ່ານີ້ທັງໝົດດ້ວຍການສະມາທານທຸກຢ່າງ ບໍ່ໃຫ້ມີສ່ວນເຫຼືອ ປະພຶດຢູ່ໃນສິກຂາເຫຼົ່ານີ້ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ສະມາທານສຶກສາ ໃນສິກຂາທັງຫຼາຍ

[໕໑໗] ຄຳວ່າ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ອະທິບາຍວ່າ ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍກໍມີ ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍກໍມີ

ໃນ ໘ ຢ່າງນັ້ນ ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ເຫັນຮູບດ້ວຍຕາແລ້ວລວມຖື ແຍກຖື ບໍ່ປະຕິບັດເພື່ອສັງລວມຈັກຂຸນຊີນັ້ນ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຍ່ອມບໍ່ຮັກສາຈັກຂຸນຊີ ບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ຟັງ ສຽງດ້ວຍຫູ ຯລຯ ສູບກິ່ນດ້ວຍດັງ ຯລຯ ຊີມຣົດດ້ວຍລີ້ນ ຯລຯ ຖືກຕ້ອງໂຜດຖັບພະດ້ວຍກາຍ ຯລຯ ຮູ້ທຳມາຣົມດ້ວຍໃຈແລ້ວ ລວມຖື ແຍກຖືບໍ່ປະຕິບັດເພື່ອສັງລວມມະນິນຊີນັ້ນ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຍ່ອມບໍ່ຮັກສາມະນິນຊີ ບໍ່ເຖິງຄວາມສັງລວມໃນມະນິນຊີ ຄວາມບໍ່ຄຸ້ມຄອງ ກິຣິຍາທີ່ບໍ່ຄຸ້ມຄອງ ຄວາມບໍ່ຮັກສາ ຄວາມບໍ່ສັງລວມອິນຊີ ໖ ເຫຼົ່ານີ້ ນີ້ຮຽກວ່າ ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ

ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ ເຫັນຮູບທາງຕາແລ້ວ ບໍ່ລວມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມຈັກຂຸນຊີນັ້ນ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ຍ່ອມຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ຯລຯ ສູບກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ບໍ່ລວມຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມມະນິນຊີນັ້ນ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຍ່ອມຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ຄວາມຄຸ້ມຄອງ ກິຣິຍາທີ່ຄຸ້ມຄອງ ຄວາມຮັກສາ ຄວາມສັງລວມອິນຊີ ໖ ເຫຼົ່ານີ້ ນີ້ຮຽກວ່າ ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຍ້ອນແນວນັ້ນຈຶ່ງຮຽກວ່າ ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ

[໕໑໘] ຄຳວ່າ ຮູ້ຈັກປະມານໃນການບໍຣິໂພກ ອະທິບາຍວ່າ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກກໍມີ ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກກໍມີ

ໃນ ໘ ຢ່າງນັ້ນ ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ບໍ່ພິຈາລະນາໂດຍແຍບຄາຍ ບໍຣິໂພກອາຫານເພື່ອຫຼິ້ນ ເພື່ອຄວາມມົວເມົາ ເພື່ອປະບຳລຸງຜິວ ເພື່ອຄວາມຕຸ້ຍພີ ຄວາມເປັນຜູ້ບໍ່ສັນໂດດ ຄວາມເປັນຜູ້ບໍ່ຮູ້ຈັກປະມານ ຄວາມເປັນຜູ້ບໍ່ພິຈາລະນາໃນການບໍຣິໂພກນັ້ນ ນີ້ຮຽກວ່າ ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ

ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍວ່າ ເຮົາບໍຣິໂພກອາຫານບໍ່ແມ່ນເພື່ອຫຼິ້ນ ເພື່ອຄວາມມົວເມົາ ເພື່ອບຳລຸງຜິວ ແລະເພື່ອຄວາມຕຸ້ຍພີ ແຕ່ເພື່ອກາຍນີ້ດຳຣົງຢູ່ ເພື່ອໃຫ້ຊີວິຕິນຊີເປັນໄປ ເພື່ອບຳບັດຄວາມຫິວ ເພື່ອອະນຸເຄາະພົມມະຈັນ ໂດຍອຸປາຍນີ້ ເຮົາຈັກກຳຈັດເວທະນາເກົ່າສາໄດ້ ແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມເປັນໄປແຫ່ງຊີວິຕິນຊີ ຄວາມບໍ່ມີໂທດ ແລະການຢູ່ໂດຍຜາສຸກຈັກມີແກ່ເຮົາ ດັ່ງນີ້ ແລ້ວຈຶ່ງບໍຣິໂພກະອາຫານ ຄວາມສັນໂດດ ຄວາມເປັນຜູ້ຮູ້ຈັກປະມານ ການພິຈາລະນາໃນການບໍຣິໂພກນັ້ນ ນີ້ຮຽກວ່າ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ

[໕໑໙] ພິກຂຸເປັນຜູ້ໝັ່ນປະກອບຄວາມພຽນເປັນເຄື່ອງຕື່ນຢູ່ຕະຫຼອດປະຖົມຍາມແລະປັດສິມຍາມ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຊຳຣະຈິດໃຫ້ບໍລິສຸດຈາກທຳທີ່ກັ້ນຈິດບໍ່ໃຫ້ບັນລຸຄວາມດີດ້ວຍ ການຍ່າງຈົງກົມ ດ້ວຍການນັ່ງຕະຫຼອດວັນ ຊຳຣະຈິດໃຫ້ບໍລິສຸດຈາກທຳທີ່ກັ້ນຈິດບໍ່ໃຫ້ບັນລຸ ຄວາມດີດ້ວຍການຍ່າງຈົງກົມ ດ້ວຍການນັ່ງຕະຫຼອດປະຖົມຍາມແຫ່ງຣາຕີ ສຳເລັດສີຫະໄສຍາດ ໂດຍການນອນຕະແຄງຂ້າງຂວາ ຕີນຊ້ອນຕີນ ມີສະຕິສຳປະຊັນຍະ ຕັ້ງໃຈວ່າຈະລຸກຂຶ້ນຕະຫຼອດມັດຊິມະຍາມແຫ່ງຣາຕີ ຊຳຣະຈິດໃຫ້ບໍລິສຸດຈາກທຳທີ່ກັ້ນຈິດບໍ່ໃຫ້ບັນລຸຄວາມດີດ້ວຍການເດີນຈົງກົມ ດ້ວຍການນັ່ງຕະຫຼອດປັດສິມຍາມແຫ່ງຣາຕີ ພິກຂຸຊື່ວ່າເປັນຜູ້ໝັ່ນປະກອບຄວາມພຽນເປັນເຄື່ອງຕື່ນຢູ່ຕະຫຼອດປະຖົມຍາມ ແລະປັດສິມຍາມດ້ວຍປະການດັ່ງນີ້

[໕໘໐] ຄຳວ່າ ຄວາມພຽນທີ່ເປັນໄປຕິດຕໍ່ ອະທິບາຍວ່າ ການຜາຣົບຄວາມພຽນ ທາງໃຈ ຯລຯ ສຳມາວາຍາມະ

[໕໘໑] ຄຳວ່າ ປັນຍາເປັນອຸບາຍໃນກິດທັງປວງ ອະທິບາຍວ່າ ປັນຍາ ກິຣິຍາທີ່ ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ

[໕໔໔] ໃນຄຳວ່າ ເປັນຜູ້ໝັ່ນປະກອບຄວາມພຽນໃນການຈະເລີນໂພທິປັກຂິຍະທຳ ນັ້ນ ໂພທິປັກຂິຍະທຳ ເປັນແນວໃດ?

ໂພດຊົງ ໗ ຄື

໑. ສະຕິສຳໂພດຊົງ
໒. ທຳມະວິຈະຍະສຳໂພດຊົງ
໓. ວິຣິຍະສຳໂພດຊົງ
໔. ປີຕິສຳໂພດຊົງ
໕. ປັດສັດທິສຳໂພດຊົງ
໖. ສະມາທິສຳໂພດຊົງ
໗. ອຸເປກຂາສຳໂພດຊົງ

ເຫຼົ່ານີ້ຮຽກວ່າ ໂພທິປັກຂິຍະທຳ

ພິກຂຸ ເສບ ຈະເລີນ ເຮັດໃຫ້ຫຼາຍເຊິ່ງໂພທິປັກຂິຍະທຳເຫຼົ່ານັ້ນດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ເປັນຜູ້ໝັ່ນປະກອບຄວາມພຽນໃນການຈະເລີນໂພທິປັກຂິຍະທຳ

[໕໔໓] ພິກຂຸກະທຳຄວາມຮູ້ສຶກຕົວໃນການກ້າວໄປ ການຖອຍກັບ
ກະທຳຄວາມຮູ້ສຶກຕົວໃນການແນມເບິ່ງ ການຫຼຽວເບິ່ງ
ກະທຳຄວາມຮູ້ສຶກຕົວໃນການຄູ້ເຂົ້າ ການຢຽດອອກ
ກະທຳຄວາມຮູ້ສຶກຕົວໃນການຄອງຜ້າສັງຄາຕິ ບາດ ຈີວອນ
ກະທຳຄວາມຮູ້ສຶກຕົວໃນການສັນ ການດື່ມ ການຫຍ້ຳ ການຊີມ
ກະທຳຄວາມຮູ້ສຶກຕົວໃນການຖ່າຍອຸດຈາຣະປັດສາວະ

ກະທຳຄວາມຮູ້ສຶກຕົວໃນການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການນິ່ງ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ເປັນຜູ້ມີສະຕິສຳປະຊັນຍະກ້າວໄປ ຖອຍກັບ ໑ ເປັນຜູ້ມີສະຕິ ສຳປະຊັນຍະແນມເບິ່ງ ຫຼຽວເບິ່ງ ໑ ເປັນຜູ້ມີສະຕິສຳປະຊັນຍະຄູ້ເຂົ້າ ຢຽດອອກ ໑ ເປັນຜູ້ມີສະຕິສຳປະຊັນຍະໃນການຄອງຜ້າສັງຄາຕິ ບາດ ແລະ ຈີວອນ ໑ ເປັນຜູ້ມີສະຕິສຳປະຊັນຍະໃນການສັນ ການດື່ມ ການຫຍ້ຳ ການຊີມ ໑ ເປັນຜູ້ມີສະຕິສຳປະຊັນຍະໃນການຖ່າຍອຸດຈາຣະປັດສາວະ ໑ ເປັນຜູ້ມີສະຕິສຳປະຊັນຍະໃນການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ແລະການນິ່ງ ໑

[໕໔໔] ບັນດາສະພາວະທຳເຫຼົ່ານັ້ນ ສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຄວາມຫວນຣະລຶກ ສະຕິ ກິຣິຍາທີ່ຣະລຶກ ຄວາມຣະລຶກ ຄວາມຊົງຈຳ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມ ສະຕິ ສະຕິນຊີ ສະຕິພະລະ ສຳມາສະຕິ ນີ້ຮຽກວ່າ ສະຕິ

[໔໘໕] ໃນຄຳວ່າ ມີສຳປະຊັນຍະ ນັ້ນ ສຳປະຊັນຍະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມໄຈ້ແຍກ ຄວາມວິໄຈທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄິດຄົ້ນ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາເໝືອນປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄື ປັນຍາ ແສງສະຫວ່າງຄືປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ສຳປະຊັນຍະ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍສະຕິນີ້ແລະສຳປະຊັນຍະນີ້ດ້ວຍປະການດັ່ງນີ້ ດ້ວຍການປະຕິບັດແນວນີ້ ພິກຂຸຊື່ວ່າເປັນຜູ້ມີສະຕິສຳປະຊັນຍະກ້າວໄປຖອຍກັບ ໑ ເປັນຜູ້ມີສະຕິສຳປະຊັນຍະແນມເບິ່ງຫຼຽວເບິ່ງ ໑ ເປັນຜູ້ມີສະຕິສຳປະຊັນຍະຄູ້ເຂົ້າຢຽດອອກ ໑ ເປັນຜູ້ມີສະຕິສຳປະຊັນຍະໃນການຄອງສັງຄາຕິ ບາດ ແລະຈີວອນ ໑ ເປັນຜູ້ມີສະຕິສຳປະຊັນຍະໃນການສັນ ການດື່ມ ການຫຍ້ຳ ການຊີມ ໑ ເປັນຜູ້ມີສະຕິສຳປະຊັນຍະໃນການຖ່າຍອຸດຈາຣະ ປັດສາວະ ໑ ເປັນຜູ້ມີສະຕິສຳປະຊັນຍະໃນການຍ່າງ ການຢືນ ການນັ່ງ ການນອນການຕື່ນ ການເວົ້າ ແລະການນິ່ງ ໑

[໔໘໖] ຄຳວ່າ ສະຫງັດ ອະທິບາຍວ່າ ແມ່ນຫາກເສນາສະນະຈະຢູ່ໃນບ່ອນໃກ້ ແຕ່ເສນາສະນະນັ້ນບໍ່ນອງນັນດ້ວຍເຫຼົ່າຄະລິຫັດແລະບັນພະຊິດ ຍ້ອນແນວນັ້ນ ເສນາສະນະນັ້ນຊື່ວ່າສະຫງັດ ແມ່ນຫາກເສນາສະນະຈະຢູ່ໃນບ່ອນບ່ອນຫ່າງໄກ ແຕ່ເສນາສະນະນັ້ນບໍ່ນອງນັນດ້ວຍເຫຼົ່າຄະລິຫັດແລະບັນພະຊິດ ຍ້ອນແນວນັ້ນ ເສນາສະນະນັ້ນກໍຊື່ວ່າສະຫງັດ

[໔໘໗] ຄຳວ່າ ເສນາສະນະ ອະທິບາຍວ່າ ເສນາສະນະ ຄື ຕຽງ ຕັ່ງ ຟູກ ໝອນ ວິຫານ ເງິບ ປາສາດ ປ້ອມ ໂຮງມົນ ທີ່ລັບລີ້ ຖ້ຳ ເຫງົ້າໄມ້ ສຸມໄຜ່ ຫຼື ສະຖານທີ່ທີ່ພິກຂຸອາໄສຢູ່ ທີ່ທັງໝົດນີ້ຊື່ວ່າເສນາສະນະ

[໔໘໘] ຄຳວ່າ ອາໄສເສນາສະນະທີ່ສະຫງັດຢູ່ ອະທິບາຍວ່າ ອາໄສ ອາໄສຢູ່ດ້ວຍດີພັກຢູ່ ເຂົ້າໄປພັກຢູ່ ພັກອາໄສເສນາສະນະທີສະຫງັດນີ້ຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ອາໄສເສນາສະນະທີ່ສະຫງັດຢູ່

[໔໘໙] ຄຳວ່າ ປ່າ ອະທິບາຍວ່າ ສະຖານທີ່ອອກໄປນອກເຂດເມືອງທັງໝົດ ນີ້ຊື່ວ່າ ປ່າ

[໔໙໐] ຄຳວ່າ ເຫງົ້າໄມ້ ອະທິບາຍວ່າ ຣຸກຂະມູນຄືເຫງົ້າໄມ້ ບັນພົດຄືພູເຂົາກັນທຣະຄືຮ່ອມພູ ຄິຣິຄຸຫາຄືຖ້ຳໃນພູເຂົາ ສຸສານຄືປ່າຊ້າ ອັບໂພກາສະຄືທີ່ແຈ້ງ ປະລານະປຸນຊະ ຄືກອງເຟືອງ

[໔໓໑] ຄຳວ່າ ດົງ ນີ້ ເປັນຊື່ຂອງເສນາສະນະທີ່ຫ່າງໄກ
ຄຳວ່າ ດົງ ນີ້ ເປັນຊື່ຂອງເສນາສະນະທີ່ມີປ່າທຶບ
ຄຳວ່າ ດົງ ນີ້ ເປັນຊື່ຂອງເສນາສະນະທີ່ໜ້າຢ້ານກົວ
ຄຳວ່າ ດົງ ນີ້ ເປັນຊື່ຂອງເສນາສະນະທີ່ເປັນຕາຢ້ານຈົນຂົນພອງສະຫຍອງເກົ້າ
ຄຳວ່າ ດົງ ນີ້ ເປັນຊື່ຂອງເສນາສະນະທີ່ຕັ້ງຢູ່ປາຍແດນ
ຄຳວ່າ ດົງ ນີ້ ເປັນຊື່ຂອງເສນາສະນະທີ່ບໍ່ຢູ່ໃກ້ມະນຸດ
ຄຳວ່າ ດົງ ນີ້ ເປັນຊື່ຂອງເສນາສະນະທີ່ຢູ່ໄດ້ຍາກ

[໔໓໒] ຄຳວ່າ ມີສຽງໜ້ອຍ ອະທິບາຍວ່າ ແມ່ນຫາກເສນາສະນະຈະຢູ່ໃນບ່ອນໃກ້ ແຕ່ເສນາສະນະນັ້ນບໍ່ນອງນັນດ້ວຍເຫຼົ່າຄະລຶຫັດແລະບັນພະຊິດ ຍ້ອນແນວນັ້ນເສນາສະນະນັ້ນ ຈຶ່ງຊື່ວ່າມີສຽງໜ້ອຍ ແມ່ນຫາກເສນາສະນະຈະຢູ່ໃນບ່ອນຫ່າງໄກ ແຕ່ເສນາສະນະນັ້ນບໍ່ນອງນັນດ້ວຍເຫຼົ່າຄະລຶຫັດແລະບັນພະຊິດ ຍ້ອນແນວນັ້ນ ເສນາສະນະນັ້ນກໍຊື່ວ່າມີສຽງໜ້ອຍ

[໔໓໓] ຄຳວ່າ ມີສຽງອຶກກະທຶກໜ້ອຍ ອະທິບາຍວ່າ ເສນາສະນະໃດມີສຽງໜ້ອຍ
ເສນາສະນະນັ້ນຊື່ວ່າມີສຽງອຶກກະທຶກໜ້ອຍ ເສນາສະນະໃດມີສຽງອຶກກະທຶກໜ້ອຍ ເສນາສະນະນັ້ນຊື່ວ່າບໍ່ມີຄົນສັນຈອນໄປມາ ເສນາສະນະໃດບໍ່ມີຜູ້ຄົນສັນຈອນໄປມາ ເສນາສະນະນັ້ນຊື່ວ່າເປັນສະຖານທີ່ທີ່ມະນຸດແອບກະທຳການໄດ້ ເສນາສະນະໃດເປັນສະຖານທີ່ທີ່ມະນຸດແອບກະທຳການໄດ້ ເສນາສະນະນັ້ນກໍຊື່ວ່າ ສົມຄວນເປັນທີ່ຫຼີກລີ້ຢູ່

[໔໓໔] ຄຳວ່າ ເປັນຜູ້ຢູ່ປ່າ ຢູ່ເຫງົ້າໄມ້ ຫຼື ຢູ່ເຮືອນວ່າງ ອະທິບາຍວ່າ ເປັນຜູ້ຢູ່ປ່າຢູ່ເຫງົ້າໄມ້ ຫຼື ຢູ່ເຮືອນວ່າງ

[໔໓໕] ຄຳວ່າ ນັ່ງຄູ້ບັນລັງ ອະທິບາຍວ່າ ເປັນຜູ້ນັ່ງຂັດສະມາທິ

[໔໓໖] ຄຳວ່າ ຕັ້ງກາຍກົງ ອະທິບາຍວ່າ ກາຍທີ່ດຳຣົງໄວ້ ຕັ້ງໄວ້ ຍ່ອມເປັນກາຍກົງ

[໔໓໗] ໃນຄຳວ່າ ດຳຣົງສະຕິໝັ້ນມຸ້ງສະເພາະກຳມະຖານນັ້ນ ສະຕິ ເປັນແນວໃດ?
ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ນີ້ຮຽກວ່າ ສະຕິ
ສະຕິນີ້ເປັນອັນພິກຂຸດຳຣົງໄວ້ໝັ້ນແລ້ວ ຕັ້ງໄວ້ດີແລ້ວທີ່ປາຍດັງ ຫຼື ທີ່ນິມິດເໜືອຣິມຝີປາກ ຍ້ອນແນວນັ້ນຈຶ່ງຮຽກວ່າ ດຳຣົງສະຕິໝັ້ນມຸ້ງສະເພາະກຳມະຖານ

[໔໓໘] ໃນຄຳວ່າ ລະອະພິດຊາໃນໂລກໄດ້ ນັ້ນ ອະພິດຊາ ເປັນແນວໃດ?
ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ຄວາມກຳໜັດແຮງກ້າແຫ່ງຈິດ ນີ້ຮຽກວ່າ ອະພິດຊາ

ໂລກ ເປັນແນວໃດ?

ອຸປາທານຂັນ ໕ ຊື່ວ່າໂລກ ນີ້ຮຽກວ່າ ໂລກ

ອະພິດຊານີ້ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວໃນໂລກນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ລະອະພິດຊາໃນໂລກໄດ້

[໕໓໙] ໃນຄໍາວ່າ ມີຈິດປາສະຈາກອະພິດຊາ ນັ້ນ ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ฯລฯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ ຈິດນີ້ ເປັນທໍາມະຊາດປາສະຈາກອະພິດຊາ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີຈິດປາສະຈາກອະພິດຊາ

[໕໔໐] ຄໍາວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ດໍາເນີນໄປຢູ່ ຮັກສາຢູ່ ເປັນໄປຢູ່ ໃຫ້ເປັນໄປຢູ່ ທ່ຽວໄປຢູ່ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

[໕໔໑] ໃນຄໍາວ່າ ຊໍາຣະຈິດໃຫ້ບໍລິສຸດຈາກອະພິດຊານັ້ນ ອະພິດຊາ ເປັນແນວໃດ?

ຄວາມກໍາໜັດ ຄວາມກໍາໜັດແຮງ ฯລฯ ຄວາມກໍາໜັດແຮງແຫ່ງຈິດ ນີ້ຮຽກວ່າ ອະພິດຊາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ฯລฯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ພິກຂຸຊໍາຣະຈິດນີ້ພາໃຫ້ບໍລິສຸດ ໃຫ້ຜຸດຜ່ອງ ໃຫ້ມົດຈິດ ໃຫ້ຫຼຸດ ໃຫ້ພົ້ນ ໃຫ້ຫຼຸດພົ້ນຈາກ ອະພິດຊານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຊໍາຣະຈິດໃຫ້ບໍລິສຸດຈາກອະພິດຊາ

[໕໔໒] ຄໍາວ່າ ລະຄວາມພະຍາບາດ ແລະຄວາມຄິດປະທຸດສະຮ້າຍໄດ້ແລ້ວ ອະທິບາຍວ່າ ຄວາມພະຍາບາດກໍມີ ຄວາມປະທຸດສະຮ້າຍກໍມີ

ໃນ ໒ ຢ່າງນັ້ນ ຄວາມພະຍາບາດ ເປັນແນວໃດ?

ຈິດອາຄາດ ຄວາມຂັດເຄືອງ ຄວາມກະທົບກະທັ່ງ ຄວາມແຄ້ນ ຄວາມເຄືອງ ຄວາມຂຸ່ນເຄືອງ ຄວາມນອງນັນ ໂທສະ ຄວາມຄິດປະທຸດສະຮ້າຍ ຄວາມຄິດມຸ້ງຮ້າຍ ຄວາມຂຸ່ນຈິດ ທໍາມະຊາດທີ່ປະທຸດສະຮ້າຍໃຈ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ມີລັກສະນະເຊັ່ນວ່ານີ້ (ແລະ) ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດ ນີ້ຮຽກວ່າ ຄວາມພະຍາບາດ

ຄວາມຄິດປະທຸດສະຮ້າຍ ເປັນແນວໃດ?

ຄວາມພະຍາບາດອັນໃດ ອັນນັ້ນເປັນຄວາມຄິດປະທຸດສະຮ້າຍ ຄວາມຄິດປະທຸດສະຮ້າຍອັນໃດ ອັນນັ້ນເປັນຄວາມພະຍາບາດ ຄວາມພະຍາບາດນີ້ ແລະຄວາມຄິດປະທຸດສະຮ້າຍນີ້

ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ລະຄວາມພະຍາບາດແລະຄວາມຄິດປະທຸດສະຮ້າຍໄດ້ແລ້ວ

[໕໔໓] ໃນຄຳວ່າ ມີຈິດບໍ່ພະຍາບາດ ນັ້ນ ຈິດ ເປັນແນວໃດ?
ຈິດ ມະໂນ ມານັດ ฯລฯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ
ຈິດນີ້ເປັນຈິດບໍ່ພະຍາບາດ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີຈິດບໍ່ພະຍາບາດ

[໕໔໔] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ฯລฯ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າຢູ່

[໕໔໕] ຄຳວ່າ ຊຳຣະຈິດໃຫ້ບໍລິສຸດຈາກຄວາມພະຍາບາດ ແລະຄວາມຄິດປະທຸດສະຮ້າຍ ອະທິບາຍວ່າ ຄວາມພະຍາບາດກໍມີ ຄວາມຄິດປະທຸດສະຮ້າຍກໍມີ

ໃນ ໒ ຢ່າງນັ້ນ ຄວາມພະຍາບາດ ເປັນແນວໃດ?

ຈິດອາຄາດ ຄວາມຂັດເຄືອງ ຄວາມກະທົບກະທັ່ງ ຄວາມແຄ້ນ ຄວາມເຄືອງ ຄວາມຂຸ່ນເຄືອງ ຄວາມນອງນັນ ໂທສະ ຄວາມຄິດປະທຸດສະຮ້າຍ ຄວາມຄິດມຸ້ງຮ້າຍ ຄວາມຂຸ່ນຈິດທຳມະຊາດທີ່ປະທຸດສະຮ້າຍໃຈ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ມີລັກສະນະເຊັ່ນວ່ານີ້ (ແລະ) ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດ ນີ້ຮຽກວ່າ ຄວາມພະຍາບາດ

ຄວາມຄິດປະທຸດສະຮ້າຍ ເປັນແນວໃດ?

ຄວາມພະຍາບາດອັນໃດ ອັນນັ້ນເປັນຄວາມຄິດປະທຸດສະຮ້າຍ ຄວາມຄິດປະທຸດສະຮ້າຍອັນໃດ ອັນນັ້ນເປັນຄວາມພະຍາບາດ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ฯລฯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ພິກຂຸຊຳຣະຈິດນີ້ພາໃຫ້ບໍລິສຸດ ໃຫ້ຜຸດຜ່ອງ ໃຫ້ມົດຈິດ ໃຫ້ຫຼຸດ ໃຫ້ພົ້ນ ໃຫ້ຫຼຸດພົ້ນຈາກຄວາມພະຍາບາດແລະຄວາມຄິດປະທຸດສະຮ້າຍນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຊຳຣະຈິດໃຫ້ບໍລິສຸດຈາກຄວາມພະຍາບາດແລະຄວາມຄິດປະທຸດສະຮ້າຍ

[໕໔໖] ຄຳວ່າ ລະຖີນະມິດທະໄດ້ແລ້ວ ອະທິບາຍວ່າ ຖີນະມິດທະນັ້ນແຍກເປັນຖີນະຢ່າງໜຶ່ງ ມິດທະຢ່າງໜຶ່ງ

ໃນ ໒ ຢ່າງນັ້ນ ຖີນະ ເປັນແນວໃດ?

ຄວາມທຶດທູ່ ຄວາມບໍ່ຄວນແກ່ວຽກງານ ຄວາມທໍ້ແທ້ ຄວາມທໍ້ຖອຍແຫ່ງໃຈ ຄວາມຫຍໍ້ຍ່ອນກິຣິຍາທີ່ຫຍໍ້ຍ່ອນ ພາວະທີ່ຫຍໍ້ຍ່ອນ ຄວາມທໍ້ຖອຍ ກິຣິຍາທີ່ທໍ້ຖອຍ ພາວະທີ່ທໍ້ຖອຍແຫ່ງໃຈ ນີ້ຮຽກວ່າ ຖີນະ

ມິດທະ ເປັນແນວໃດ?

ຄວາມບໍ່ສະດວກກາຍ ຄວາມບໍ່ຄວນແກ່ວຽກງານ ຄວາມຫງອຍເຫງົາ ຄວາມຊຶບເຊົາແຫ່ງກາຍ ຄວາມງ່ວງນອນ ຄວາມງ່ວງຊຶມ ຄວາມຫຼັບ ຄວາມໂງກງ່ວງ ຄວາມຢາກຫຼັບ ກິຣິຍາທີ່ຢາກຫຼັບ ພາວະທີ່ຢາກຫຼັບ ນີ້ຮຽກວ່າ ມິດທະ

ຖີນະແລະມິດທະນີ້ ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ລະຖີນະມິດທະໄດ້ແລ້ວ

[໔໘ກ] ຄຳວ່າ ເປັນຜູ້ປາສະຈາກຖີນະມິດທະ ອະທິບາຍວ່າ ຊື່ວ່າເປັນຜູ້ປາສະຈາກ ຖີນະມິດທະ ຍ້ອນສະລະ ຄາຍ ປ່ອຍ ວາງ ສະລະຄືນ ລະແລະສະລະຄືນຖີນະມິດທະນັ້ນແລ້ວ ຍ້ອນແນວນັ້ນຈຶ່ງຮຽກວ່າ ເປັນຜູ້ປາສະຈາກຖີນະມິດທະ

[໔໘ຂ] ຄຳວ່າ ຢູ່ ອະທິບາຍວ່າ ฯລฯ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

[໔໙] ໃນຄຳວ່າ ໄດ້ອາໂລກະສັນຍາ ນັ້ນ ສັນຍາ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ນີ້ຮຽກວ່າ ສັນຍາ ສັນຍານີ້ເປັນຄວາມສະຫວ່າງ ເປີດເຜີຍ ບໍລິສຸດ ຜ່ອງໃສ ຍ້ອນແນວນັ້ນຈຶ່ງຮຽກວ່າ ໄດ້ອາໂລກະສັນຍາ

[໕໐] ໃນຄຳວ່າ ມີສະຕິສຳປະຊັນຍະ ນັ້ນ ສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ฯລฯ ສຳມາສະຕິ ນີ້ຮຽກວ່າ ສະຕິ

ສຳປະຊັນຍະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ฯລฯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ

ສຳມາທິດຖິ ນີ້ຮຽກວ່າ ສຳປະຊັນຍະ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ฯລฯ ປະກອບແລ້ວດ້ວຍສະຕິນີ້ແລະສຳປະຊັນຍະນີ້ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີສະຕິສຳປະຊັນຍະ

[໕໑] ຄຳວ່າ ຊຳຮະຈິດໃຫ້ບໍລິສຸດຈາກຖີນະມິດທະ ອະທິບາຍວ່າ ຖີນະມິດທະນັ້ນແຍກເປັນຖີນະຢ່າງໜຶ່ງ ມິດທະຢ່າງໜຶ່ງ

ໃນ ໒ ຢ່າງນັ້ນ ຖີນະ ເປັນແນວໃດ?

ຄວາມທົດທູ່ ໆລໆ ພາວະທີ່ທໍ້ຖອຍແຫ່ງໃຈ ນີ້ຮຽກວ່າ ຖີນະ

ມິດທະ ເປັນແນວໃດ?

ຄວາມບໍ່ສະດວກກາຍ ໆລໆ ພາວະທີ່ຢາກຫຼັບ ນີ້ຮຽກວ່າ ມິດທະ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ໆລໆ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ພິກຂຸຊຳຮະຈິດນີ້ພາໃຫ້ບໍລິສຸດ ໃຫ້ຜຸດຜ່ອງ ໃຫ້ມົດຈົດ ໃຫ້ຫຼຸດ ໃຫ້ພົ້ນ ໃຫ້ຫຼຸດພົ້ນຈາກຖີນະມິດທະນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຊຳຮະຈິດໃຫ້ບໍລິສຸດຈາກຖີນະມິດທະ

[໕໕໒] ຄຳວ່າ ລະອຸດທັດຈະກຸກກຸດຈະໄດ້ແລ້ວ ອະທິບາຍວ່າ ອຸດທັດຈະກຸກກຸດຈະນັ້ນແຍກເປັນອຸດທັດຈະຢ່າງໜຶ່ງ ກຸກກຸດຈະຢ່າງໜຶ່ງ

ໃນ ໒ ຢ່າງນັ້ນ ອຸດທັດຈະ ເປັນແນວໃດ?

ຄວາມຟຸ້ງຊ່ານແຫ່ງຈິດ ຄວາມບໍ່ສະງົບແຫ່ງຈິດ ຄວາມຊັດສ່າຍແຫ່ງຈິດ ພາວະທີ່ແລ່ນໄປແຫ່ງຈິດ ນີ້ຮຽກວ່າ ອຸດທັດຈະ

ກຸກກຸດຈະ ເປັນແນວໃດ?

ຄວາມສຳຄັນວ່າ ຄວນໃນສິ່ງທີ່ບໍ່ຄວນ ບໍ່ຄວນໃນສິ່ງທີ່ຄວນ ມີໂທດໃນສິ່ງທີ່ບໍ່ມີໂທດ ບໍ່ມີໂທດໃນສິ່ງທີ່ມີໂທດ ຄວາມລຳຄານ ກິຣິຍາທີ່ລຳຄານ ພາວະທີ່ລຳຄານ ຄວາມເດືອດຮ້ອນໃຈ ຄວາມຫຍຸ້ງໃຈ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ກຸກກຸດຈະ

ອຸດທັດຈະແລະກຸກກຸດຈະນີ້ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ລະອຸດທັດຈະກຸກກຸດຈະໄດ້ແລ້ວ

[໕໕໓] ຄຳວ່າ ເປັນຜູ້ບໍ່ຟຸ້ງຊ່ານ ອະທິບາຍວ່າ ຊື່ວ່າເປັນຜູ້ບໍ່ຟຸ້ງຊ່ານ ຍ້ອນສະລະ ຄາຍປ່ອຍວາງ ລະ ສະລັດອອກ ລະແລະສະລັດອອກເຊິ່ງອຸດທັດຈະກຸກກຸດຈະນັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ເປັນຜູ້ບໍ່ຟຸ້ງຊ່ານ

[໕໕໔] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ໆລໆ ພັກຢູ່ ຍ້ອນແນວນັ້ນ ຈຶ່ງຮຽກວ່າຢູ່

[໕໕໕] ຄຳວ່າ ພາຍໃນຕົນ ອະທິບາຍວ່າ ເປັນພາຍໃນຕົນ ມີສະເພາະຕົນ

ໃນຄຳວ່າ ມີຈິດສະງົບ ນັ້ນ ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ ຈິດນີ້ເປັນທຳມະຊາດສະງົບຣະງັບ ສະງົບງຽບພາຍໃນຕົນ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີຈິດສະງົບພາຍໃນຕົນ

[໔໔໖] ຄຳວ່າ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ອະທິບາຍວ່າ ອຸດທັດຈະກຸກກຸດຈະນັ້ນແຍກເປັນອຸດທັດຈະຢ່າງໜຶ່ງ ກຸກກຸດຈະຢ່າງໜຶ່ງ

ໃນ ໒ ຢ່າງນັ້ນ ອຸດທັດຈະ ເປັນແນວໃດ?

ຄວາມຟຸ້ງຊ່ານແຫ່ງຈິດ ຄວາມບໍ່ສະງົບແຫ່ງຈິດ ຄວາມຊັດສ່າຍແຫ່ງຈິດ ພາວະທີ່ແລ່ນໄປແຫ່ງຈິດ ນີ້ຮຽກວ່າ ອຸດທັດຈະ

ກຸກກຸດຈະ ເປັນແນວໃດ?

ຄວາມສຳຄັນວ່າຄວນໃນສິ່ງທີ່ບໍ່ຄວນຯລຯ ຄວາມຫຍຸ້ງໃຈ ນີ້ຮຽກວ່າ ກຸກກຸດຈະ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ພິກຂຸຊຳຣະຈິດນີ້ພາໃຫ້ບໍລິສຸດ ໃຫ້ຜຸດຜ່ອງ ໃຫ້ມົດຈິດ ໃຫ້ຫຼຸດ ໃຫ້ພົ້ນ ໃຫ້ຫຼຸດພົ້ນຈາກອຸດທັດຈະແລະກຸກກຸດຈະນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ

[໔໔໗] ໃນຄຳວ່າ ລະວິຈິກິດສາໄດ້ແລ້ວ ນັ້ນ ວິຈິກິດສາ ເປັນແນວໃດ?

ຄວາມເຄືອບແຄງ ກິຣິຍາທີ່ເຄືອບແຄງ ພາວະທີ່ເຄືອບແຄງ ຄວາມຄິດເຫັນໄປຕ່າງ ໆ ຄວາມຕັດສິນອາລົມບໍ່ໄດ້ ຄວາມເຫັນເປັນ ໒ ແງ່ ຄວາມເຫັນເໝືອນທາງ ໒ ແຍກ ຄວາມສົງໄສ ຄວາມບໍ່ສາມາດຈະຖືເອົາໂດຍສ່ວນດຽວໄດ້ ຄວາມຄິດສ່າຍໄປ ຄວາມຄິດມົວໄປ ຄວາມບໍ່ສາມາດຢັ່ງລົງຖືເອົາໂດຍເປັນຍຸດຕິໄດ້ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃຈ ນີ້ຮຽກວ່າ ວິຈິກິດສາ

ວິຈິກິດສານີ້ ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວ ຍ້ອນແນວນັ້ນຈຶ່ງຮຽກວ່າ ລະວິຈິກິດສາໄດ້ແລ້ວ

[໔໔໘] ຄຳວ່າ ເປັນຜູ້ຂ້າມວິຈິກິດສາໄດ້ແລ້ວ ອະທິບາຍວ່າ ເປັນຜູ້ຂ້າມວິຈິກິດສານີ້ ຄືຂ້າມຂຶ້ນ ຂ້າມອອກເຖິງຝັ່ງ ເຖິງຄວາມສຳເລັດຕາມລຳດັບ ຍ້ອນແນວນັ້ນຈຶ່ງຮຽກວ່າ ເປັນຜູ້ຂ້າມວິຈິກິດສາໄດ້ແລ້ວ

[๔๘๙] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ฯລฯ ພັກຢູ່ ຍ້ອນແນວນັ້ນ ຈຶ່ງຮຽກວ່າ ຢູ່

ຄຳວ່າ ບໍ່ມີຄວາມສົງໄສໃນກຸສົນທຳ ອະທິບາຍວ່າ ບໍ່ເຄືອບແຄງ ບໍ່ສົງໄສ ບໍ່ມີຄວາມສົງໄສ ໝົດຄວາມສົງໄສ ປາສະຈາກຄວາມສົງໄສໃນກຸສົນທຳດ້ວຍວິຈິກິດສານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ບໍ່ມີຄວາມສົງໄສໃນກຸສົນທຳ

[๔๙๐] ໃນຄຳວ່າ ຊຳຮະຈິດໃຫ້ບໍລິສຸດຈາກວິຈິກິດສາ ນັ້ນ ວິຈິກິດສາ ເປັນແນວໃດ?

ຄວາມເຄືອບແຄງ ກິຣິຍາທີ່ເຄືອບແຄງ ພາວະທີ່ເຄືອບແຄງ ฯລฯ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃຈ ນີ້ຮຽກວ່າ ວິຈິກິດສາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ฯລฯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ພິກຂຸຊຳຮະຈິດນີ້ພາໃຫ້ບໍລິສຸດ ໃຫ້ຜຸດຜ່ອງ ໃຫ້ມົດຈົດ ໃຫ້ຫຼຸດ ໃຫ້ພົ້ນ ໃຫ້ຫຼຸດພົ້ນຈາກວິຈິກິດສານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຊຳຮະຈິດໃຫ້ບໍລິສຸດຈາກວິຈິກິດສາ

[๔๙๑] ຄຳວ່າ ລະນິວອນ ๕ ເຫຼົ່ານີ້ ອະທິບາຍວ່າ ນິວອນ ๕ ນີ້ເປັນອັນສະງົບ ຣະງັບສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວ ຍ້ອນແນວນັ້ນຈຶ່ງຮຽກວ່າ ລະນິວອນ ๕ ເຫຼົ່ານີ້

[๔๙๒] ຄຳວ່າ ທີ່ເປັນເຫດເຮັດໃຫ້ຈິດເສົ້າໝອງ ອະທິບາຍວ່າ ນິວອນ ๕ ເຫຼົ່ານີ້ເປັນເຄື່ອງເຮັດໃຫ້ຈິດເສົ້າໝອງ

[๔๙๓] ຄຳວ່າ ທອນກຳລັງປັນຍາ ອະທິບາຍວ່າ ປັນຍາທີ່ຍັງບໍ່ເກີດກໍຈະບໍ່ເກີດ ແລະປັນຍາທີ່ເກີດແລ້ວກໍຈະດັບໄປ ຍ້ອນນິວອນ ๕ ເຫຼົ່ານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ທອນກຳລັງປັນຍາ

[๔๙๔] ໃນຄຳວ່າ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ ນັ້ນ ກາມ ເປັນແນວໃດ?

ສັນທະຊື່ວ່າກາມ ຣາຄະຊື່ວ່າກາມ ສັນທະຣາຄະຊື່ວ່າກາມ ສັງກັບປະຊື່ວ່າກາມຣາຄະຊື່ວ່າກາມ ສັງກັບປະຣາຄະຊື່ວ່າກາມ ເຫຼົ່ານີ້ຮຽກວ່າ ກາມ

ອະກຸສົນທຳ ເປັນແນວໃດ?

ກາມສັນທະ ພະຍາບາດ ຖີນະມິດທະ ອຸດທັດຈະກຸກກຸດຈະ ແລະວິຈິກິດສາ ເຫຼົ່ານີ້ຮຽກວ່າ ອະກຸສົນທຳ

ພິກຂຸເປັນຜູ້ສະຫງັດແລ້ວຈາກກາມແລະອະກຸສົນທຳທັງຫຼາຍດັ່ງກ່າວມານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ

[໕໓໕] ຄໍາວ່າ ມີວິຕົກວິຈານ ອະທິບາຍວ່າ ວິຕົກວິຈານນັ້ນແຍກເປັນວິຕົກຢ່າງໜຶ່ງວິຈານຢ່າງໜຶ່ງ

ໃນ ໔ ຢ່າງນັ້ນ ວິຕົກ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດໍາຣິ ຄວາມທີ່ຈິດແນບແໜ້ນໃນອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່ອາລົມ ສໍາມາສັງກັປປະ ນີ້ຮຽກວ່າວິຕົກ

ວິຈານ ເປັນແນວໃດ?

ຄວາມຕອງ ຄວາມພິຈາລະນາ ຄວາມຕາມພິຈາລະນາ ຄວາມເຂົ້າໄປພິຈາລະນາ ຄວາມທີ່ຈິດສືບຕໍ່ອາລົມ ຄວາມທີ່ຈິດເພ່ງອາລົມ ນີ້ຮຽກວ່າ ວິຈານ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍວິຕົກວິຈານນີ້ດັ່ງທີ່ກ່າວມານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີວິຕົກວິຈານ

[໕໓໖] ຄໍາວ່າ ເກີດຈາກວິເວກ ອະທິບາຍວ່າ ວິຕົກ ວິຈານ ປີຕິ ສຸກ ແລະ ເອກັກຄະຕາ ທໍາເຫຼົ່ານັ້ນເກີດແລ້ວ ເກີດພ້ອມແລ້ວ ບັງເກີດແລ້ວ ບັງເກີດສະເພາະແລ້ວ ຜາກົດແລ້ວໃນວິເວກນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ເກີດຈາກວິເວກ

[໕໓໗] ຄໍາວ່າ ປີຕິແລະສຸກ ອະທິບາຍວ່າ ປີຕິແລະສຸກນັ້ນແຍກເປັນປີຕິຢ່າງໜຶ່ງ ສຸກຢ່າງໜຶ່ງ

ໃນ ໔ ຢ່າງນັ້ນ ປີຕິ ເປັນແນວໃດ?

ຄວາມອີ່ມເອີບ ຄວາມປາໂມດ ຄວາມຍິນດີຢ່າງຍິ່ງ ຄວາມບັນເທີງ ຄວາມຮ່າເຣີງ ຄວາມຣື່ນເຣີງ ຄວາມພໍໃຈ ຄວາມຕື່ນເຕັ້ນ ຄວາມທີ່ຈິດຊື່ນຊົມຍິນດີ ນີ້ຮຽກວ່າ ປີຕິ

ສຸກ ເປັນແນວໃດ?

ຄວາມສໍາຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສໍາຣານເປັນສຸກອັນເກີດຈາກເຈໂຕສໍາຜັດ ກິຣິຍາສະເຫວີຍອາລົມທີ່ສໍາຣານເປັນສຸກ ອັນເກີດຈາກເຈໂຕສໍາຜັດນີ້ຮຽກວ່າ ສຸກ

ສຸກນີ້ປະກອບ ເກີດພ້ອມ ປະປົນ ແລະປະກອບດ້ວຍປີຕິນີ້ ຍ້ອນແນວນັ້ນຈຶ່ງຮຽກ ວ່າ ມີປີຕິແລະສຸກ

[໕໓໘] ຄໍາວ່າ ປະຖົມ ອະທິບາຍວ່າ ຊື່ວ່າປະຖົມ ໂດຍລໍາດັບແຫ່ງການນັບ ຊື່ວ່າປະຖົມ ຍ້ອນໂຍຄາວະຈອນບຸກຄົນເຂົ້າເຖິງຊານນີ້ເປັນທີ ໑

[໔໙໙] ຄຳວ່າ ຊານ ອະທິບາຍວ່າ ວິຕົກ ວິຈານ ປີຕິ ສຸກ ແລະ ເອກັກຄະຕາ

[໔໗໐] ຄຳວ່າ ບັນລຸ ອະທິບາຍວ່າ ການໄດ້ ການໄດ້ສະເພາະ ການເຖິງ ການບັນລຸ ເຖິງຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ການບັນລຸປະຖົມຊານ

[໔໗໑] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າຢູ່

[໔໗໒] ຄຳວ່າ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ອະທິບາຍວ່າ ວິຕົກວິຈານນັ້ນ ແຍກເປັນວິຕົກຢ່າງໜຶ່ງ ວິຈານຢ່າງໜຶ່ງ

ໃນ ໒ ຢ່າງນັ້ນ ວິຕົກ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຯລຯ ສຳມາສັງກັບປະ ນີ້ຮຽກວ່າ ວິຕົກ

ວິຈານ ເປັນແນວໃດ?

ຄວາມຕອງ ຄວາມພິຈາລະນາ ຄວາມຕາມພິຈາລະນາ ຄວາມເຂົ້າໄປພິຈາລະນາ ຄວາມທີ່ຈິດສືບຕໍ່ອາລົມ ຄວາມທີ່ຈິດເພ່ງອາລົມ ນີ້ຮຽກວ່າ ວິຈານ

ວິຕົກແລະວິຈານດັ່ງກ່າວມານີ້ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີໃຫ້ສິ້ນໄປແລ້ວ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ

[໔໗໓] ຄຳວ່າ ພາຍໃນຕົນ ອະທິບາຍວ່າ ເປັນພາຍໃນຕົນ ມີສະເພາະຕົນ

[໔໗໔] ຄຳວ່າ ຜ່ອງໃສ ອະທິບາຍວ່າ ສັດທາ ກິຣິຍາທີ່ເຊື່ອ ຄວາມປັກໃຈເຊື່ອ ຄວາມເຫຼື້ອມໃສຍິ່ງ

[໔໗໕] ຄຳວ່າ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ອະທິບາຍວ່າ ຄວາມຕັ້ງຢູ່ແຫ່ງຈິດ ຯລຯ ສຳມາສະມາທິ

[໔໗໖] ຄຳວ່າ ບໍ່ມີວິຕົກບໍ່ມີວິຈານ ອະທິບາຍວ່າ ວິຕົກວິຈານນັ້ນແຍກເປັນວິຕົກຢ່າງໜຶ່ງ ວິຈານຢ່າງໜຶ່ງ

ໃນ ໒ ຢ່າງນັ້ນ ວິຕົກ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຯລຯ ສຳມາສັງກັບປະ ນີ້ຮຽກວ່າ ວິຕົກ

ວິຈານ ເປັນແນວໃດ?

ຄວາມຕອງ ຄວາມພິຈາລະນາ ຄວາມຕາມພິຈາລະນາ ຄວາມເຂົ້າໄປພິຈາລະນາ ຄວາມທີ່ຈິດສືບຕໍ່ອາລົມ ຄວາມທີ່ຈິດເພ່ງອາລົມ ນີ້ຮຽກວ່າ ວິຈານ

ວິຕົກວິຈານດັ່ງທີ່ກ່າວມານີ້ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວ ຍ້ອນແນວນັ້ນຈຶ່ງຮຽກວ່າ ບໍ່ມີວິຕົກບໍ່ມີວິຈານ

[໕໗] ຄຳວ່າ ເກີດຈາກສະມາທິ ອະທິບາຍວ່າ ຄວາມຜ່ອງໃສ ປີຕິ ແລະສຸກ ທຳ ເຫຼົ່ານັ້ນເກີດແລ້ວ ເກີດພ້ອມແລ້ວ ບັງເກີດແລ້ວ ບັງເກີດສະເພາະແລ້ວ ຜາກົດແລ້ວໃນສະມາທິນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ເກີດຈາກສະມາທິ

[໕໘] ຄຳວ່າ ມີປີຕິແລະສຸກ ອະທິບາຍວ່າ ປີຕິແລະສຸກນັ້ນແຍກເປັນປີຕິຢ່າງໜຶ່ງ ສຸກຢ່າງໜຶ່ງ

ໃນ ໒ ຢ່າງນັ້ນ ປີຕິ ເປັນແນວໃດ?

ຄວາມອິ່ມເອີບ ຄວາມປາໂມດ ຯລຯ ຄວາມທີ່ຈິດຊື່ນຊົມຍິນດີ ນີ້ຮຽກວ່າ ປີຕິ

ສຸກ ເປັນແນວໃດ?

ຄວາມສຳຣານທາງໃຈ ຯລຯ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ສຸກ

ສຸກນີ້ປະກອບ ເກີດພ້ອມ ປະປົນ ປະກອບດ້ວຍປີຕິນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີປີຕິແລະສຸກ

[໕໙] ຄຳວ່າ ທຸຕິຍະ ອະທິບາຍວ່າ ຊື່ວ່າທຸຕິຍະ ໂດຍລຳດັບແຫ່ງການນັບ ຊື່ວ່າທຸຕິຍະ ຍ້ອນໂຍຄາວະຈອນບຸກຄົນເຂົ້າເຖິງຊານນີ້ເປັນທີ ໒

[໖໐] ຄຳວ່າ ຊານ ອະທິບາຍວ່າ ຄວາມຜ່ອງໃສ ປີຕິ ສຸກ ແລະເອກັກຄະຕາ

[໖໑] ຄຳວ່າ ບັນລຸ ອະທິບາຍວ່າ ການໄດ້ ການໄດ້ສະເພາະ ການເຖິງ ການບັນລຸເຖິງຄວາມຖືກຕ້ອງ ການເຮັດໃຫ້ແຈ້ງ ການບັນລຸທຸຕິຍະຊານ

[໖໒] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າຢູ່

[໖໓] ໃນຄຳວ່າ ຍ້ອນປີຕິຈາງຄາຍອອກ ນັ້ນ ປີຕິ ເປັນແນວໃດ?

ຄວາມອິ່ມເອີບ ຄວາມປາໂມດ ຄວາມຍິນດີຢ່າງຍິ່ງ ຄວາມບັນເທີງ ຄວາມຣ່າເຣີງ ຄວາມຣື່ນເຣີງ ຄວາມພໍໃຈ ຄວາມຕື່ນເຕັ້ນ ຄວາມທີ່ຈິດຊື່ນຊົມຍິນດີ ນີ້ຮຽກວ່າ ປີຕິ

ປີຕິນີ້ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນປີຕິຈາງຄາຍອອກ

[໕໗໔] ໃນຄຳວ່າ ມີອຸເປກຂາ ນັ້ນ ອຸເປກຂາ ເປັນແນວໃດ?

ອຸເປກຂາ ພາວະທີ່ວາງເສີຍ ກິຣິຍາທີ່ເພ່ງເສີຍ ຄວາມວາງຕົນເປັນກາງແຫ່ງຈິດນີ້ຮຽກວ່າ ອຸເປກຂາ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍອຸເປກຂານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີອຸເປກຂາ

[໕໗໕] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

[໕໗໖] ໃນຄຳວ່າ ມີສະຕິສຳປະຊັນຍະນັ້ນ ສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ນີ້ຮຽກວ່າ ສະຕິ

ສຳປະຊັນຍະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ສຳປະຊັນຍະ

ພິກຂຸເປັນຜູ້ເຂົ້າໄປເຖິງແລ້ວ ຯລຯ ປະກອບແລ້ວດ້ວຍສະຕິນີ້ແລະສຳປະຊັນຍະນີ້ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີສະຕິສຳປະຊັນຍະ

[໕໗໗] ໃນຄຳວ່າ ສະເຫວີຍສຸກດ້ວຍນາມກາຍ ນັ້ນ ສຸກ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ສຸກ

ກາຍ ເປັນແນວໃດ?

ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ນີ້ຮຽກວ່າ ກາຍ

ພິກຂຸສະເຫວີຍສຸກນີ້ດ້ວຍກາຍນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ສະເຫວີຍສຸກດ້ວຍນາມກາຍ

[໕໗໘] ໃນຄຳວ່າ ທີ່ພຣະອະຣິຍະທັງຫຼາຍກ່າວສັນເສີນນັ້ນ ພຣະອະຣິຍະທັງຫຼາຍ ເປັນແນວໃດ?

ພຣະພຸດທະເຈົ້າແລະສາວົກຂອງພຣະພຸດທະເຈົ້າ ຮຽກວ່າ ພຣະອະຣິຍະທັງຫຼາຍ ພຣະອະຣິຍະເຫຼົ່ານັ້ນ ກ່າວສັນເສີນ ສະແດງ ບັນຍັດ ແຕ່ງຕັ້ງ ເປີດເຜີຍ ຈຳແນກ ເຮັດໃຫ້ຊັດເຈນ ປະກາດບຸກຄົນຜູ້ໄດ້ບັນລຸນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ທີ່ພຣະອະຣິຍະທັງຫຼາຍກ່າວ ສັນເສີນ

[๔๗๙] ໃນຄຳວ່າ ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ນັ້ນ ອຸເປກຂາ ເປັນແນວໃດ?

ອຸເປກຂາ ຄວາມວາງເສີຍ ກິຣິຍາທີ່ເພ່ງເສີຍ ຄວາມເປັນກາງແຫ່ງຈິດ ນີ້ຮຽກວ່າອຸເປກຂາ

ສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ນີ້ຮຽກວ່າ ສະຕິ

ສຸກ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດນີ້ຮຽກວ່າ ສຸກ

ພິກຂຸປະກອບດ້ວຍອຸເປກຂາ ສະຕິແລະສຸກນີ້ ສືບເນື່ອງກັນຢູ່ ດຳເນີນໄປຢູ່ ຮັກສາຢູ່ ເປັນໄປຢູ່ ໃຫ້ເປັນໄປຢູ່ ທ່ຽວໄປຢູ່ ພັກຢູ່ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງ ຮຽກວ່າ ເປັນຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ

[๔๘๐] ຄຳວ່າ ຕະຕິຍະ ອະທິບາຍວ່າ ຊື່ວ່າຕະຕິຍະ ໂດຍລຳດັບແຫ່ງການນັບ ຊື່ວ່າຕະຕິຍະ ຍ້ອນໂຍຄາວະຈອນບຸກຄົນເຂົ້າເຖິງຊານນີ້ເປັນທີ ๓

[๔๘๑] ຄຳວ່າ ຊານ ອະທິບາຍວ່າ ອຸເປກຂາ ສະຕິ ສຳປະຊັນຍະ ສຸກ ແລະເອກັກຄະຕາ

[๔๘๒] ຄຳວ່າ ບັນລຸ ອະທິບາຍວ່າ ການໄດ້ ການໄດ້ສະເພາະ ການເຖິງ ການບັນລຸເຖິງການຖືກຕ້ອງ ການເຮັດໃຫ້ແຈ້ງ ການບັນລຸຕະຕິຍະຊານ

[๔๘๓] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

[๔๘๔] ຄຳວ່າ ຍ້ອນລະສຸກແລະທຸກໄດ້ ອະທິບາຍວ່າ ສຸກແລະທຸກນັ້ນແຍກເປັນ ສຸກຢ່າງໜຶ່ງ ທຸກຢ່າງໜຶ່ງ

ໃນ ๒ ຢ່າງນັ້ນ ສຸກ ເປັນແນວໃດ?

ຄວາມສຳຣານທາງກາຍ ຄວາມສຸກທາງກາຍ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກກາຍສຳຜັດ ນີ້ຮຽກວ່າ ສຸກ

ທຸກ ເປັນແນວໃດ?

ຄວາມບໍ່ສະບາຍທາງກາຍ ຄວາມທຸກທາງກາຍ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກກາຍສຳຜັດ ນີ້ຮຽກວ່າ ທຸກ

ສຸກແລະທຸກນີ້ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນລະສຸກແລະທຸກໄດ້

[໕໙໕] ຄຳວ່າ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ອະທິບາຍວ່າ ໂສມະນັດແລະໂທມະນັດນັ້ນແຍກເປັນໂສມະນັດຢ່າງໜຶ່ງ ໂທມະນັດຢ່າງໜຶ່ງ

ໃນ ໒ ຢ່າງນັ້ນ ໂສມະນັດ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດນີ້ຮຽກວ່າ ໂສມະນັດ

ໂທມະນັດ ເປັນແນວໃດ?

ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດນີ້ຮຽກວ່າ ໂທມະນັດ

ໂສມະນັດແລະໂທມະນັດນີ້ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວ ດ້ວຍປະການດັ່ງນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ

[໕໙໖] ຄຳວ່າ ບໍ່ມີທຸກບໍ່ມີສຸກ ອະທິບາຍວ່າ ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ຍ້ອນແນວນັ້ນຈຶ່ງຮຽກວ່າ ບໍ່ມີທຸກບໍ່ມີສຸກ

[໕໙໗] ໃນຄຳວ່າ ມີສະຕິບໍລິສຸດຍ້ອນອຸເປກຂາ ນັ້ນ ອຸເປກຂາ ເປັນແນວໃດ?

ອຸເປກຂາ ພາວະທີ່ວາງເສີຍ ກິຣິຍາທີ່ເພັ່ງເສີຍ ຄວາມວາງຕົນເປັນກາງແຫ່ງຈິດນີ້ຮຽກວ່າ ອຸເປກຂາ

ສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຯລຯ ສຳມາສະຕິ ນີ້ຮຽກວ່າ ສະຕິ

ສະຕິນີ້ເປັນອັນເປີດເຜີຍ ບໍລິສຸດ ຜຸດຜ່ອງ ຍ້ອນອຸເປກຂານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ມີສະຕິບໍລິສຸດຍ້ອນອຸເປກຂາ

[໔໙໘] ຄຳວ່າ ຈຕຸດຖະ ອະທິບາຍວ່າ ທີ່ຊື່ວ່າເປັນທີ ໔ ໂດຍລຳດັບແຫ່ງການນັບຊື່ວ່າ ຈະຕຸດຖະ ເພາະໂຍຄາວະຈອນບຸກຄົນເຂົ້າເຖິງຊານນີ້ເປັນທີ ໔

[໔໙໙] ຄຳວ່າ ຊານ ອະທິບາຍວ່າ ອຸເປກຂາ ສະຕິ ແລະເອກັກຄະຕາ

[໕໐໐] ຄຳວ່າ ບັນລຸ ອະທິບາຍວ່າ ການໄດ້ ການໄດ້ສະເພາະ ການເຖິງ ການບັນລຸເຖິງ ການຖືກຕ້ອງ ການເຮັດໃຫ້ແຈ້ງ ການບັນລຸຈະຕຸດຖະຊານ

[໕໐໑] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

[໕໐໒] ໃນຄຳວ່າ ຍ້ອນກ້າວລ່ວງຮູບສັນຍາໄດ້ໂດຍປະການທັງປວງ ນັ້ນ ຮູບສັນຍາ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ຂອງໂຍຄາວະຈອນບຸກຄົນຜູ້ເຂົ້າຮູບປາວະຈອນສະມາບັດ ຜູ້ອຸບັດໃນຮູບພູມ ຫຼືຂອງພຣະອະຣະຫັນຜູ້ຢູ່ເປັນສຸກໃນປັດຈຸບັນ ເຫຼົ່ານີ້ຮຽກວ່າ ຮູບສັນຍາ

ພິກຂຸເປັນຜູ້ກ້າວລ່ວງແລ້ວ ກ້າວຂ້າມແລ້ວ ກ້າວພົ້ນແລ້ວເຊິ່ງຮູບສັນຍາເຫຼົ່ານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນກ້າວລ່ວງຮູບສັນຍາໄດ້ໂດຍປະການທັງປວງ

[໕໐໓] ໃນຄຳວ່າ ຍ້ອນຄວາມດັບໄປແຫ່ງປະຕິຄະສັນຍາ ນັ້ນ ປະຕິຄະສັນຍາ ເປັນແນວໃດ?

ຮູບສັນຍາ ສັດທະສັນຍາ ຄັນທະສັນຍາ ຣະສະສັນຍາ ແລະໂຜດຖັບພະສັນຍາ ເຫຼົ່ານີ້ຮຽກວ່າ ປະຕິຄະສັນຍາ

ປະຕິຄະສັນຍາເຫຼົ່ານີ້ເປັນອັນສະງົບຣະງັບ ສະງົບງຽບ ດັບໄປ ດັບສິ້ນໄປ ຖືກເຮັດໃຫ້ພິນາດໄປ ໃຫ້ພິນາດຍ່ອຍຍັບໄປ ໃຫ້ເຫືອດແຫ້ງໄປ ໃຫ້ເຫືອດແຫ້ງໄປດ້ວຍດີ ໃຫ້ສິ້ນໄປແລ້ວ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນຄວາມດັບໄປແຫ່ງປະຕິຄະສັນຍາ

[໕໐໔] ໃນຄຳວ່າ ຍ້ອນບໍ່ມະນະສິການນານັດຕະສັນຍານັ້ນ ນານັດຕະສັນຍາ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ຂອງບຸກຄົນຜູ້ມີຄວາມພຽບພ້ອມດ້ວຍ ມະໂນທາດ ຫຼື ຜູ້ມີຄວາມພຽບພ້ອມດ້ວຍມະໂນວິນຍານທາດເຊິ່ງບໍ່ໄດ້ເຂົ້າສະມາບັດເຫຼົ່ານີ້ຮຽກວ່າ ນານັດຕະສັນຍາ

ພິກຂຸບໍ່ມະນະສິການນານັດຕະສັນຍາເຫຼົ່ານີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນບໍ່ມະນະສິການນານັດຕະສັນຍາ

[໓໐໕] ໃນຄຳວ່າ ອາກາດບໍ່ມີບ່ອນສຸດນັ້ນ ອາກາດ ເປັນແນວໃດ?

ອາກາດ ທຳມະຊາດທີ່ນັບວ່າອາກາດ ຄວາມວ່າງເປົ່າ ທຳມະຊາດທີ່ນັບວ່າຄວາມວ່າງເປົ່າ ຊ່ອງວ່າງ ທຳມະຊາດທີ່ນັບວ່າຊ່ອງວ່າງເຊິ່ງມະຫາພູຕະຮູບ ໔ ຖືກຕ້ອງບໍ່ໄດ້ ນີ້ຮຽກວ່າອາກາດ

ພິກຂຸຕັ້ງຈິດໄວ້ ຕັ້ງຈິດໄວ້ດ້ວຍດີ ແຜ່ໄປບໍ່ມີບ່ອນສຸດໃນອາກາດນັ້ນ ຍ້ອນແນວນັ້ນຈຶ່ງຮຽກວ່າ ອາກາດບໍ່ມີບ່ອນສຸດ

[໓໐໖] ຄຳວ່າ ອາກາສານັນຈາຍະຕະນະ ອະທິບາຍວ່າ ທຳຄືຈິດແລະເຈຕະສິກຂອງບຸກຄົນຜູ້ເຂົ້າອາກາສານັນຈາຍະຕະນະ ຜູ້ອຸບັດໃນອາກາສານັນຈາຍະຕະນະພູມ ຫຼື ພຣະອະຣະຫັນຜູ້ຢູ່ເປັນສຸກໃນປັດຈຸບັນ

[໓໐໗] ຄຳວ່າ ບັນລຸ ອະທິບາຍວ່າ ການໄດ້ ການໄດ້ສະເພາະ ການເຖິງ ການບັນລຸເຖິງການຖືກຕ້ອງ ການເຮັດໃຫ້ແຈ້ງ ການບັນລຸອາກາສານັນຈາຍະຕະນະ

[໓໐໘] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າຢູ່

[໓໐໙] ຄຳວ່າ ຍ້ອນກ້າວລ່ວງອາກາສານັນຈາຍະຕະນະໄດ້ໂດຍປະການທັງປວງ ອະທິບາຍວ່າ ພິກຂຸເປັນຜູ້ກ້າວລ່ວງແລ້ວ ກ້າວຂ້າມແລ້ວ ກ້າວພົ້ນແລ້ວເຊິ່ງອາກາສານັນຈາຍະຕະນະນີ້ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນກ້າວລ່ວງອາກາສານັນຈາຍະຕະນະໄດ້ໂດຍປະການທັງປວງ

[໓໑໐] ຄຳວ່າ ວິນຍານບໍ່ມີບ່ອນສຸດ ອະທິບາຍວ່າ ພິກຂຸມະນະສິການອາກາດນັ້ນ ໆ ທີ່ວິນຍານຖືກຕ້ອງແລ້ວ ແຜ່ໄປບໍ່ມີບ່ອນສຸດ ຍ້ອນແນວນັ້ນຈຶ່ງຮຽກວ່າ ວິນຍານບໍ່ມີບ່ອນສຸດ

[໓໑໑] ຄຳວ່າ ວິນຍານັນຈາຍະຕະນະ ອະທິບາຍວ່າ ທຳຄືຈິດແລະເຈຕະສິກ ຂອງບຸກຄົນຜູ້ເຂົ້າວິນຍານັນຈາຍະຕະນະ ຜູ້ອຸບັດໃນວິນຍານັນຈາຍະຕະນະພູມ ຫຼື ຂອງພຣະອະຣະຫັນຜູ້ຢູ່ເປັນສຸກໃນປັດຈຸບັນ

[໓໑໒] ຄຳວ່າ ບັນລຸ ອະທິບາຍວ່າ ການໄດ້ ການໄດ້ສະເພາະ ການເຖິງ ການບັນລຸເຖິງ ການຖືກຕ້ອງ ການເຮັດໃຫ້ແຈ້ງ ການບັນລຸວິນຍານັນຈາຍະຕະນະ

[໓໑໓] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

[໓໑໔] ຄຳວ່າ ຍ້ອນກ້າວລ່ວງວິນຍານັນຈາຍະຕະນະໄດ້ໂດຍປະການທັງປວງ ອະທິບາຍວ່າ ພິກຂຸເປັນຜູ້ກ້າວລ່ວງແລ້ວ ກ້າວຂ້າມແລ້ວ ກ້າວພົ້ນແລ້ວເຊິ່ງວິນຍານັນຈາຍະຕະນະ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນກ້າວລ່ວງວິນຍານັນຈາຍະຕະນະໄດ້ໂດຍປະການທັງປວງ

[๗๑๕] ຄຳວ່າ ອັນໃດ ໆ ຈັກໜ້ອຍໜຶ່ງກໍບໍ່ມີ ອະທິບາຍວ່າ ພິກຂຸເຮັດວິນຍານນັ້ນ ໆ ບໍ່ໃຫ້ມີ ໃຫ້ເສື່ອມໄປ ໃຫ້ອັນຕະຣະທານຫາຍໄປ ພິຈາລະນາເຫັນວ່າ ໜ້ອຍໜຶ່ງກໍບໍ່ມີ ຍ້ອນແນວນັ້ນຈຶ່ງຮຽກວ່າ ອັນໃດ ໆ ຈັກໜ້ອຍໜຶ່ງກໍບໍ່ມີ

[๗๑๖] ຄຳວ່າ ອາກິນຈັນຍາຍະຕະນະ ອະທິບາຍວ່າ ທຳຄືຈິດແລະເຈຕະສິກຂອງບຸກຄົນຜູ້ເຂົ້າອາກິນຈັນຍາຍະຕະນະ ຜູ້ອຸບັດໃນອາກິນຈັນຍາຍະຕະນະພູມ ຫຼື ຂອງພຣະອະຣະຫັນຜູ້ຢູ່ເປັນສຸກໃນປັດຈຸບັນ

[๗๑๗] ຄຳວ່າ ບັນລຸ ອະທິບາຍວ່າ ການໄດ້ ການໄດ້ສະເພາະ ການເຖິງ ການບັນລຸເຖິງ ການຖືກຕ້ອງ ການເຮັດໃຫ້ແຈ້ງ ການບັນລຸອາກິນຈັນຍາຍະຕະນະ

[๗๑๘] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ฯລฯ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າຢູ່

[๗๑๙] ຄຳວ່າ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ອະທິບາຍວ່າ ພິກຂຸເປັນຜູ້ກ້າວລ່ວງແລ້ວ ກ້າວຂ້າມແລ້ວ ກ້າວພົ້ນແລ້ວເຊິ່ງອາກິນຈັນຍາຍະຕະນະ ຍ້ອນແນວນັ້ນຈຶ່ງຮຽກວ່າ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ

ຄຳວ່າ ຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ອະທິບາຍວ່າ ພິກຂຸມະນະສິການ ອາກິນຈັນຍາຍະຕະນະນັ້ນ ໆ ໂດຍຄວາມເປັນຊານທີ່ສະງົບ ຈະເລີນສະມາບັດທີ່ມີສັງຂານເຫຼືອຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

[๗๒๐] ຄຳວ່າ ເນວະສັນຍານາສັນຍາຍະຕະນະ ອະທິບາຍວ່າ ທຳຄືຈິດແລະເຈຕະສິກຂອງບຸກຄົນຜູ້ເຂົ້າເນວະສັນຍານາສັນຍາຍະຕະນະ ຫຼື ຜູ້ອຸບັດໃນເນວະສັນຍານາສັນຍາຍະຕະນະພູມ ຫຼື ຂອງພຣະອະຣະຫັນຜູ້ຢູ່ເປັນສຸກໃນປັດຈຸບັນ

[๗๒๑] ຄຳວ່າ ບັນລຸ ອະທິບາຍວ່າ ການໄດ້ ການໄດ້ສະເພາະ ການເຖິງ ການບັນລຸເຖິງ ການຖືກຕ້ອງ ການເຮັດໃຫ້ແຈ້ງ ການບັນລຸເນວະສັນຍານາສັນຍາຍະຕະນະ

[๗๒๒] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ດຳເນີນໄປຢູ່ ຮັກສາຢູ່ ເປັນໄປຢູ່ ໃຫ້ເປັນໄປຢູ່ ທ່ຽວໄປຢູ່ ພັກຢູ່ ຍ້ອນແນວນັ້ນຈຶ່ງຮຽກວ່າ ຢູ່

**ສຸດຕັນຕະພາຊະນີ ຈົບ**

# ໔. ອະພິທຳມະພາຊະນີ

## ໑. ຮູບປາວະຈອນກຸສົນ

### ຊານະຈະຕຸກກະໄນ

[໗໔໓] ຊານ ໔ ຄື

໑. ປະຖົມຊານ (ຊານທີ ໑)
໒. ທຸຕິຍະຊານ (ຊານທີ ໒)
໓. ຕະຕິຍະຊານ (ຊານທີ ໓)
໔. ຈະຕຸດຖະຊານ (ຊານທີ ໔)

[໗໔໔] ບັນດາຊານ ໔ ນັ້ນ ປະຖົມຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໕ ຄື ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປະຖົມຊານ ສະພາວະທຳ ທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ (໑)

ທຸຕິຍະຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ฯລฯ ບັນລຸທຸຕິຍະຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານ ມີອົງ ໓ ຄື ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ທຸຕິຍະຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ (໒)

ຕະຕິຍະຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນປີຕິຈາງຄາຍອອກ ฯລฯ ບັນລຸຕະຕິຍະຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໒ ຄື ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ຕະຕິຍະຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ (໓)

ຈະຕຸດຖະຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ບັນລຸຈະຕຸດຖະຊານທີ່ມີປະຖະວີກະສິນ ເປັນອາລົມ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ฯລฯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ

ຊານມີອົງ ໒ ຄື ອຸເປກຂາ ແລະ ເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ຈະຕຸດຖະຊານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ (໔)

## ຊານະປັນຈະກະໄນ

[໖໒໕] ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີ ອົງ ໕ ຄື ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປະຖົມຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ (໑)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ແລະສະພາວະທຳທີ່ເປັນອະກຸສົນທັງຫຼາຍ ບັນລຸທຸຕິຍະຊານທີ່ມີປະຖະວີກະສິນເປັນອາລົມ ບໍ່ມີວິຕົກມີພຽງວິຈານມີປີຕິແລະສຸກ ອັນເກີດຈາກວິເວກ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໔ ຄືວິຈານ ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ທຸຕິຍະຊານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ (໒)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຮະງັບໄປແລ້ວ ຯລຯ ບັນລຸຕະຕິຍະຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນຊານ ມີອົງ ໓ ຄື ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ຕະຕິຍະຊານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ (໓)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນປີຕິຈາງຄາຍອອກ ຯລຯ ບັນລຸຈະຕຸດຖະຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໒ ຄືສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ຈະຕຸດຖະຊານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ (໔)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນລະສຸກແລະທຸກໄດ້ ຯລຯ ບັນລຸປັນຈະມະຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໒ ຄື ອຸເປກຂາ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປັນຈະມະຊານ ສະພາວະທຳທີ່ເຫຼືອ ຊື່ວ່າ ສຳປະຍຸດດ້ວຍຊານ (໕)

**ຊານະປັນຈະກະໄນ ຈົບ**

# ໘. ອະຣູບປາວະຈອນກຸສົນ

[໑໘໑] ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງອະຣູບພົບ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ໆລໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໒ ຄື ອຸເປກຂາ ແລະເອກັກຄະຕາກໍເກີດຂຶ້ນນີ້ຮຽກວ່າ ຈະຕຸດຖະຊານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ

# ໓. ໂລກຸດຕະຣະກຸສົນ

## ຊານະຈະຕຸກກະໄນ

[໑໘໗] ຊານ ໔ ຄື

໑. ປະຖົມຊານ ໒. ທຸຕິຍະຊານ
໓. ຕະຕິຍະຊານ ໔. ຈະຕຸດຖະຊານ

[໑໘໘] ບັນດາຊານ ໔ ນັ້ນ ປະຖົມຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກການ ໆລໆ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໕ ຄື ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປະຖົມຊານ ສະພາວະທຳທີ່ເຫຼືອ ຊື່ວ່າ ສຳປະຍຸດດ້ວຍຊານ (໑)

ທຸຕິຍະຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ໆລໆ ບັນລຸທຸຕິຍະຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໓ ຄື ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ທຸຕິຍະຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ (໒)

ຕະຕິຍະຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ຍ້ອນປີຕິຈາງຄາຍອອກ ໆລໆ ບັນລຸ

ຕະຕິຍະຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດໃນສະໄໝນັ້ນ ຊານມີອົງ ໒ ຄື ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ຕະຕິຍະຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ (๓)

ຈະຕຸດຖະຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ບັນລຸຈະຕຸດຖະຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໒ ຄື ອຸເປກຂາ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ຈະຕຸດຖະຊານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ (๔)

**ຊານະຈະຕຸກກະໄນ ຈົບ**

## ຊານະປັນຈະກະໄນ

[໖໒໙] ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານ ມີອົງ ๕ ຄື ວິຕົກ ວິຈານ ປິຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປະຖົມຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ (໑)

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມແລະສະພາວະທຳທີ່ເປັນອະກຸສົນທັງຫຼາຍແລ້ວ ບັນລຸທຸຕິຍະຊານທີ່ບໍ່ມີວິຕົກມີພຽງວິຈານ ມີປິຕິແລະສຸກອັນເກີດຈາກວິເວກ ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ๔ ຄື ວິຈານ ປິຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ທຸຕິຍະຊານສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ (໒)

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ

ຯລຯ ບັນລຸຕະຕິຍະຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດໃນສະໄໝນັ້ນ ຊານມີອົງ ๓ ຄື ປິຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ຕະຕິຍະຊານສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ (๓)

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ຍ້ອນປີຕິຈາງຄາຍອອກ ฯລฯ ບັນລຸຈະຕຸດຖະຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດໃນສະໄໝນັ້ນ ຊານມີອົງ ໔ ຄື ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ຈະຕຸດຖະຊານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ (໔)

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກ ໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ບັນລຸປັນຈະມະຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ฯລฯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໔ ຄື ອຸເປກຂາ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປັນຈະມະຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ (໕)

**ຊານະປັນຈະກະໄນ ຈົບ**

## ໔. ຣູບປາວະຈອນວິບາກ

[໗໓໐] ຊານ ໔ ຄື

໑. ປະຖົມຊານ ໒. ທຸຕິຍະຊານ
໓. ຕະຕິຍະຊານ ໔. ຈະຕຸດຖະຊານ

[໗໓໑] ບັນດາຊານ ໔ ນັ້ນ ປະຖົມຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຣູບພົບ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ສັ່ງສົມຣູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນຊານ ມີອົງ ໕ ຄື ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປະຖົມຊານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ

ທຸຕິຍະຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຣູບພົບ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ฯລฯ ບັນລຸທຸຕິຍະຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ບັນລຸປະຖົມຊານ ຯລຯ ບັນລຸປັນຈະມະຊານທີ່ມີປະຖະວີກະສິນເປັນອາລົມ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໘ ຄື ອຸເປກຂາ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າປັນຈະມະຊານ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍຊານ

## ໕. ອະຣູບປາວະຈອນວິບາກ

[໒໓໘] ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງອະຣູບພົບ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ຯລຯ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ພິກຂຸບັນລຸຈະຕຸດຖະຊານ ທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ສັ່ງສົມອະຣູບປາວະຈອນກຸສົນກຳນັ້ນ ໆ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໘ ຄື ອຸເປກຂາ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າຈະຕຸດຖະຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ

## ໒. ໂລກຸດຕະຣະວິບາກ

[໒໓໓] ຊານ ໔ ຄື

| | |
|---|---|
| ໑. ປະຖົມຊານ | ໒. ທຸຕິຍະຊານ |
| ໓. ຕະຕິຍະຊານ | ໔. ຈະຕຸດຖະຊານ |

[໒໓໔] ບັນດາຊານ ໔ ນັ້ນ ປະຖົມຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ພິກຂຸສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ

ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໕ ຄື ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປະຖົມຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ

ທຸຕິຍະຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ

ຯລຯ ບັນລຸທຸຕິຍະຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ຯລຯ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ບັນລຸປະຖົມຊານ ຯລຯ ບັນລຸປັນຈະມະຊານ ທີ່ເປັນສູນຍະຕະ ເປັນທຸກຂາປະຕິປະທາທັນທາພິນຍາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ຈະເລີນຊານທີ່ເປັນໂລກຸດຕະຣະກຸສົນນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໒ ຄື ອຸເປກຂາ ແລະເອກັກຄະຕາກໍເກີດຂຶ້ນນີ້ຮຽກວ່າ ປັນຈະມະຊານ ສະພາວະທຳທີ່ເຫຼືອ

ຊື່ວ່າສຳປະຍຸດດ້ວຍຊານ

## ກ. ຣູປາຣູປາວະຈອນກິຣິຍາ

[໓໓໕] ຊານ ໔ ຄື

໑. ປະຖົມຊານ
໒. ຕະຕິຍະຊານ
໒. ທຸຕິຍະຊານ
໔. ຈະຕຸດຖະຊານ

[໓໓໓] ບັນດາຊານ ໔ ນັ້ນ ປະຖົມຊານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນອະຣູບປາວະຈອນຊານທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນແລະບໍ່ເປັນວິບາກແຫ່ງກຳ ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານ ມີອົງ ໕ ຄື ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປະຖົມຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ

ທຸຕິຍະຊານ ເປັdນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນອະຣູບປາວະຈອນຊານທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກແຫ່ງກຳ ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ບັນລຸປະຖົມຊານ ຯລຯ ບັນລຸປັນຈະມະຊານທີ່ມີປະຖະວີກະສິນເປັນ ອາລົມ ຢູ່ໃນສະໄໝ

ໃດ ໃນສະໄໝນັ້ນ ຊານມີອົງ ໒ ຄື ອຸເປກຂາ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ປັນຈະມະຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ

[໓໔໗] ພິກຂຸໃນທຳວິໄນນີ້ຈະເລີນອະຮູບປາວະຈອນຊານທີ່ເປັນກິຣິຍາ ບໍ່ເປັນກຸສົນບໍ່ເປັນອະກຸສົນ ແລະບໍ່ເປັນວິບາກແຫ່ງກຳ ເປັນທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຊານມີອົງ ໒ ຄື ອຸເປກຂາ ແລະເອກັກຄະຕາ ກໍເກີດຂຶ້ນ ນີ້ຮຽກວ່າ ຈະຕຸດຖະຊານ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍຊານ

**ອະພິທຳມະພາຊະນີ ຈົບ**

# ໓. ປັນຫາປຸດສະກະ

[໓໔໘] ຊານ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ມີວິຈານ ມີປີຕິແລະສຸກ ອັນເກີດຈາກວິເວກຢູ່

໒. ຯລຯ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກ ອັນເກີດຈາກສະມາທິຢູ່

໓. ຯລຯ ຍ້ອນປີຕິຈາງຄາຍອອກ ເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍກ່າວສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ຯລຯ

໔. ຯລຯ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວຈຶ່ງບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

## ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[໓໔໙] ບັນດາຊານ ໔ ຊານເທົ່າໃດ?ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

# ໑. ຕິກະມາຕິກາວິສັດຊະນາ

## ໑-໘໘. ກຸສະລະຕິກາທິວິສັດຊະນາ

[໗໘໐] ຊານ ໔ ທີ່ເປັນກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ເວັ້ນສຸກຂະເວທະນາທີ່ເກີດໃນຊານນີ້ແລ້ວ ຊານ ໓ ສໍາປະຍຸດດ້ວຍສຸກຂະເວທະນາເວັ້ນອະທຸກຂະມະສຸຂະເວທະນາທີ່ເກີດໃນຊານນີ້ແລ້ວ ຈະຕຸດຖະຊານສໍາປະຍຸດດ້ວຍອະທຸກຂະມະສຸຂະເວທະນາ

ຊານ ໔ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

ຊານ ໔ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ແລະເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງ ອຸປາທານກໍມີ

ຊານ ໔ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດກໍມີ ທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມຂອງກິເລດກໍມີ

ເວັ້ນວິຕົກ ແລະວິຈານທີ່ເກີດໃນຊານນີ້ແລ້ວ ປະຖົມຊານມີທັງວິຕົກແລະວິຈານ ຊານ ໓ ບໍ່ມີທັງວິຕົກແລະວິຈານ

ເວັ້ນປິຕິທີ່ເກີດໃນຊານນີ້ແລ້ວ ຊານ ໒ ປະກອບດ້ວຍປິຕິ ເວັ້ນສຸກທີ່ເກີດໃນຊານນີ້ແລ້ວ ຊານ ໓ ປະກອບດ້ວຍສຸກ ເວັ້ນອຸເປກຂາທີ່ເກີດໃນຊານນີ້ແລ້ວ ຈະຕຸດຖະຊານ ປະກອບດ້ວຍອຸເປກຂາ

ຊານ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ຊານ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ຊານ ໔ ທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິກໍມີ ທີ່ເປັນເຫດໃຫ້ເຖິງນິບພານກໍມີທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

ຊານ ໔ ທີ່ເປັນຂອງເສຂະບຸກຄົນກໍມີ ທີ່ເປັນຂອງອະເສຂະບຸກຄົນກໍມີ ທີ່ບໍ່ເປັນຂອງ ເສຂະບຸກຄົນ ແລະອະເສຂະບຸກຄົນກໍມີ

ຊານ ໔ ທີ່ເປັນມະຫັກຄະຕະກໍມີ ທີ່ເປັນອັບປະມານະກໍມີ

ຊານ ໓ ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ຫຼື ມີມະຫັກຄະຕະເປັນອາລົມ

ຊານ ໔ ທີ່ມີອັບປະມານະເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີອັບປະມານະເປັນອາລົມກໍມີ ຈະຕຸດຖະຊານທີ່ມີປະຣິດຕະເປັນອາລົມກໍມີ ທີ່ມີມະຫັກຄະຕະເປັນອາລົມກໍມີ ທີ່ມີອັບປະມານະ

ເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ມີມະຫັກຄະຕະເປັນອາລົມ ຫຼື ມີອັບປະມານະເປັນອາລົມກໍມີ

ຊານ ໔ ທີ່ເປັນຊັ້ນກາງກໍມີ ທີ່ເປັນຊັ້ນປະນີດກໍມີ

ຊານ ໔ ທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ຊານ ໓ ບໍ່ແມ່ນມີມັກເປັນອາລົມ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີທີ່ກ່າວບໍ່ໄດ້ວ່າ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີກໍມີ ຈະຕຸດຖະຊານທີ່ມີມັກເປັນອາລົມກໍມີ ທີ່ມີມັກເປັນເຫດກໍມີ ທີ່ມີມັກເປັນອະທິບໍດີກໍມີ ທີ່ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີກໍມີ

ຊານ ໔ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ

ຊານ ໔ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ

ຊານ ໓ ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມຫຼືມີປັດຈຸບັນທຳເປັນອາລົມ ຈະຕຸດຖະຊານທີ່ມີອະດີດທຳເປັນອາລົມກໍມີ ທີ່ມີອະນາຄົດທຳເປັນອາລົມກໍມີ ທີ່ມີປັດຈຸບັນທຳເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມກໍມີ

ຊານ ໔ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

ຊານ ໓ ມີທຳພາຍນອກຕົນເປັນອາລົມ ຈະຕຸດຖະຊານທີ່ມີທຳພາຍໃນຕົນເປັນອາລົມກໍມີ ມີທຳພາຍນອກຕົນເປັນອາລົມກໍມີ ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ ທີ່ກ່າວບໍ່ໄດ້ວ່າ ມີທຳພາຍໃນຕົນເປັນອາລົມ ມີທຳພາຍນອກຕົນເປັນອາລົມ ຫຼື ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ

ຊານ ໔ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

# ໘. ທຸກະມາຕິກາວິສັດຊະນາ

## ໑. ເຫຕຸໂຄດສະກະວິສັດຊະນາ

[໓໘໑] ຊານ ໔ ບໍ່ເປັນເຫດ ຊານ ໔ ມີເຫດ

ຊານ ໔ ສຳປະຍຸດດ້ວຍເຫດ ຊານ ໔ ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ

ຊານ ໔ ມີເຫດແຕ່ບໍ່ເປັນເຫດ ຊານ ໔ ກ່າວບໍ່ໄດ້ວ່າ ເປັນເຫດ ແລະສຳປະຍຸດ ດ້ວຍເຫດ

ຊານ ໔ ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ຊານ ໔ ບໍ່ເປັນເຫດແຕ່ມີເຫດ

## ໔. ຈູລັນຕະຣະທຸກະວິສັດຊະນາ

ຊານ ໔ ມີປັດໄຈປຸງແຕ່ງ ຊານ ໔ ຖືກປັດໄຈປຸງແຕ່ງ

ຊານ ໔ ເຫັນບໍ່ໄດ້ ຊານ ໔ ກະທົບບໍ່ໄດ້

ຊານ ໔ ບໍ່ເປັນຮູບ ຊານ ໔ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ຊານ ໔ ຈິດບາງດວງຮູ້ໄດ້ ຊານ ໔ ຈິດບາງດວງຮູ້ບໍ່ໄດ້

## ໖. ອາສະວະໂຄດສະກະວິສັດຊະນາ

ຊານ ໔ ບໍ່ເປັນອາສະວະ ຊານ ໔ ທີ່ເປັນອາລົມຂອງອາສະວະກໍມີ ທີ່ບໍ່ເປັນອາລົມຂອງອາສະວະກໍມີ

ຊານ ໔ ວິບປະຍຸດຈາກອາສະວະ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ

ຊານ ໔ ທີ່ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ ທີ່ກ່າວບໍ່ໄດ້ວ່າ ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະກໍມີ

ຊານ ໔ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ

ຊານ ໔ ທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະກໍມີ ທີ່ວິບປະຍຸດຈາກອາສະວະແລະບໍ່ເປັນອາລົມຂອງອາສະວະກໍມີ

## ໔-໙. ສັນໂຍຊະນະໂຄດສະກາທິວິສັດຊະນາ

ຊານ ໔ ບໍ່ເປັນສັງໂຍດ ຯລຯ ບໍ່ເປັນຄັນຖະ ຯລຯ ບໍ່ເປັນໂອຄະ ຯລຯ ບໍ່ເປັນໂຍຄະ ຯລຯ ບໍ່ເປັນນິວອນ ຯລຯ ບໍ່ເປັນປະຣາມາດ ຯລຯ

## ໑໐. ມະຫັນຕະຣະທຸກະວິສັດຊະນາ

ຊານ ໔ ຮັບຮູ້ອາລົມໄດ້ ຊານ ໔ ບໍ່ເປັນຈິດ

ຊານ ໔ ເປັນເຈຕະສິກ ຊານ ໔ ສຳປະຍຸດດ້ວຍຈິດ

ຊານ ໔ ປະປົນກັບຈິດ ຊານ ໔ ມີຈິດເປັນສະມຸດຖານ

ຊານ ໔ ເກີດພ້ອມກັບຈິດ ຊານ ໔ ເປັນໄປຕາມຈິດ

ຊານ ໔ ປະປົນກັບຈິດແລະມີຈິດເປັນສະມຸດຖານ ຊານ ໔ ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ

ຊານ ໔ ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ຊານ ໔ ເປັນພາຍນອກ

ຊານ ໔ ບໍ່ເປັນອຸປາທາຍະຣູບ ຊານ ໔ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຢຶດຖືກໍ່ມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືກໍມີ

## ໑໑-໑໔. ອຸປາທານໂຄດສະກາທິວິສັດຊະນາ

ຊານ ໔ ບໍ່ເປັນອຸປາທານ ໗ລ໗ ບໍ່ເປັນກິເລດ ໗ລ໗

## ໑໓. ປິດຖິທຸກະວິສັດຊະນາ

ຊານ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ຊານ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ເວັ້ນວິຕົກທີ່ເກີດໃນຊານນີ້ແລ້ວ ປະຖົມຊານມີວິຕົກ ຊານ ໓ ບໍ່ມີວິຕົກ ເວັ້ນວິຈານທີ່ເກີດໃນຊານນີ້ແລ້ວ ປະຖົມຊານມີວິຈານ ຊານ ໓ ບໍ່ມີວິຈານ ເວັ້ນປີຕິທີ່ເກີດໃນຊານນີ້ແລ້ວ ຊານ ໒ ມີປີຕິ ຊານ ໒ ບໍ່ມີປີຕິ ເວັ້ນປີຕິທີ່ເກີດໃນຊານນີ້ແລ້ວ ຊານ ໒ ປະກອບດ້ວຍປີຕິ ຊານ ໒ ບໍ່ປະກອບດ້ວຍປີຕິ

ເວັ້ນສຸກທີ່ເກີດໃນຊານນີ້ແລ້ວ ຊານ ໓ ປະກອບດ້ວຍສຸກ ຈະຕຸດຖະຊານບໍ່ປະກອບດ້ວຍສຸກ ເວັ້ນອຸເປກຂາທີ່ເກີດໃນຊານນີ້ແລ້ວ ຈະຕຸດຖະຊານປະກອບດ້ວຍອຸເປກຂາ ຊານ ໓ ບໍ່ປະກອບດ້ວຍອຸເປກຂາ

ຊານ ໔ ບໍ່ເປັນກາມາວະຈອນ ຊານ ໔ ທີ່ເປັນອະຣູບປາວະຈອນກໍມີ ທີ່ບໍ່ເປັນອະຣູບປາວະຈອນກໍມີ

ຊານ ໓ ບໍ່ເປັນອະຣູບປາວະຈອນ ຈະຕຸດຖະຊານທີ່ເປັນອະຣູບປາວະຈອນກໍມີ ທີ່ບໍ່ເປັນອະຣູບປາວະຈອນກໍມີ ຊານ ໔ ທີ່ນັບເນື່ອງໃນວັດຕະທຸກກໍມີ ທີ່ບໍ່ນັບເນື່ອງໃນວັດຕະທຸກກໍມີ

ຊານ ໔ ທີ່ເປັນເຫດນຳອອກຈາກວັດຕະທຸກກໍມີ ທີ່ບໍ່ເປັນເຫດນຳອອກຈາກວັດຕະທຸກກໍມີ ຊານ ໔ ທີ່ໃຫ້ຜົນແນ່ນອນກໍມີ ທີ່ໃຫ້ຜົນບໍ່ແນ່ນອນກໍມີ

ຊານ ໔ ທີ່ມີທຳອື່ນຍິ່ງກວ່າກໍມີ ທີ່ບໍ່ມີທຳອື່ນຍິ່ງກວ່າກໍມີ ຊານ ໔ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້

**ປັນຫາປຸດສະກະ ຈົບ**

**ຊານະວິພັງ ຈົບບໍລິບູນ**

# ໑໓. ອັບປະມັນຍາວິພັງ

## ໑. ສຸດຕັນຕະພາຊະນີ

[໖໔໒] ອັບປະມັນຍາ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ມີຈິດປະກອບດ້ວຍເມດຕາແຜ່ໄປຕະຫຼອດທິດໜຶ່ງຢູ່ ທິດທີ ໒ ກໍເຊັ່ນນັ້ນ ທິດທີ ໓ ທິດທີ ໔ ກໍເຊັ່ນນັ້ນ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງກໍເຊັ່ນດຽວກັນ ມີຈິດປະກອບດ້ວຍເມດຕາອັນໄພບູນ ກວ້າງ ຂວາງ ຫາປະມານບໍ່ໄດ້ ບໍ່ມີເວນ ບໍ່ມີພະຍາບາດ ແຜ່ໄປສູ່ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງຢູ່

໒. ມີຈິດປະກອບດ້ວຍກະຣຸນາແຜ່ໄປຕະຫຼອດທິດໜຶ່ງຢູ່ ທິດທີ ໒ ກໍເຊັ່ນນັ້ນ ທິດທີ ໓ ທິດທີ ໔ ກໍເຊັ່ນນັ້ນ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງກໍເຊັ່ນດຽວກັນ ມີຈິດປະກອບດ້ວຍກະຣຸນາອັນໄພບູນ ກວ້າງຂວາງ ຫາປະມານບໍ່ໄດ້ ບໍ່ມີເວນ ບໍ່ມີພະຍາບາດ ແຜ່ໄປສູ່ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງຢູ່

໓. ມີຈິດປະກອບດ້ວຍມຸທິຕາແຜ່ໄປຕະຫຼອດທິດໜຶ່ງຢູ່ ທິດທີ ໒ ກໍເຊັ່ນນັ້ນ ທິດທີ ໓ ທິດທີ ໔ ກໍເຊັ່ນນັ້ນ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດ ສຽງ ກໍເຊັ່ນດຽວກັນ ມີຈິດປະກອບດ້ວຍມຸທິຕາອັນໄພບູນ ກວ້າງຂວາງ ຫາປະມານບໍ່ໄດ້ ບໍ່ມີເວນ ບໍ່ມີພະຍາບາດ ແຜ່ໄປສູ່ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງຢູ່

໔. ມີຈິດປະກອບດ້ວຍອຸເປກຂາໄປຕະຫຼອດທິດໜຶ່ງຢູ່ ທິດທີ ໒ ກໍເຊັ່ນນັ້ນ ທິດທີ ໓ ທິດທີ ໔ ກໍເຊັ່ນນັ້ນ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງ ກໍເຊັ່ນດຽວກັນ ມີຈິດປະກອບດ້ວຍອຸເປກຂາອັນໄພບູນ ກວ້າງຂວາງຫາປະມານບໍ່ໄດ້ ບໍ່ມີເວນ ບໍ່ມີພະຍາບາດ ແຜ່ໄປສູ່ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງຢູ່

### ໑. ເມດຕາອັບປະມັນຍານິດເທດ

[໖໔໓] ມີຈິດປະກອບດ້ວຍເມດຕາແຜ່ໄປຕະຫຼອດທິດໜຶ່ງຢູ່ ເປັນແນວໃດ?

ພິກຂຸມີຈິດປະກອບດ້ວຍເມດຕາແຜ່ໄປສູ່ສັດໂລກທັງປວງ ເໝືອນຄົນຜູ້ເຫັນຍາດຕິພີ່ນ້ອງຜູ້ເປັນທີ່ຮັກທີ່ພໍໃຈຮັກແພງເກື້ອກູນກັນ ສັນນັ້ນ

ບັນດາຄຳເຫຼົ່ານັ້ນ ເມດຕາ ເປັນແນວໃດ?

ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງໃນສັດທັງຫຼາຍ ເມດຕາເຈໂຕວິມຸດຕິນີ້ຮຽກວ່າ ເມດຕາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຫົວໃຈ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ຈິດນີ້ເປັນທຳມະຊາດປະກອບ ເກີດພ້ອມ ປະປົນ ສຳປະຍຸດດ້ວຍເມດຕານີ້ ຍ້ອນແນວນັ້ນຈຶ່ງຊື່ວ່າ ມີຈິດປະກອບດ້ວຍເມດຕາ

[໗໔໔] ຄຳວ່າ ທິດໜຶ່ງ ອະທິບາຍວ່າ ທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ທິດໃຕ້ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງ ຫຼື ທິດຕ່າງ ໆ

[໗໔໕] ຄຳວ່າ ແຜ່ໄປ ອະທິບາຍວ່າ ກະຈາຍອອກໄປ ນ້ອມຈິດໄປ

[໗໔໗] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ດຳເນີນໄປຢູ່ ຮັກສາຢູ່ ເປັນໄປຢູ່ ໃຫ້ເປັນໄປຢູ່ ທ່ຽວໄປຢູ່ ພັກຢູ່ ຍ້ອນແນວນັ້ນຈຶ່ງຊື່ວ່າ ຢູ່

[໗໔໗] ຄຳວ່າ ທິດທີ ໒ ກໍເຊັ່ນນັ້ນ ອະທິບາຍວ່າ ທິດໜຶ່ງສັນໃດ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງ ທິດຕ່າງ ໆ ກໍເຊັ່ນນັ້ນ

[໗໔໘] ຄຳວ່າ ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງ ອະທິບາຍວ່າ ຄຳວ່າ ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງ ນີ້ເປັນຄຳກ່າວກຳນົດເອົາສັດທັງໝົດ ໂດຍປະການທັງປວງ ບໍ່ມີສ່ວນເຫຼືອ ຫາສ່ວນເຫຼືອບໍ່ໄດ້

[໗໔໙] ໃນຄຳວ່າ ມີຈິດປະກອບດ້ວຍເມດຕາ ນັ້ນ ເມດຕາ ເປັນແນວໃດ?

ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງໃນສັດທັງຫຼາຍ ເມດຕາເຈໂຕວິມຸດຕິນີ້ຮຽກວ່າ ເມດຕາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ຈິດນີ້ເປັນທຳມະຊາດປະກອບ ເກີດພ້ອມ ປະປົນ ສຳປະຍຸດດ້ວຍເມດຕານີ້ ຍ້ອນແນວນັ້ນຈຶ່ງຊື່ວ່າ ມີຈິດປະກອບດ້ວຍເມດຕາ

[໕໘໐] ຄຳວ່າ ໄພບູນ ອະທິບາຍວ່າ ຈິດໃດໄພບູນ ຈິດນັ້ນກວ້າງຂວາງ ຈິດໃດກວ້າງຂວາງ ຈິດນັ້ນຫາປະມານບໍ່ໄດ້ ຈິດໃດຫາປະມານບໍ່ໄດ້ ຈິດນັ້ນບໍ່ມີເວນ ຈິດໃດບໍ່ມີເວນ ຈິດນັ້ນບໍ່ມີພະຍາບາດ

[໕໘໑] ຄຳວ່າ ແຜ່ໄປ ອະທິບາຍວ່າ ກະຈາຍອອກໄປ ນ້ອມຈິດໄປ

[໕໘໒] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຊື່ວ່າ ຢູ່

## ໒. ກະຣຸນາອັບປະມັນຍານິດເທດ

[໕໘໓] ມີຈິດປະກອບດ້ວຍກະຣຸນາແຜ່ໄປຕະຫຼອດທິດໜຶ່ງຢູ່ ເປັນແນວໃດ?

ພິກຂຸມີຈິດປະກອບດ້ວຍກະຣຸນາແຜ່ໄປສູ່ສັດໂລກທັງປວງ ເໝືອນບຸກຄົນເຫັນຄົນຜູ້ໃດຜູ້ໜຶ່ງຜູ້ຕົກທຸກໄດ້ຍາກແລ້ວເພິ່ງສົງສານສັນນັ້ນ

ບັນດາຄຳເຫຼົ່ານັ້ນ ກະຣຸນາ ເປັນແນວໃດ?

ຄວາມສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານໃນສັດທັງຫຼາຍ ກະຣຸນາເຈໂຕວິມຸດຕິນີ້ຮຽກວ່າ ກະຣຸນາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ຈິດນີ້ເປັນທຳມະຊາດປະກອບ ເກີດພ້ອມ ປະປົນ ສຳປະຍຸດດ້ວຍກະຣຸນານີ້ ຍ້ອນແນວນັ້ນຈຶ່ງຊື່ວ່າ ມີຈິດທີ່ປະກອບດ້ວຍກະຣຸນາ

[໕໘໔] ຄຳວ່າ ທິດໜຶ່ງ ອະທິບາຍວ່າ ທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ທິດໃຕ້ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງ ຫຼື ທິດຕ່າງ ໆ

[໕໘໕] ຄຳວ່າ ແຜ່ໄປ ອະທິບາຍວ່າ ກະຈາຍອອກໄປ ນ້ອມຈິດໄປ

[໕໘໖] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ດຳເນີນໄປຢູ່ ຮັກສາຢູ່ ເປັນໄປຢູ່ ໃຫ້ເປັນໄປຢູ່ ທ່ຽວໄປຢູ່ ພັກຢູ່ ຍ້ອນແນວນັ້ນຈຶ່ງຊື່ວ່າຢູ່

[໕໘໗] ຄຳວ່າ ທິດທີ ໒ ກໍເຊັ່ນນັ້ນ ອະທິບາຍວ່າ ທິດໜຶ່ງສັນໃດ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງ ທິດຕ່າງ ໆ ກໍເຊັ່ນນັ້ນ

[๗๕๗] ຄຳວ່າ ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງ ອະທິບາຍວ່າ ຄຳວ່າ ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງ ນີ້ເປັນຄຳກ່າວກຳນົດເອົາສັດທັງໝົດໂດຍປະການທັງປວງ ບໍ່ມີສ່ວນເຫຼືອຫາສ່ວນເຫຼືອບໍ່ໄດ້

[๗๕๙] ໃນຄຳວ່າ ມີຈິດປະກອບດ້ວຍກະຣຸນາ ນັ້ນ ກະຣຸນາ ເປັນແນວໃດ?

ຄວາມສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານໃນສັດທັງຫຼາຍ ກະຣຸນາເຈໂຕວິມຸດຕິ ນີ້ຮຽກວ່າ ກະຣຸນາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ຈິດນີ້ ເປັນທຳມະຊາດປະກອບ ເກີດພ້ອມ ປະປົນ ສຳປະຍຸດດ້ວຍກະຣຸນານີ້ ຍ້ອນແນວນັ້ນຈຶ່ງຊື່ວ່າ ມີຈິດປະກອບດ້ວຍກະຣຸນາ

[๗๖๐] ຄຳວ່າ ໄພບູນ ອະທິບາຍວ່າ ຈິດໃດໄພບູນ ຈິດນັ້ນກວ້າງຂວາງ ຈິດໃດກວ້າງຂວາງ ຈິດນັ້ນຫາປະມານບໍ່ໄດ້ ຈິດໃດຫາປະມານບໍ່ໄດ້ ຈິດນັ້ນບໍ່ມີເວນ ຈິດໃດບໍ່ມີເວນ ຈິດນັ້ນບໍ່ມີພະຍາບາດ

[๗๖๑] ຄຳວ່າ ແຜ່ໄປ ອະທິບາຍວ່າ ກະຈາຍອອກໄປ ນ້ອມຈິດໄປ

[๗๖๒] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຊື່ວ່າຢູ່

## ๓. ມຸທິຕາອັບປະມັນຍານິດເທດ

[๗๖๓] ມີຈິດປະກອບດ້ວຍມຸທິຕາແຜ່ໄປຕະຫຼອດທິດໜຶ່ງຢູ່ ເປັນແນວໃດ?

ພິກຂຸມີຈິດປະກອບດ້ວຍມຸທິຕາໄປສູ່ສັດໂລກທັງປວງ ເໝືອນບຸກຄົນເຫັນຄົນຜູ້ໜຶ່ງ ຜູ້ເປັນທີ່ຮັກທີ່ພໍໃຈແລ້ວພອຍຍິນດີສັນນັ້ນ

ບັນດາຄຳເຫຼົ່ານັ້ນ ມຸທິຕາ ເປັນແນວໃດ?

ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີໃນສັດທັງຫຼາຍ ນີ້ຮຽກວ່າ ມຸທິຕາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ຈິດນີ້ເປັນທຳມະຊາດປະກອບ ເກີດພ້ອມປະປົນ ສຳປະຍຸດດ້ວຍມຸທິຕານີ້ ຍ້ອນແນວນັ້ນຈຶ່ງຊື່ວ່າ ມີຈິດທີ່ປະກອບດ້ວຍມຸທິຕາ

[៥៥៤] ຄຳວ່າ ທິດໜຶ່ງ ອະທິບາຍວ່າ ທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ທິດໃຕ້ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງ ຫຼື ທິດຕ່າງ ໆ

[៥៥៥] ຄຳວ່າ ແຜ່ໄປ ອະທິບາຍວ່າ ກະຈາຍອອກໄປ ນ້ອມຈິດໄປ

[៥៥៦] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຊື່ວ່າຢູ່

[៥៥៧] ຄຳວ່າ ທິດທີ ៤ ກໍເຊັ່ນນັ້ນ ອະທິບາຍວ່າ ທິດໜຶ່ງສັນໃດ ທິດທີ ៤ ທິດທີ ៣ ທິດທີ ៤ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງ ຫຼື ທິດຕ່າງ ໆ ກໍເຊັ່ນນັ້ນ

[៥៥៨] ຄຳວ່າ ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງ ອະທິບາຍວ່າ ຄຳວ່າ ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດ ທຸກໝູ່ເຫຼົ່າໃນທີ່ທັງປວງນີ້ ເປັນຄຳກ່າວກຳນົດເອົາສັດທັງໝົດໂດຍປະການທັງປວງ ບໍ່ມີສ່ວນເຫຼືອຫາສ່ວນເຫຼືອບໍ່ໄດ້

[៥៥៩] ໃນຄຳວ່າ ມີຈິດປະກອບດ້ວຍມຸທິຕານັ້ນ ມຸທິຕາ ເປັນແນວໃດ?

ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີໃນສັດທັງຫຼາຍ ມຸທິຕາເຈໂຕວິມຸດຕິ ນີ້ຊື່ວ່າມຸທິຕາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ຈິດນີ້ເປັນທຳມະຊາດປະກອບ ເກີດພ້ອມປະປົນ ສຳປະຍຸດດ້ວຍມຸທິຕານີ້ ຍ້ອນແນວນັ້ນຈຶ່ງຊື່ວ່າ ມີຈິດປະກອບດ້ວຍມຸທິຕາ

[៥៦០] ຄຳວ່າ ໄພບູນ ອະທິບາຍວ່າ ຈິດໃດໄພບູນ ຈິດນັ້ນກວ້າງຂວາງ ຈິດໃດກວ້າງຂວາງ ຈິດນັ້ນຫາປະມານບໍ່ໄດ້ ຈິດໃດຫາປະມານບໍ່ໄດ້ ຈິດນັ້ນບໍ່ມີເວນ ຈິດໃດບໍ່ມີເວນ ຈິດນັ້ນບໍ່ມີພະຍາບາດ

[៥៦១] ຄຳວ່າ ແຜ່ໄປ ອະທິບາຍວ່າ ກະຈາຍອອກໄປ ນ້ອມຈິດໄປ

[៥៦៤] ຄຳວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຊື່ວ່າຢູ່

## ៤. ອຸເປກຂາອັບປະມັນຍານິດເທດ

[៥៦៣] ມີຈິດປະກອບດ້ວຍອຸເປກຂາແຜ່ໄປຕະຫຼອດທິດໜຶ່ງຢູ່ ເປັນແນວໃດ?

ພິກຂຸມີຈິດປະກອບດ້ວຍອຸເປກຂາແຜ່ໄປສູ່ສັດໂລກທັງປວງ ເໝືອນບຸກຄົນເຫັນຄົນ ຜູ້ໜຶ່ງຜູ້ເປັນທີ່ພໍໃຈກໍບໍ່ແມ່ນ ບໍ່ເປັນທີ່ພໍໃຈກໍບໍ່ແມ່ນ ແລ້ວເປັນຜູ້ມີອຸເປກຂາສັນນັ້ນ

ບັນດາຄໍາເຫຼົ່ານັ້ນ ອຸເປກຂາ ເປັນແນວໃດ?

ຄວາມວາງເສີຍ ກິຣິຍາທີ່ວາງເສີຍ ພາວະທີ່ວາງເສີຍໃນສັດທັງຫຼາຍ ອຸເປກຂາເຈໂຕວິມຸດຕິ ນີ້ຮຽກວ່າ ອຸເປກຂາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ຈິດນີ້ເປັນທໍາມະຊາດປະກອບ ເກີດພ້ອມ ປະປົນ ສໍາປະຍຸດດ້ວຍອຸເປກຂານີ້ ຍ້ອນແນວນັ້ນຈຶ່ງຊື່ວ່າ ມີຈິດປະກອບດ້ວຍອຸເປກຂາ

[໓໗໔] ຄໍາວ່າ ທິດໜຶ່ງ ອະທິບາຍວ່າ ທິດຕາເວັນອອກ ທິດຕາເວັນຕົກ ທິດເໜືອ ທິດໃຕ້ ທິດເບື້ອງເທິງ ທິດເບື້ອງຕ່ໍາ ທິດສຽງ ຫຼື ທິດຕ່າງ ໆ

[໓໗໕] ຄໍາວ່າ ແຜ່ໄປ ອະທິບາຍວ່າ ກະຈາຍອອກໄປ ນ້ອມຈິດໄປ

[໓໗໖] ຄໍາວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຊື່ວ່າຢູ່

[໓໗໗] ຄໍາວ່າ ທິດທີ ໒ ກໍເຊັ່ນນັ້ນ ອະທິບາຍວ່າ ທິດໜຶ່ງສັນໃດ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ ທິດເບື້ອງຕ່ໍາ ທິດສຽງ ທິດຕ່າງ ໆ ກໍເຊັ່ນນັ້ນ

[໓໗໘] ຄໍາວ່າ ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າ ໃນທີ່ທັງປວງ ອະທິບາຍວ່າ ຄໍາວ່າ ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງນີ້ ເປັນຄໍາກ່າວກໍານົດເອົາສັດທັງໝົດໂດຍປະການທັງປວງ ບໍ່ມີສ່ວນເຫຼືອທາສ່ວນເຫຼືອບໍ່ໄດ້

[໓໗໙] ໃນຄໍາວ່າ ມີຈິດປະກອບດ້ວຍອຸເປກຂາ ນັ້ນ ອຸເປກຂາ ເປັນແນວໃດ?

ຄວາມວາງເສີຍ ກິຣິຍາທີ່ວາງເສີຍ ພາວະທີ່ວາງເສີຍໃນສັດທັງຫຼາຍ ອຸເປກຂາເຈໂຕວິມຸດຕິ ນີ້ຮຽກວ່າ ອຸເປກຂາ

ຈິດ ເປັນແນວໃດ?

ຈິດ ມະໂນ ມານັດ ຯລຯ ມະໂນວິນຍານທາດທີ່ເໝາະສົມກັນ ນີ້ຮຽກວ່າ ຈິດ

ຈິດນີ້ເປັນທໍາມະຊາດປະກອບ ເກີດພ້ອມ ປະປົນ ສໍາປະຍຸດດ້ວຍອຸເປກຂານີ້ ຍ້ອນແນວນັ້ນຈຶ່ງຊື່ວ່າ ມີຈິດທີ່ປະກອບດ້ວຍອຸເປກຂາ

[໓໘໐] ຄໍາວ່າ ໄພບູນ ອະທິບາຍວ່າ ຈິດໃດໄພບູນ ຈິດນັ້ນກວ້າງຂວາງ ຈິດໃດກວ້າງຂວາງຈິດນັ້ນຫາປະມານບໍ່ໄດ້ ຈິດໃດຫາປະມານບໍ່ໄດ້ ຈິດນັ້ນບໍ່ມີເວນ ຈິດໃດ ບໍ່ມີເວນ ຈິດນັ້ນບໍ່ມີພະຍາບາດ

[໖໗໑] ຄໍາວ່າ ແຜ່ໄປ ອະທິບາຍວ່າ ກະຈາຍອອກໄປ ນ້ອມຈິດໄປ

[໖໗໒] ຄໍາວ່າ ຢູ່ ອະທິບາຍວ່າ ສືບເນື່ອງກັນຢູ່ ຯລຯ ພັກຢູ່ ຍ້ອນແນວນັ້ນຈຶ່ງຊື່ວ່າຢູ່

**ສຸດຕັນຕະພາຊະນີ ຈົບ**

# ໒. ອະພິທຳມະພາຊະນີ

[໖໗໓] ອັບປະມັນຍາ ໔ ຄື

໑. ເມດຕາ (ຄວາມຮັກແພງ)　　໒. ກະຣຸນາ (ຄວາມສົງສານ)
໓. ມຸທິຕາ (ຄວາມພອຍຍິນດີ)　　໔. ອຸເປກຂາ (ຄວາມວາງເສີຍ)

## ເມດຕາກຸສົນຊານຈະຕຸກກະໄນ

[໖໗໔] ບັນດາອັບປະມັນຍາ ໔ ນັ້ນ ເມດຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິ ນີ້ຮຽກວ່າ ເມດຕາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍເມດຕາ (໑)

ເມດຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະ ໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິ ນີ້ຮຽກວ່າ ເມດຕາ ສະພາວະທຳ ທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເມດຕາ (໒)

ເມດຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນປີຕິຈາງຄາຍອອກ ຯລຯ ບັນລຸຕະຕິຍະຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາ ທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິ ນີ້ຮຽກວ່າ ເມດຕາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍເມດຕາ (໓)

## ເມດຕາກຸສົນຊານປັນຈະກະໄນ

[໖໗໕] ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິ ນີ້ຮຽກວ່າ ເມດຕາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍເມດຕາ (໑-໔)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມແລະສະພາວະທຳທີ່ເປັນອະກຸສົນທັງຫຼາຍແລ້ວ ບັນລຸທຸຕິຍະຊານທີ່ປະກອບດ້ວຍເມດຕາ ບໍ່ມີວິຕົກມີພຽງວິຈານ ມີປີຕິແລະສຸກອັນເກີດຈາກວິເວກ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິນີ້ຮຽກວ່າ ເມດຕາ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເມດຕາ (໔-໕)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບ ໄປແລ້ວ ຯລຯ ບັນລຸຕະຕິຍະຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິນີ້ຮຽກວ່າ ເມດຕາ ສະພາວະທຳ ທີ່ເຫຼືອຊື່ວ່າສຳປະຍຸດດ້ວຍເມດຕາ (໓-໖)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນປີຕິຈາງຄາຍອອກ ຯລຯ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິ ນີ້ຮຽກວ່າ ເມດຕາ ສະພາວະທຳທີ່ເຫຼືອ ຊື່ວ່າສຳປະຍຸດດ້ວຍເມດຕາ (໔-໗)

## ກະຣຸນາກຸສົນຊານຈະຕຸກກະໄນ

[໖໗໖] ກະຣຸນາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ປະກອບດ້ວຍກະຣຸນາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານ ກະຣຸນາເຈໂຕວິມຸດຕິ ນີ້ຮຽກວ່າ ກະຣຸນາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍກະຣຸນາ (໑)

ກະຣຸນາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານທີ່ປະກອບດ້ວຍກະຣຸນາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມ

ສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານ ກະຣຸນາເຈໂຕວິມຸດຕິ ນີ້ຮຽກວ່າ ກະຣຸນາ ສະພາວະທຳ ທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍກະຣຸນາ (໔)

ກະຣຸນາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນປີຕິຈາງຄາຍອອກໆລໆ ບັນລຸຕະຕິຍະຊານທີ່ປະກອບດ້ວຍກະຣຸນາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານ ກະຣຸນາເຈໂຕວິມຸດຕິ ນີ້ຮຽກວ່າ ກະຣຸນາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍກະຣຸນາ (໓)

## ກະຣຸນາກຸສົນຊານປັນຈະກະໄນ

[໖໙໗] ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ໆລໆ ບັນລຸປະຖົມຊານທີ່ປະກອບດ້ວຍກະຣຸນາ ຢູ່ໃນສະໄໝໃດ ໃນສະໄໝນັ້ນຄວາມສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານ ກະຣຸນາເຈໂຕວິມຸດຕິ ນີ້ຮຽກວ່າ ກະຣຸນາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍກະຣຸນາ (໑-໔)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ແລະສະພາວະທຳທີ່ເປັນອະກຸສົນທັງຫຼາຍແລ້ວ ບັນລຸທຸຕິຍະຊານທີ່ປະກອບດ້ວຍກະຣຸນາ ບໍ່ມີວິຕົກມີພຽງວິຈານ ມີປີຕິແລະສຸກທີ່ເກີດຈາກວິເວກ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມສົງສານກິຣິຍາທີ່ສົງສານ ພາວະທີ່ສົງສານ ກະຣຸນາເຈໂຕວິມຸດຕິ ນີ້ຮຽກວ່າ ກະຣຸນາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍກະຣຸນາ (໔-໕)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບ ໄປແລ້ວ ໆລໆ ບັນລຸຕະຕິຍະຊານທີ່ປະກອບດ້ວຍກະຣຸນາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານ ກະຣຸນາເຈໂຕວິມຸດຕິນີ້ຮຽກວ່າ ກະຣຸນາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍກະຣຸນາ (໓-໖)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນປີຕິຈາງຄາຍອອກ ໆລໆ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍກະຣຸນາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານ ກະຣຸນາເຈໂຕວິມຸດຕິ ນີ້ຮຽກວ່າ ກະຣຸນາ ສະພາວະທຳທີ່ເຫຼືອ ຊື່ວ່າສຳປະຍຸດດ້ວຍກະຣຸນາ (໔-໗)

## ມຸທິຕາກຸສົນຊານຈະຕຸກກະໄນ

[໖໙໘] ມຸທິຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ປະກອບດ້ວຍມຸທິຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີ ມຸທິຕາເຈໂຕວິມຸດຕິ ນີ້ຮຽກວ່າ ມຸທິຕາ ສະພາວະທຳ ທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍມຸທິຕາ (໑)

ມຸທິຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານທີ່ປະກອບດ້ວຍມຸທິຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີ ມຸທິຕາເຈໂຕວິມຸດຕິ ນີ້ຮຽກວ່າ ມຸທິຕາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍມຸທິຕາ (໔)

ມຸທິຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນປີຕິຈາງຄາຍອອກ ຯລຯ ບັນລຸຕະຕິຍະຊານທີ່ປະກອບດ້ວຍມຸທິຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີ ມຸທິຕາເຈໂຕວິມຸດຕິ ນີ້ຮຽກວ່າ ມຸທິຕາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍມຸທິຕາ (៣)

## ມຸທິຕາກຸສົນຊານປັນຈະກະໄນ

[໖໘໙] ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ປະກອບດ້ວຍມຸທິຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີ ມຸທິຕາເຈໂຕວິມຸດຕິ ນີ້ຮຽກວ່າ ມຸທິຕາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍມຸທິຕາ (໑-໔)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມແລະສະພາວະທຳທີ່ເປັນອະກຸສົນທັງຫຼາຍແລ້ວ ບັນລຸທຸຕິຍະຊານທີ່ບໍ່ມີວິຕົກມີພຽງວິຈານ ມີປີຕິແລະສຸກ ອັນເກີດຈາກວິເວກ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີ ມຸທິຕາເຈໂຕວິມຸດຕິ ນີ້ຮຽກວ່າ ມຸທິຕາ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍມຸທິຕາ (໔-໕)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ຯລຯ ບັນລຸຕະຕິຍະຊານທີ່ປະກອບດ້ວຍມຸທິຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີ ມຸທິຕາເຈໂຕວິມຸດຕິນີ້ຮຽກວ່າ ມຸທິຕາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍມຸທິຕາ (៣-໖)

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນປີຕິຈາງຄາຍອອກ ໆລໆ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍມຸທິຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີ ມຸທິຕາເຈໂຕວິມຸດຕິ ນີ້ຮຽກວ່າ ມຸທິຕາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍມຸທິຕາ (໔-໗)

## ອຸເປກຂາກຸສົນຊານ

[໓໖໐] ອຸເປກຂາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນລະສຸກແລະທຸກໄດ້ ໆລໆ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍອຸເປກຂາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມວາງເສີຍ ກິຣິຍາທີ່ວາງເສີຍ ພາວະທີ່ວາງເສີຍ ອຸເປກຂາເຈໂຕວິມຸດຕິ ນີ້ຮຽກວ່າ ອຸເປກຂາ ສະພາວະທຳ ທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍອຸເປກຂາ

[໓໖໑] ອັບປະມັນຍາ ໔ ຄື

໑. ເມດຕາ    ໒. ກະຣຸນາ
໓. ມຸທິຕາ    ໔. ອຸເປກຂາ

## ເມດຕາວິປາກະຊານ

[໓໖໒] ບັນດາອັບປະມັນຍາ ໔ ນັ້ນ ເມດຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ໆລໆ ບັນລຸປະຖົມຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ໆລໆ ອະວິກເຂປະກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ໆລໆ ບັນລຸປະຖົມຊານທີ່ປະກອບດ້ວຍເມດຕາ ເຊິ່ງເປັນວິບາກຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິ ນີ້ຊື່ວ່າເມດຕາ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເມດຕາ

ເມດຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ໆລໆ ບັນລຸທຸຕິຍະຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ໆລໆ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ฯລฯ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ฯລฯ ບັນລຸທຸຕິຍະຊານ ฯລฯ ບັນລຸຕະຕິຍະຊານ ฯລฯ ບັນລຸປະຖົມຊານ ฯລฯ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍເມດຕາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິ ນີ້ຮຽກວ່າເມດຕາ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເມດຕາ

## ກະຣຸນາວິປາກະຊານ

[๗๗๓] ກະຣຸນາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ປະກອບດ້ວຍກະຣຸນາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ປະກອບດ້ວຍກະຣຸນາ ເຊິ່ງເປັນວິບາກຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານ ກະຣຸນາເຈໂຕວິມຸດຕິ ນີ້ຮຽກວ່າ ກະຣຸນາ ສະພາວະທຳ ທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍກະຣຸນາ

ກະຣຸນາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ฯລฯ ບັນລຸທຸຕິຍະຊານທີ່ປະກອບດ້ວຍກະຣຸນາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

ฯລฯ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ฯລฯ ບັນລຸທຸຕິຍະຊານ ฯລฯ ບັນລຸຕະຕິຍະຊານ ฯລฯ ບັນລຸປະຖົມຊານ ฯລฯ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍກະຣຸນາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມສົງສານ ກິຣິຍາທີ່ສົງສານ ພາວະທີ່ສົງສານ ກະຣຸນາເຈໂຕວິມຸດຕິ ນີ້ຮຽກວ່າ ກະຣຸນາ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍກະຣຸນາ

## ມຸທິຕາວິປາກະຊານ

[๗๗๔] ມຸທິຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ປະກອບດ້ວຍມຸທິຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ພິກຂຸສະຫງັດຈາກກາມ ฯລฯ ບັນລຸປະຖົມຊານທີ່ປະກອບດ້ວຍມຸທິຕາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີ ມຸທິຕາເຈໂຕວິມຸດຕິ ນີ້ຮຽກວ່າ ມຸທິຕາ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍມຸທິຕາ

ມຸທິຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ฯລฯ ບັນລຸທຸຕິຍະຊານທີ່ປະກອບດ້ວຍມຸທິຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ฯລฯ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ฯລฯ ບັນລຸທຸຕິຍະຊານ ฯລฯ ບັນລຸຕະຕິຍະຊານ ฯລฯ ບັນລຸປະຖົມຊານ ฯລฯ ບັນລຸທຸຕິຍະຊານ ฯລฯ ບັນລຸຕະຕິຍະຊານ ฯລฯ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍມຸທິຕາ ເຊິ່ງເປັນວິບາກ ຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມພອຍຍິນດີ ກິຣິຍາທີ່ພອຍຍິນດີ ພາວະທີ່ພອຍຍິນດີ ມຸທິຕາເຈໂຕວິມຸດຕິ ນີ້ຮຽກວ່າ ມຸທິຕາ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍມຸທິຕາ

## ອຸເປກຂາວິປາກະຊານ

[໒໙໕] ອຸເປກຂາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນມັກເພື່ອເຂົ້າເຖິງຮູບພົບ ຍ້ອນລະສຸກແລະທຸກໄດ້ ฯລฯ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍອຸເປກຂາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

ฯລฯ ຍ້ອນລະສຸກແລະທຸກໄດ້ ฯລฯ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍອຸເປກຂາ ຍ້ອນໄດ້ເຮັດໄດ້ສັ່ງສົມຮູບປາວະຈອນກຸສົນກຳນັ້ນ ໆ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມວາງເສີຍ ກິຣິຍາທີ່ວາງເສີຍ ພາວະທີ່ວາງເສີຍ ອຸເປກຂາເຈໂຕວິມຸດຕິ ນີ້ຮຽກວ່າ ອຸເປກຂາ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍອຸເປກຂາ

[໒໙໖] ອັບປະມັນຍາ ໔ ຄື

໑. ເມດຕາ
໒. ມຸທິຕາ
໓. ກະຣຸນາ
໔. ອຸເປກຂາ

## ເມດຕາກິຣິຍາຊານ

[໓໙໗] ບັນດາອັບປະມັນຍາ ໔ ນັ້ນ ເມດຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນອະຮູບປາວະຈອນຊານທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນແລະບໍ່ເປັນວິບາກຂອງກຳ ເປັນພຽງທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິ ນີ້ຮຽກວ່າເມດຕາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍເມດຕາ

ເມດຕາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຈະເລີນອະຮູບປາວະຈອນຊານທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນແລະບໍ່ເປັນວິບາກຂອງກຳ ເປັນພຽງທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນວິຕົກວິຈານສະງົບຮະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸປະຖົມຊານ ຯລຯ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍເມດຕາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມຮັກແພງ ກິຣິຍາທີ່ຮັກແພງ ພາວະທີ່ຮັກແພງ ເມດຕາເຈໂຕວິມຸດຕິ ນີ້ຮຽກວ່າ ເມດຕາ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເມດຕາ

[໓໙໘] ກະຣຸນາ ເປັນແນວໃດ?

ຯລຯ

ມຸທິຕາ ເປັນແນວໃດ?

ຯລຯ

ອຸເປກຂາ ເປັນແນວໃດ?

ຯລຯ

ພິກຂຸໃນທຳວິໄນນີ້ຈະເລີນອະຮູບປາວະຈອນຊານທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນແລະບໍ່ເປັນວິບາກຂອງກຳ ເປັນພຽງທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນລະສຸກແລະທຸກໄດ້ ຯລຯ ບັນລຸຈະຕຸດຖະຊານທີ່ປະກອບດ້ວຍອຸເປກຂາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຄວາມວາງເສີຍ ກິຣິຍາທີ່ວາງເສີຍ ພາວະທີ່ວາງເສີຍ ອຸເປກຂາເຈໂຕວິມຸດຕິ ນີ້ຮຽກວ່າ ອຸເປກຂາ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍອຸເປກຂາ

**ອະພິທຳມະພາຊະນີ ຈົບ**

# ໓. ປັນຫາປຸດສະກະ

[໘໙໙] ອັບປະມັນຍາ ໔ ໄດ້ແກ່ ພິກຂຸໃນທຳວິໄນນີ້

໑. ມີຈິດປະກອບດ້ວຍເມດຕາແຜ່ໄປຕະຫຼອດທິດໜຶ່ງຢູ່ ທິດທີ ໒ ກໍເຊັ່ນນັ້ນ ທິດທີ ໓ ທິດທີ ໔ ກໍເຊັ່ນນັ້ນ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງກໍເຊັ່ນດຽວກັນ ມີຈິດປະກອບດ້ວຍເມດຕາອັນໄພບູນ ກວ້າງຂວາງ ຫາປະມານບໍ່ໄດ້ ບໍ່ມີເວນ ບໍ່ມີພະຍາບາດ ແຜ່ໄປສູ່ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງຢູ່

໒. ມີຈິດປະກອບດ້ວຍກະຣຸນາແຜ່ໄປຕະຫຼອດທິດໜຶ່ງຢູ່ ທິດທີ ໒ ກໍເຊັ່ນນັ້ນ ທິດທີ ໓ ທິດທີ ໔ ກໍເຊັ່ນນັ້ນ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງກໍເຊັ່ນດຽວກັນ ມີຈິດປະກອບດ້ວຍກະຣຸນາອັນໄພບູນ ກວ້າງຂວາງ ຫາປະມານບໍ່ໄດ້ ບໍ່ມີເວນ ບໍ່ມີພະຍາບາດ ແຜ່ໄປສູ່ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງຢູ່

໓. ມີຈິດປະກອບດ້ວຍມຸທິຕາແຜ່ໄປຕະຫຼອດທິດໜຶ່ງຢູ່ ທິດທີ ໒ ກໍເຊັ່ນນັ້ນ ທິດທີ ໓ ທິດທີ ໔ ກໍເຊັ່ນນັ້ນ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງ ກໍເຊັ່ນດຽວກັນ ມີຈິດປະກອບດ້ວຍມຸທິຕາອັນໄພບູນ ກວ້າງຂວາງ ຫາປະມານບໍ່ໄດ້ ບໍ່ມີເວນ ບໍ່ມີພະຍາບາດ ແຜ່ໄປສູ່ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງຢູ່

໔. ມີຈິດປະກອບດ້ວຍອຸເປກຂາແຜ່ໄປຕະຫຼອດທິດໜຶ່ງຢູ່ ທິດທີ ໒ ກໍເຊັ່ນນັ້ນ ທິດທີ ໓ ທິດທີ ໔ ກໍເຊັ່ນນັ້ນ ທິດເບື້ອງເທິງ ທິດເບື້ອງຕ່ຳ ທິດສຽງກໍເຊັ່ນດຽວກັນ ມີຈິດປະກອບດ້ວຍອຸເປກຂາອັນໄພບູນ ກວ້າງຂວາງ ຫາປະມານບໍ່ໄດ້ ບໍ່ມີເວນ ບໍ່ມີພະຍາບາດ ແຜ່ໄປສູ່ສັດໂລກທັງປວງ ຍ້ອນເປັນຜູ້ມີຈິດສະເໝີໃນສັດທຸກໝູ່ເຫຼົ່າໃນທີ່ທັງປວງຢູ່

## ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[໗໐໐] ບັນດາອັບປະມັນຍາ ໔ ອັບປະມັນຍາເທົ່າໃດ?ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

# ໑. ຕິກະມາຕິກາວິສັດຊະນາ

## ໑-໔໔. ກຸສະລະຕິກາທິວິສັດຊະນາ

[ກ໐໑] ອັບປະມັນຍາ ໔ ທີ່ເປັນກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ອັບປະມັນຍາ ໓ ສຳປະຍຸດດ້ວຍສຸກຂະເວທະນາ ອຸເປກຂາສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ

ອັບປະມັນຍາ ໔ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

ອັບປະມັນຍາ ໔ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖື ແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ

ອັບປະມັນຍາ ໔ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ ອັບປະມັນຍາ ໓ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີອຸເປກຂາບໍ່ມີທັງວິຕົກແລະວິຈານ

ອັບປະມັນຍາ ໓ ທີ່ປະກອບດ້ວຍປີຕິກໍມີ ທີ່ປະກອບດ້ວຍສຸກກໍມີ ແຕ່ບໍ່ປະກອບດ້ວຍອຸເປກຂາ ທີ່ກ່າວບໍ່ໄດ້ວ່າ ປະກອບດ້ວຍປີຕິກໍມີ ອຸເປກຂາປະກອບດ້ວຍອຸເປກຂາ

ອັບປະມັນຍາ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ອັບປະມັນຍາ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ອັບປະມັນຍາ ໔ ທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິກໍມີ ທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານກໍມີ

ອັບປະມັນຍາ ໔ ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ

ອັບປະມັນຍາ ໔ ເປັນມະຫັກຄະຕະ ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ມີມະຫັກຄະຕະເປັນອາລົມ ຫຼື ມີອັບປະມານະເປັນອາລົມ

ອັບປະມັນຍາ ໔ ເປັນຊັ້ນກາງ

ອັບປະມັນຍາ ໔ ໃຫ້ຜົນບໍ່ແນ່ນອນ ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດ ຫຼືມີມັກເປັນອະທິບໍດີ

ອັບປະມັນຍາ ໔ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ

ອັບປະມັນຍາ ໔ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ ກ່າວບໍ່ໄດ້ວ່າ ມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼື ມີປັດຈຸບັນທຳເປັນອາລົມ

ອັບປະມັນຍາ ໔ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

ອັບປະມັນຍາ ໔ ມີທຳພາຍນອກຕົນເປັນອາລົມ

ອັບປະມັນຍາ ໔ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

# ໒. ທຸກະມາຕິກາວິສັດຊະນາ

## ໑. ເຫຕຸໂຄດສະກະວິສັດຊະນາ

[໗໐໒] ເມດຕາເປັນເຫດ ອັບປະມັນຍາ ໓ ບໍ່ເປັນເຫດ ອັບປະມັນຍາ ໔ ມີເຫດ ອັບປະມັນຍາ ໔ ສຳປະຍຸດດ້ວຍເຫດ ເມດຕາເປັນເຫດແລະມີເຫດ ອັບປະມັນຍາ ໓ ກ່າວບໍ່ໄດ້ວ່າ ເປັນເຫດແລະມີເຫດ

ອັບປະມັນຍາ ໓ ມີເຫດແຕ່ບໍ່ເປັນເຫດ ເມດຕາເປັນເຫດແລະສຳປະຍຸດດ້ວຍເຫດອັບປະມັນຍາ ໓ ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດ

ອັບປະມັນຍາ ໓ ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ອັບປະມັນຍາ ໓ ບໍ່ເປັນເຫດແຕ່ມີເຫດ ເມດຕາກ່າວບໍ່ໄດ້ວ່າ ບໍ່ເປັນເຫດແຕ່ມີເຫດ ຫຼື ບໍ່ເປັນເຫດແລະບໍ່ມີເຫດ

## ໒. ຈູລັນຕະຣະທຸກະວິສັດຊະນາ

ອັບປະມັນຍາ ໔ ມີປັດໄຈປຸງແຕ່ງ ອັບປະມັນຍາ ໔ ຖືກປັດໄຈປຸງແຕ່ງ

ອັບປະມັນຍາ ໔ ເຫັນບໍ່ໄດ້ ອັບປະມັນຍາ ໔ ກະທົບບໍ່ໄດ້

ອັບປະມັນຍາ ໔ ບໍ່ເປັນຮູບ ອັບປະມັນຍາ ໔ ເປັນໂລກິຍະ

ອັບປະມັນຍາ ໔ ຈິດບາງດວງຮູ້ໄດ້ ອັບປະມັນຍາ ໔ ຈິດບາງດວງຮູ້ບໍ່ໄດ້

## ໓. ອາສະວະໂຄດສະກະວິສັດຊະນາ

ອັບປະມັນຍາ ໔ ບໍ່ເປັນອາສະວະ ອັບປະມັນຍາ ໔ ເປັນອາລົມຂອງອາສະວະ

ອັບປະມັນຍາ ໔ ວິບປະຍຸດຈາກອາສະວະ ອັບປະມັນຍາ ໔ ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ

ອັບປະມັນຍາ ໔ ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ ອັບປະມັນຍາ ໔ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ ອັບປະມັນຍາ ໔ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ

## ໔-໑໒. ສັນໂຍຊະນະໂຄດສະກາທິວິສັດຊະນາ

ອັບປະມັນຍາ ໔ ບໍ່ເປັນສັງໂຍດ ຯລຯ ບໍ່ເປັນຄັນຖະ ຯລຯ ບໍ່ເປັນໂອຄະ ຯລຯ ບໍ່ເປັນໂຍຄະ ຯລຯ ບໍ່ເປັນນິວອນ ຯລຯ ບໍ່ເປັນປະຣາມາດ ຯລຯ

ອັບປະມັນຍາ ໔ ຮັບຮູ້ອາລົມໄດ້ ອັບປະມັນຍາ ໔ ບໍ່ເປັນຈິດ

ອັບປະມັນຍາ ໔ ເປັນເຈຕະສິກ ອັບປະມັນຍາ ໔ ສຳປະຍຸດດ້ວຍຈິດ

ອັບປະມັນຍາ ໔ ປະປົນກັບຈິດ ອັບປະມັນຍາ ໔ ມີຈິດເປັນສະມຸດຖານ

ອັບປະມັນຍາ ໔ ເກີດພ້ອມກັບຈິດ ອັບປະມັນຍາ ໔ ເປັນໄປຕາມຈິດ

ອັບປະມັນຍາ ໔ ປະປົນກັບຈິດແລະມີຈິດເປັນສະມຸດຖານ ອັບປະມັນຍາ ໔ ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ

ອັບປະມັນຍາ ໔ ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ອັບປະມັນຍາ ໔ ເປັນພາຍນອກ

ອັບປະມັນຍາ ໔ ບໍ່ເປັນອຸປາທາຍະຮູບ ອັບປະມັນຍາ ໔ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືກໍມີ

## ໑໓. ປິດຖິທຸກະວິສັດຊະນາ

ອັບປະມັນຍາ ໔ ບໍ່ເປັນອຸປາທານ ໆລໆ ບໍ່ເປັນກິເລດ ໆລໆ

ອັບປະມັນຍາ ໔ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ອັບປະມັນຍາ ໔ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ອັບປະມັນຍາ ໓ ທີ່ມີວິຕົກກໍມີ ທີ່ບໍ່ມີວິຕົກກໍມີ ອຸເປກຂາບໍ່ມີວິຕົກ ອັບປະມັນຍາ ໓ ທີ່ມີວິຈານກໍມີ ທີ່ບໍ່ມີວິຈານກໍມີ ອຸເປກຂາບໍ່ມີວິຈານ

ອັບປະມັນຍາ ໓ ທີ່ມີປິຕິກໍມີ ທີ່ບໍ່ມີປິຕິກໍມີ ອຸເປກຂາບໍ່ມີປິຕິ ອັບປະມັນຍາ ໓ ທີ່ປະກອບດ້ວຍປິຕິກໍມີ ທີ່ບໍ່ປະກອບດ້ວຍປິຕິກໍມີ ອຸເປກຂາບໍ່ປະກອບດ້ວຍປິຕິ

ອັບປະມັນຍາ ໓ ປະກອບດ້ວຍສຸກ ອຸເປກຂາບໍ່ປະກອບດ້ວຍສຸກອັບປະມັນຍາ ໓ ບໍ່ປະກອບດ້ວຍອຸເປກຂາ ອຸເປກຂາປະກອບດ້ວຍອຸເປກຂາ

ອັບປະມັນຍາ ໔ ບໍ່ເປັນກາມາວະຈອນ ອັບປະມັນຍາ ໔ ເປັນອະຣູບປາວະຈອນ

ອັບປະມັນຍາ ໔ ບໍ່ເປັນອະຣູບປາວະຈອນ ອັບປະມັນຍາ ໔ ເປັນໂລກິຍະ

ອັບປະມັນຍາ ໔ ບໍ່ເປັນເຫດນຳອອກຈາກວັດຕະທຸກ ອັບປະມັນຍາ ໔ ໃຫ້ຜົນບໍ່ແນ່ນອນ

ອັບປະມັນຍາ ໔ ມີທຳອື່ນຍິ່ງກວ່າ ອັບປະມັນຍາ ໔ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້

**ປັນຫາປຸດສະກະ ຈົບ**

**ອັບປະມັນຍາວິພັງ ຈົບບໍລິບູນ**

# ໑໔. ສິກຂາບົດວິພັງ

## ໑. ອະພິທຳມະພາຊະນີ

[໗໐໓] ສິກຂາບົດ ໕ ຄື

໑. ປານາຕິປາຕາ ເວຣະມະນີສິກຂາບົດ
໒. ອະທິນນາທານາ ເວຣະມະນີສິກຂາບົດ
໓. ກາເມສຸມິດສາຈາຣາ ເວຣະມະນີສິກຂາບົດ
໔. ມຸສາວາທາ ເວຣະມະນີສິກຂາບົດ
໕. ສຸຣາເມຣະຍະມັດຊະປະມາທັດຖານາ ເວຣະມະນີສິກຂາບົດ

[໗໐໔] ບັນດາສິກຂາບົດ ໕ ນັ້ນ ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການຂ້າສັດ ໃນສະໄໝໃດ ໃນສະໄໝນັ້ນ ການງົດ ການເວັ້ນ ການງົດເວັ້ນ ການເວັ້ນຂາດຈາກການຂ້າສັດ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດແຫ່ງການຂ້າສັດ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເວຣະມະນີ

ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການຂ້າສັດ ໃນສະໄໝໃດ ໃນສະໄໝນັ້ນ ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເຈຕະນາ

ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການຂ້າສັດ ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ

ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ເກີດຂຶ້ນ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ປະກອບ

ດ້ວຍໂສມະນັດ ວິບປະຍຸດຈາກຍານເກີດຂຶ້ນໂດຍມີເຫດດີງຈູງ ฯລฯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ฯລฯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ເກີດຂຶ້ນໂດຍມີເຫດດີງຈູງ ฯລฯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ฯລฯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານເກີດຂຶ້ນແກ່ບຸກຄົນຜູ້ງົດເວັ້ນຈາກການຂ້າສັດໂດຍມີເຫດດີງຈູງ ໃນສະ ໄໝໃດໃນສະໄໝນັ້ນ ການງົດ ການເວັ້ນ ການງົດເວັ້ນ ການເວັ້ນຂາດຈາກການຂ້າສັດ ການບໍ່ເຮັດການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດແຫ່ງການຂ້າສັດ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເວຣະມະນີ

[໗໐໕] ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການຂ້າສັດໂດຍມີເຫດດີງຈູງ ໃນສະໄໝໃດໃນສະໄໝນັ້ນ ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເຈຕະນາ

ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການຂ້າສັດໂດຍມີເຫດດີງຈູງ ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ

[໗໐໖] ອະທິນນາທານາເວຣະມະນີສິກຂາບົດ

ฯລฯ

ກາເມສຸມິດສາຈາຣາເວຣະມະນີສິກຂາບົດ

ฯລฯ

ມຸສາວາທາເວຣະມະນີສິກຂາບົດ

ฯລฯ

ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການດື່ມນ້ຳເມົາຄື ສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ໃນສະໄໝໃດ ໃນສະໄໝນັ້ນ ການງົດ ການເວັ້ນ ການງົດເວັ້ນ ການເວັ້ນຂາດຈາກການດື່ມນ້ຳເມົາ ຄື ສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ການບໍ່ເຮັດ ການເຊົາເຮັດການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດແຫ່ງການດື່ມນ້ຳເມົາ ຄື ສຸຣາເມໄຣອັນ

ເປັນທີ່ຕັ້ງແຫ່ງຄວາມຜະໝາດ ກໍເກີດຂຶ້ນ ນີ້ຮຽກວ່າ ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເວຣະມະນີ

ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການດື່ມນ້ຳເມົາຄື ສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ໃນສະໄໝໃດ ໃນສະໄໝນັ້ນ ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ກໍເກີດຂຶ້ນ ນີ້ຮຽກວ່າ ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍເຈຕະນາ

ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການດື່ມນ້ຳເມົາຄື ສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ນີ້ຮຽກວ່າ ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ

ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານເກີດຂຶ້ນ ໂດຍມີເຫດດຶງຈູງ ฯລฯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ฯລฯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ເກີດຂຶ້ນໂດຍມີເຫດດຶງຈູງ ฯລฯ ປະກອບດ້ວຍອຸເປກຂາສຳປະຍຸດດ້ວຍຍານ ฯລฯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ເກີດຂຶ້ນໂດຍມີເຫດດຶງຈູງ ฯລฯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ฯລฯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ເກີດຂຶ້ນແກ່ບຸກຄົນຜູ້ງົດເວັ້ນຈາກການດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດໂດຍມີເຫດດຶງຈູງ ໃນສະໄໝໃດ ໃນສະໄໝນັ້ນ ການງົດ ການເວັ້ນ ການງົດເວັ້ນ ການເວັ້ນຂາດຈາກການດື່ມນ້ຳເມົາຄື ສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດແຫ່ງການດື່ມນ້ຳເມົາຄືສຸຣາ ແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ກໍເກີດຂຶ້ນ ນີ້ຮຽກວ່າສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເວຣະມະນີ

[໗໐໗] ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານເກີດຂຶ້ນແກ່ບຸກຄົນຜູ້ງົດເວັ້ນຈາກການດື່ມນ້ຳເມົາ ຄື ສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະ

ໝາດໂດຍມີເຫດດົງຈູງ ໃນສະໄໝໃດ ໃນສະໄໝນັ້ນ ຄວາມຈິງໃຈ ກິຣິຍາທີ່ຈິງໃຈ ພາວະທີ່ຈິງໃຈ ກໍເກີດ ຂຶ້ນ ນີ້ຮຽກວ່າ ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເຈຕະນາ

ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດໂດຍມີເຫດດົງຈູງ ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ນີ້ຮຽກວ່າ ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ

[ກ໐໗] ສິກຂາບົດ ໕ ຄື

໑. ປານາຕິປາຕາ ເວຣະມະນີສິກຂາບົດ
໒. ອະທິນນາທານາ ເວຣະມະນີສິກຂາບົດ
໓. ກາເມສຸມິດສາຈາຣາ ເວຣະມະນີສິກຂາບົດ
໔. ມຸສາວາທາ ເວຣະມະນີສິກຂາບົດ
໕. ສຸຣາເມຣະຍະມັດຊະປະມາທັດຖານາ ເວຣະມະນີສິກຂາບົດ

[ກ໐໘] ບັນດາສິກຂາບົດ ໕ ນັ້ນ ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານເປັນຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນສັນທາທິປະໄຕ ວິຣິຍາທິປະໄຕ ຈິດຕາທິປະໄຕ ວິມັງສາທິປະໄຕ ເປັນສັນທາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິຣິຍາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນຈິດຕາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິມັງສາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເກີດຂຶ້ນແກ່ບຸຄົນຜູ້ງົດເວັ້ນຈາກການຂ້າສັດ ໃນສະໄໝໃດ ໃນສະໄໝນັ້ນ ການງົດ ການເວັ້ນ ການງົດເວັ້ນ ການເວັ້ນຂາດຈາກການຂ້າສັດ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດແຫ່ງການຂ້າສັດ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດ ດ້ວຍເວຣະມະນີ

ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານເປັນຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນສັນທາທິປະໄຕ ວິຣິຍາທິປະໄຕ ຈິດຕາທິປະໄຕ ວິມັງສາທິປະໄຕ ເປັນສັນທາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິຣິຍາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນຈິດຕາທິປະໄຕຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິມັງສາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເກີດຂຶ້ນແກ່ບຸກຄົນຜູ້ງົດເວັ້ນຈາກການຂ້າສັດ ໃນສະໄໝໃດ ໃນສະໄໝນັ້ນ

ຄວາມຈິງໃຈ ກິຣິຍາທີ່ຈິງໃຈ ພາວະທີ່ຈິງໃຈ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກາຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເຈຕະນາ

ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ເປັນຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນສັນທາທິປະໄຕ ວິຣິຍາທິປະໄຕ ຈິດຕາທິປະໄຕ ວິມັງສາທິປະໄຕ ເປັນສັນທາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິຣິຍາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນຈິດຕາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິມັງສາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເກີດຂຶ້ນແກ່ບຸກຄົນຜູ້ງົດເວັ້ນຈາກການຂ້າສັດ ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯລฯ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ

ປານາຕິປາຕາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ເກີດຂຶ້ນໂດຍມີເຫດດຶງຈູງ ฯລฯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ฯລฯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ເກີດຂຶ້ນໂດຍມີເຫດດຶງຈູງ ฯລฯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ฯລฯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ເກີດຂຶ້ນໂດຍມີເຫດດຶງຈູງ ฯລฯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ฯລฯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ເປັນຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນສັນທາທິປະໄຕ ວິຣິຍາທິປະໄຕ ຈິດຕາທິປະໄຕ ເປັນສັນທາທິປະໄຕຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິຣິຍາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນຈິດຕາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການຂ້າສັດໂດຍມີເຫດດຶງຈູງ ໃນສະໄໝໃດ ໃນສະໄໝນັ້ນ ການງົດ ການເວັ້ນ ການງົດເວັ້ນ ການເວັ້ນຂາດຈາກການຂ້າສັດ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດແຫ່ງການຂ້າສັດກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເວຣະມະນີ ฯລฯ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍເຈຕະນາ ฯລฯ ຜັດສະ ฯລฯ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ນີ້ຮຽກວ່າ ປານາຕິປາຕາເວຣະມະນີສິກຂາບົດ

[ກ໗໐] ອະທິນນາທານາເວຣະມະນີສິກຂາບົດ

ฯລฯ

ກາເມສຸມິດສາຈາຣາເວຣະມະນີສິກຂາບົດ

ฯລฯ

ມຸສາວາທາເວຣະມະນີສິກຂາບົດ

ฯລฯ

ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ເປັນຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນສັນທາທິປະໄຕ ວິຣິຍາທິປະໄຕ ຈິດຕາທິປະໄຕ ວິມັງສາທິປະໄຕ ເປັນສັນທາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິຣິຍາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນຈິດຕາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິມັງສາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເກີດຂຶ້ນແກ່ບຸກຄົນຜູ້ງົດເວັ້ນຈາກການດື່ມນ້ຳເມົາຄືສຸຣາ ແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ໃນສະໄໝໃດ ໃນສະໄໝນັ້ນ ການງົດ ການເວັ້ນ ການງົດເວັ້ນ ການເວັ້ນຂາດຈາກການດື່ມນ້ຳເມົາຄືສຸຣາ ແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດແຫ່ງການດື່ມນ້ຳເມົາຄື ສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ກໍເກີດຂຶ້ນ ນີ້ຮຽກວ່າ ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດສະພາວະທຳທີ່ເຫຼືອ ຊື່ວ່າ ສຳປະຍຸດດ້ວຍເວຣະມະນີ ຯລຯ ສະພາວະທຳທີ່ເຫຼືອຊື່ວ່າສຳປະຍຸດດ້ວຍເຈຕະນາ ຯລຯ ຜັດສະ ຯລຯ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ນີ້ຮຽກວ່າ ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ

[໗໑໑] ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ເກີດຂຶ້ນ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ເກີດຂຶ້ນໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ເກີດຂຶ້ນໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ເປັນຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນສັນທາທິປະໄຕ ວິຣິຍາທິປະໄຕ ຈິດຕາທິປະໄຕ ເປັນສັນທາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນວິຣິຍາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເປັນຈິດຕາທິປະໄຕ ຊັ້ນຕ່ຳ ຊັ້ນກາງ ຊັ້ນປະນີດ ເກີດຂຶ້ນ ແກ່ບຸກຄົນຜູ້ງົດເວັ້ນຈາກການດື່ມນ້ຳເມົາຄືສຸຣາ ແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດໂດຍມີເຫດດຶງຈູງໃນສະໄໝໃດ ໃນສະໄໝນັ້ນ ການງົດ ການເວັ້ນ ການງົດເວັ້ນ ການເວັ້ນຂາດຈາກການດື່ມນ້ຳເມົາ ຄື ສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ການບໍ່ເຮັດ ການເຊົາເຮັດ ການບໍ່ລ່ວງລະເມີດ ການບໍ່ລ້ຳເຂດ ການກຳຈັດຕົ້ນເຫດແຫ່ງການດື່ມນ້ຳເມົາຄື ສຸຣາແລະເມໄຣອັນເປັນທີ່ຕັ້ງແຫ່ງຄວາມຜະໝາດ ນີ້ຮຽກວ່າ ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເວຣະມະນີ ຯລຯ ສະພາວະທຳທີ່ເຫຼືອຊື່ວ່າ ສຳປະຍຸດດ້ວຍເຈຕະນາ ຯລຯ ຜັດສະ ຯລຯ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ນີ້ຮຽກວ່າ ສຸຣາເມຣະຍະມັດຊະປະມາທັດຖານາເວຣະມະນີສິກຂາບົດ

# ສະພາວະທຳທີ່ເປັນສິກຂາ

[ກ໑໘] ສະພາວະທຳທີ່ເປັນສິກຂາ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນສິກຂາ

ສະພາວະທຳທີ່ເປັນສິກຂາ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍຍານເກີດຂຶ້ນ ໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍໂສມະນັດ ວິບປະຍຸດຈາກຍານ ເກີດຂຶ້ນໂດຍມີເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ຯລຯ ປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍຍານ ເກີດຂຶ້ນໂດຍເຫດດຶງຈູງ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານ ຯລຯ ປະກອບດ້ວຍອຸເປກຂາ ວິບປະຍຸດຈາກຍານມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໂດຍມີເຫດດຶງຈູງ ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນສິກຂາ

[ກ໑໓] ສະພາວະທຳທີ່ເປັນສິກຂາ ເປັນແນວໃດ?

ພິກຂຸຈະເລີນມັກເພື່ອເຂົ້າເຖິງຮູບພົບ ຯລຯ ຈະເລີນມັກເພື່ອເຂົ້າເຖິງອະຮູບພົບ ຯລຯ ຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານທີ່ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນສິກຂາ

## ໒. ປັນຫາປຸດສະກະ

[ກ໑໔] ສິກຂາບົດ ໕ ຄື

໑. ປານາຕິປາຕາ ເວຣະມະນີສິກຂາບົດ
໒. ອະທິນນາທານາ ເວຣະມະນີສິກຂາບົດ
໓. ກາເມສຸມິດສາຈາຣາ ເວຣະມະນີສິກຂາບົດ
໔. ມຸສາວາທາ ເວຣະມະນີສິກຂາບົດ
໕. ສຸຣາເມຣະຍະມັດຊະປະມາທັດຖານາ ເວຣະມະນີສິກຂາບົດ

## ຕິກະມາຕິກາປຸດສາ ທຸກະມາຕິກາປຸດສາ

[ກ໑໕] ບັນດາສິກຂາບົດ ໕ ສິກຂາບົດເທົ່າໃດ?ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ ຯລຯ ເທົ່າໃດເປັນເຫດໃຫ້ສັດຮ້ອງໄຫ້ ເທົ່າໃດບໍ່ເປັນເຫດໃຫ້ສັດຮ້ອງໄຫ້

# ໑. ຕິກະມາຕິກາວິສັດຊະນາ

## ໑-໘໘. ກຸສະລະຕິກາທິວິສັດຊະນາ

[ກ໑໖] ສິກຂາບົດ ໕ ເປັນກຸສົນຢ່າງດຽວ

ສິກຂາບົດ ໕ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ

ສິກຂາບົດ ໕ ເປັນເຫດໃຫ້ເກີດວິບາກ

ສິກຂາບົດ ໕ ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານ

ສິກຂາບົດ ໕ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ

ສິກຂາບົດ ໕ ມີທັງວິຕົກແລະວິຈານ

ສິກຂາບົດ ໕ ທີ່ປະກອບດ້ວຍປິຕິກໍມີ ທີ່ປະກອບດ້ວຍສຸກກໍມີ ທີ່ປະກອບດ້ວຍ ອຸເປກຂາກໍມີ

ສິກຂາບົດ ໕ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສິກຂາບົດ ໕ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສິກຂາບົດ ໕ ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິ

ສິກຂາບົດ ໕ ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ

ສິກຂາບົດ ໕ ເປັນປະຣິດຕະ

ສິກຂາບົດ ໕ ມີປະຣິດຕະເປັນອາລົມ

ສິກຂາບົດ ໕ ເປັນຊັ້ນກາງ

ສິກຂາບົດ ໕ ໃຫ້ຜົນບໍ່ແນ່ນອນ

ສິກຂາບົດ ໕ ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດ ຫຼືມີມັກເປັນອະທິບໍດີ

ສິກຂາບົດ ໕ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ແຕ່ກ່າວບໍ່ໄດ້ວ່າ ຈັກເກີດຂຶ້ນແນ່ນອນ

ສິກຂາບົດ ໕ ທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ

ສິກຂາບົດ ໕ ມີປັດຈຸບັນທຳເປັນອາລົມ

ສິກຂາບົດ ໕ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ

ສິກຂາບົດ ໕ ມີທຳພາຍນອກຕົນເປັນອາລົມ

ສິກຂາບົດ ໕ ເຫັນບໍ່ໄດ້ແລະກະທົບບໍ່ໄດ້

# ໔. ທຸກະມາຕິກາວິສັດຊະນາ

## ໑. ເຫຕຸໂຄດສະກະວິສັດຊະນາ

[໗໑໗] ສິກຂາບົດ ໕ ບໍ່ເປັນເຫດແຕ່ມີເຫດ ສິກຂາບົດ ໕ ສຳປະຍຸດດ້ວຍເຫດແຕ່ກ່າວບໍ່ໄດ້ວ່າເປັນເຫດແລະມີເຫດ

ສິກຂາບົດ ໕ ມີເຫດແຕ່ບໍ່ເປັນເຫດ ແຕ່ກ່າວບໍ່ໄດ້ວ່າ ເປັນເຫດແລະສຳປະຍຸດດ້ວຍເຫດສິກຂາບົດ ໕ ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ຫຼື ບໍ່ເປັນເຫດແຕ່ມີເຫດ

## ໒. ຈູລັນຕະຣະທຸກະວິສັດຊະນາ

ສິກຂາບົດ ໕ ມີປັດໄຈປຸງແຕ່ງ ສິກຂາບົດ ໕ ຖືກປັດໄຈປຸງແຕ່ງ

ສິກຂາບົດ ໕ ເຫັນບໍ່ໄດ້ ສິກຂາບົດ ໕ ກະທົບບໍ່ໄດ້

ສິກຂາບົດ ໕ ບໍ່ເປັນຮູບ ສິກຂາບົດ ໕ ເປັນໂລກິຍະ

ສິກຂາບົດ ໕ ຈິດບາງດວງຮູ້ໄດ້ ສິກຂາບົດ ໕ ຈິດບາງດວງຮູ້ບໍ່ໄດ້

## ໓. ອາສະວະໂຄດສະກະວິສັດຊະນາ

ສິກຂາບົດ ໕ ບໍ່ເປັນອາສະວະ ສິກຂາບົດ ໕ ເປັນອາລົມຂອງອາສະວະ

ສິກຂາບົດ ໕ ວິບປະຍຸດຈາກອາສະວະ ແຕ່ກ່າວບໍ່ໄດ້ວ່າ ເປັນອາສະວະແລະເປັນອາລົມຂອງອາສະວະ ສິກຂາບົດ ໕ ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ

ສິກຂາບົດ ໕ ກ່າວບໍ່ໄດ້ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຫຼື ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ ສິກຂາບົດ ໕ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ

## ໔-໑໔. ສັນໂຍຊະນະໂຄດສະກາທິວິສັດຊະນາ

ສິກຂາບົດ ໕ ບໍ່ເປັນສັງໂຍດ ฯລฯ ບໍ່ເປັນຄັນຖະ ฯລฯ ບໍ່ເປັນໂອຄະ ฯລฯ ບໍ່ເປັນໂຍຄະ ฯລฯ ບໍ່ເປັນນິວອນ ฯລฯ ບໍ່ເປັນປະຣາມາດ ฯລฯ

ສິກຂາບົດ ໕ ຮັບຮູ້ອາລົມໄດ້ ສິກຂາບົດ ໕ ບໍ່ເປັນຈິດ

ສິກຂາບົດ ໕ ເປັນເຈຕະສິກ ສິກຂາບົດ ໕ ສຳປະຍຸດດ້ວຍຈິດ

ສິກຂາບົດ ໕ ປະປົນກັບຈິດ ສິກຂາບົດ ໕ ມີຈິດເປັນສະມຸດຖານ

ສິກຂາບົດ ໕ ເກີດພ້ອມກັບຈິດ ສິກຂາບົດ ໕ ເປັນໄປຕາມຈິດ

ສິກຂາບົດ ໕ ປະປົນກັບຈິດແລະມີຈິດເປັນສະມຸດຖານ ສິກຂາບົດ ໕ ປະປົນກັບຈິດມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ

ສິກຂາບົດ ໕ ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ ສິກຂາບົດ ໕ ເປັນພາຍນອກ

ສິກຂາບົດ ໕ ບໍ່ເປັນອຸປາທາຍະຣູບ ສິກຂາບົດ ໕ ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື

ສິກຂາບົດ ໕ ບໍ່ເປັນອຸປາທານ ຯລຯ ບໍ່ເປັນກິເລດ ຯລຯ

## ໑໙. ປິດຖິທຸກະວິສັດຊະນາ

ສິກຂາບົດ ໕ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສິກຂາບົດ ໕ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

ສິກຂາບົດ ໕ ມີວິຕົກ ສິກຂາບົດ ໕ ມີວິຈານ

ສິກຂາບົດ ໕ ທີ່ມີປີຕິກໍມີ ທີ່ບໍ່ມີປີຕິກໍມີ ສິກຂາບົດ ໕ ທີ່ປະກອບດ້ວຍປີຕິກໍມີ ທີ່ບໍ່ປະກອບດ້ວຍປີຕິກໍມີ

ສິກຂາບົດ ໕ ທີ່ປະກອບດ້ວຍສຸກກໍມີ ທີ່ບໍ່ປະກອບດ້ວຍສຸກກໍມີ ສິກຂາບົດ ໕ ທີ່ປະກອບດ້ວຍອຸເປກຂາກໍມີ ທີ່ບໍ່ປະກອບດ້ວຍອຸເປກຂາກໍມີ

ສິກຂາບົດ ໕ ເປັນກາມາວະຈອນ ສິກຂາບົດ ໕ ບໍ່ເປັນອະຣູບປາວະຈອນ

ສິກຂາບົດ ໕ ບໍ່ເປັນອະຣູບປາວະຈອນ ສິກຂາບົດ ໕ ເປັນໂລກິຍະ

ສິກຂາບົດ ໕ ບໍ່ເປັນເຫດນຳອອກຈາກວັດຕະທຸກ ສິກຂາບົດ ໕ ໃຫ້ຜົນບໍ່ແນ່ນອນ

ສິກຂາບົດ ໕ ມີທຳອື່ນຍິ່ງກວ່າ ສິກຂາບົດ ໕ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້

**ປັນຫາປຸດສະກະ ຈົບ**

**ສິກຂາບົດວິພັງ ຈົບບໍລິບູນ**

# ໑໕. ປະຕິສຳພິທາວິພັງ

## ໑. ສຸດຕັນຕະພາຊະນີ

### ໑. ສັງຄະຫະວາຣະ

[໗໑໗] ປະຕິສຳພິທາ ໔ ຄື

໑. ອັດຖະປະຕິສຳພິທາ (ປັນຍາແຕກສານໃນອັດຖະ)
໒. ທຳມະປະຕິສຳພິທາ (ປັນຍາແຕກສານໃນທຳ)
໓. ນິຣຸດຕິປະຕິສຳພິທາ (ປັນຍາແຕກສານໃນນິຣຸດຕິ)
໔. ປະຕິພານະປະຕິສຳພິທາ (ປັນຍາແຕກສານໃນປະຕິພານ)

ຄວາມຮູ້ໃນອັດຖະຊື່ວ່າອັດຖະປະຕິສຳພິທາ ຄວາມຮູ້ໃນທຳຊື່ວ່າທຳມະປະຕິສຳພິທາ ຄວາມຮູ້ໃນການກ່າວທຳມະນິຣຸດຕິນັ້ນຊື່ວ່າ ນິຣຸດຕິປະຕິສຳພິທາ ຄວາມຮູ້ໃນຍານທັງຫຼາຍ ຊື່ວ່າ ປະຕິພານະປະຕິສຳພິທາ ນີ້ຊື່ວ່າສັງຄະຫະວາຣະ

### ໒. ສັດຈະວາຣະ

[໗໑໘] ປະຕິສຳພິທາ ໔ ຄື

໑. ອັດຖະປະຕິສຳພິທາ ໒. ທຳມະປະຕິສຳພິທາ
໓. ນິຣຸດຕິປະຕິສຳພິທາ ໔. ປະຕິພານະປະຕິສຳພິທາ

ຄວາມຮູ້ໃນທຸກຊື່ວ່າອັດຖະປະຕິສຳພິທາ ຄວາມຮູ້ໃນທຸກຂະສະມຸໄທຊື່ວ່າທຳມະປະຕິສຳພິທາ ຄວາມຮູ້ໃນທຸກຂະນິໂຣທະຊື່ວ່າອັດຖະປະຕິສຳພິທາ ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາຊື່ວ່າທຳມະປະຕິສຳພິທາ ຄວາມຮູ້ໃນການກ່າວທຳມະນິຣຸດຕິນັ້ນຊື່ວ່ານິຣຸດຕິປະຕິສຳພິທາ ຄວາມຮູ້ໃນຍານທັງຫຼາຍຊື່ວ່າ ປະຕິພານະປະຕິສຳພິທາ ນີ້ຊື່ວ່າສັດຈະວາຣະ

### ໓. ເຫຕຸວາຣະ

[໗໒໐] ປະຕິສຳພິທາ ໔ ຄື

໑. ອັດຖະປະຕິສຳພິທາ ໒. ທຳມະປະຕິສຳພິທາ
໓. ນິຣຸດຕິປະຕິສຳພິທາ ໔. ປະຕິພານະປະຕິສຳພິທາ

ຄວາມຮູ້ໃນເຫດຊື່ວ່າທຳມະປະຕິສຳພິທາ ຄວາມຮູ້ໃນຜົນຂອງເຫດຊື່ວ່າອັດຖະປະຕິສຳພິທາ ຄວາມຮູ້ໃນການກ່າວທຳມະນິຣຸດຕິນັ້ນຊື່ວ່າ ນິຣຸດຕິປະຕິສຳພິທາ ຄວາມຮູ້ໃນຍານທັງຫຼາຍຊື່ວ່າ ປະຕິພານະປະຕິສຳພິທາ ນີ້ຊື່ວ່າ ເຫຕຸວາຣະ

## ໔. ທຳມະວາຣະ

[໗໔໑] ປະຕິສຳພິທາ ໔ ຄື

໑. ອັດຖະປະຕິສຳພິທາ ໒. ທຳມະປະຕິສຳພິທາ
໓. ນິຣຸດຕິປະຕິສຳພິທາ ໔. ປະຕິພານະປະຕິສຳພິທາ

ທຳເຫຼົ່າໃດເກີດແລ້ວ ມີແລ້ວ ເກີດພ້ອມແລ້ວ ບັງເກີດແລ້ວ ບັງເກີດສະເພາະແລ້ວ ຜາກົດແລ້ວ ຄວາມຮູ້ໃນທຳເຫຼົ່ານີ້ຊື່ວ່າອັດຖະປະຕິສຳພິທາ ທຳເຫຼົ່ານັ້ນເກີດແລ້ວ ມີແລ້ວ ເກີດພ້ອມແລ້ວ ບັງເກີດແລ້ວ ບັງເກີດສະເພາະແລ້ວ ຜາກົດແລ້ວ ຍ້ອນທຳເຫຼົ່າໃດ ຄວາມຮູ້ໃນທຳເຫຼົ່ານັ້ນຊື່ວ່າທຳມະປະຕິສຳພິທາ ຄວາມຮູ້ໃນການກ່າວທຳມະນິຣຸດຕິນັ້ນຊື່ວ່ານິຣຸດຕິປະຕິສຳພິທາ ຄວາມຮູ້ໃນຍານທັງຫຼາຍຊື່ວ່າປະຕິພານະປະຕິສຳພິທາ ນີ້ຊື່ວ່າ ທຳມະວາຣະ

## ໕. ປະຕິດຈະສະມຸປະປາທະວາຣະ

[໗໔໒] ປະຕິສຳພິທາ ໔ ຄື

໑. ອັດຖະປະຕິສຳພິທາ ໒. ທຳມະປະຕິສຳພິທາ
໓. ນິຣຸດຕິປະຕິສຳພິທາ ໔. ປະຕິພານະປະຕິສຳພິທາ

ຄວາມຮູ້ໃນຊະຣາມໍຣະນະຊື່ວ່າອັດຖະປະຕິສຳພິທາ ຄວາມຮູ້ໃນເຫດເກີດແຫ່ງຊະຣາມໍຣະນະຊື່ ວ່າທຳມະປະຕິສຳພິທາ ຄວາມຮູ້ໃນຄວາມດັບແຫ່ງຊະຣາມໍຣະນະຊື່ວ່າ ອັດຖະປະຕິສຳພິທາ ຄວາມຮູ້ໃນປະຕິປະທາທີ່ເປັນເຫດໃຫ້ເຖິງຄວາມດັບແຫ່ງຊະຣາມໍຣະນະຊື່ວ່າທຳມະປະຕິສຳພິທາ ຄວາມຮູ້ໃນການກ່າວທຳມະນິຣຸດຕິນັ້ນຊື່ວ່າ ນິຣຸດຕິປະຕິສຳພິທາ ຄວາມຮູ້ໃນຍານທັງຫຼາຍຊື່ວ່າປະຕິພານະປະຕິສຳພິທາ

[໗໔໓] ປະຕິສຳພິທາ ໔ ຄື

໑. ອັດຖະປະຕິສຳພິທາ ໒. ທຳມະປະຕິສຳພິທາ
໓. ນິຣຸດຕິປະຕິສຳພິທາ ໔. ປະຕິພານະປະຕິສຳພິທາ

ຄວາມຮູ້ໃນຊາດ ຯລຯ ຄວາມຮູ້ໃນພົບ ຯລຯ ຄວາມຮູ້ໃນອຸປາທານ ຯລຯ ຄວາມຮູ້ໃນຕັນຫາ ຯລຯ ຄວາມຮູ້ໃນເວທະນາ ຯລຯ ຄວາມຮູ້ໃນຜັດສະ ຯລຯ ຄວາມຮູ້ໃນສະລາຍະຕະນະ ຯລຯ ຄວາມຮູ້ໃນນາມຮູບ ຯລຯ ຄວາມຮູ້ໃນວິນຍານ ຯລຯ ຄວາມຮູ້ໃນສັງຂານທັງຫຼາຍ ຊື່ວ່າອັດຖະປະຕິສຳພິທາ ຄວາມຮູ້ໃນເຫດເກີດແຫ່ງສັງຂານຊື່ວ່າທຳມະປະຕິສຳພິທາ ຄວາມຮູ້ໃນຄວາມດັບແຫ່ງສັງຂານຊື່ວ່າອັດຖະປະຕິສຳພິທາ ຄວາມຮູ້ໃນປະຕິປະທາທີ່ເປັນເຫດໃຫ້ເຖິງຄວາມດັບ ແຫ່ງສັງຂານຊື່ວ່າທຳມະປະຕິສຳພິທາ ຄວາມຮູ້ໃນການກ່າວທຳມະນິຣຸດຕິນັ້ນຊື່ວ່ານິຣຸດຕິປະຕິສຳພິທາ ຄວາມຮູ້ໃນຍານທັງຫຼາຍຊື່ວ່າປະຕິພານະປະຕິສຳພິທາ ນີ້ຊື່ວ່າປະຕິດຈະສະມຸປະປາທະວາຣະ

## ໕. ປະຣິຍັດຕິວາຣະ

[໗໔໔] ປະຕິສຳພິທາ ໔ ຄື

໑. ອັດຖະປະຕິສຳພິທາ ໒. ທຳມະປະຕິສຳພິທາ
໓. ນິຣຸດຕິປະຕິສຳພິທາ ໔. ປະຕິພານະປະຕິສຳພິທາ

ບັນດາປະຕິສຳພິທາ ໔ ເຫຼົ່ານັ້ນ ທຳມະປະຕິສຳພິທາ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ຮູ້ທຳ ຄື ສຸດຕະ ເຄີຍຍະ ເວີຍຍາກະຣະນະ ຄາຖາ ອຸທານ ອິຕິວຸດຕະກະ ຊາດົກ ອັບພູຕະທຳ ເວທັນລະ ນີ້ຮຽກວ່າ ທຳມະປະຕິສຳພິທາ ພິກຂຸນັ້ນ ຮູ້ແຕກສານອັດຖະແຫ່ງພາສິດນັ້ນ ໆ ວ່າ ນີ້ເປັນອັດຖະແຫ່ງພາສິດນີ້ ນີ້ເປັນອັດຖະແຫ່ພາສິດນີ້ ນີ້ຮຽກວ່າອັດຖະປະຕິສຳພິທາ ຄວາມຮູ້ໃນການກ່າວທຳມະນິຣຸດຕິນັ້ນຊື່ວ່ານິຣຸດຕິປະຕິສຳພິທາ ຄວາມຮູ້ໃນຍານທັງຫຼາຍຊື່ວ່າປະຕິພານະປະຕິສຳພິທາ ນີ້ຊື່ວ່າ ປະຣິຍັດຕິວາຣະ

**ສຸດຕັນຕະພາຊະນີ ຈົບ**

# ໒. ອະພິທຳມະພາຊະນີ

## ໑. ກຸສະລະວາຣະ

[໗໔໕] ປະຕິສຳພິທາ ໔ ຄື

໑. ອັດຖະປະຕິສຳພິທາ ໒. ທຳມະປະຕິສຳພິທາ
໓. ນິຣຸດຕິປະຕິສຳພິທາ ໔. ປະຕິພານະປະຕິສຳພິທາ

ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ຄໍາວ່າ ບຸກຄົນບໍ່ຈຸຕິ ບໍ່ປະຕິສົນທິແມ່ນຕໍ່ຈາກລໍາດັບແຫ່ງວິນຍານ ໕ ອະທິບາຍວ່າ ບຸກຄົນບໍ່ຈຸຕິ ບໍ່ປະຕິສົນທິແມ່ນດ້ວຍມະໂນທາດໃນລໍາດັບຕໍ່ຈາກວິນຍານ ໕ (໔໕)

ຄໍາວ່າ ບຸກຄົນບໍ່ຫຼັບ ບໍ່ຕື່ນ ບໍ່ຝັນດ້ວຍວິນຍານ ໕ ອະທິບາຍວ່າ ບຸກຄົນບໍ່ຫຼັບ ບໍ່ຕື່ນ ບໍ່ຝັນດ້ວຍວິນຍານ ໕ (໔໖)

ຄໍາວ່າ ບຸກຄົນບໍ່ຫຼັບ ບໍ່ຕື່ນ ບໍ່ຝັນແມ່ນຕໍ່ຈາກລໍາດັບແຫ່ງວິນຍານ ໕ ອະທິບາຍ

ວ່າ ບຸກຄົນບໍ່ຫຼັບ ບໍ່ຕື່ນ ບໍ່ຝັນແມ່ນດ້ວຍມະໂນທາດໃນລໍາດັບຕໍ່ຈາກວິນຍານ ໕ (໔໗)

ຄວາມຮູ້ເລື້ອງວິນຍານ ໕ ດັ່ງກ່າວມານີ້ຊື່ວ່າ ປັນຍາທີ່ສະແດງເລື້ອງຂອງວິນຍານ ໕ ຕາມທີ່ເປັນຈິງ

ຍານະວັດຖຸໝວດລະ ໑ ມີດ້ວຍປະການດັ່ງນີ້

**ເອກກະນິດເທດ ຈົບ**

# ໒. ທຸກະນິດເທດ

[໗໖໗] ປັນຍາໃນສະພາວະທໍາທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າໂລກິຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ໂລກຸດຕະຣະປັນຍາ (໑)

ປັນຍາທັງໝົດຊື່ວ່າ ເກນະຈິວິນເຍີຍຍະປັນຍາ ແລະຊື່ວ່າ ນະເກນະຈິວິນເຍີຍຍະປັນຍາ (໒)

ປັນຍາໃນສະພາວະທໍາທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ສາສະວະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະນາສະວະປັນຍາ (໓)

ປັນຍາໃນສະພາວະທໍາທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ອາສະວະວິບປະຍຸດຕະສາສະວະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອາສະວະວິບປະຍຸດຕະອະນາສະວະປັນຍາ (໔)

ປັນຍາໃນສະພາວະທໍາທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ສັນໂຍຊະນິຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະສັນໂຍຊະນິຍະປັນຍາ (໕)

ປັນຍາໃນສະພາວະທໍາທີ່ເປັນກຸສົນແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ສັນໂຍຊະນະວິບປະຍຸດຕະສັນໂຍຊະນິຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ສັນໂຍຊະນະວິບປະຍຸດຕະອະສັນໂຍຊະນິຍະປັນຍາ (໖)

ປັນຍາໃນສະພາວະທໍາທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ຄັນຖະນິຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະຄັນຖະນິຍະປັນຍາ (໗)

ປັນຍາໃນສະພາວະທໍາທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ຄັນຖະວິບປະຍຸດຕະຄັນຖະນິຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ຄັນຖະວິບປະຍຸດຕະຄັນຖະນິຍະປັນຍາ (໘)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ໂອຄະນີຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະໂນຄະນີຍະປັນຍາ (໙)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ໂອຄະວິບປະຍຸດຕະໂອຄະນີຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ໂອຄະວິບປະຍຸດຕະອະໂນຄະນີຍະປັນຍາ (໑໐)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ໂຍຄະນີຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະໂຍຄະນີຍະປັນຍາ (໑໑)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ໂຍຄະວິບປະຍຸດຕະໂຍຄະນີຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ໂຍຄະວິບປະຍຸດຕະອະໂຍຄະນີຍະປັນຍາ (໑໔)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ນີວະຣະນີຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະນີວະຣະນີຍະປັນຍາ (໑໓)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ນີວະຣະນະ

ວິບປະຍຸດຕະນີວະຣະນີຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ນີວະຣະນະວິບປະຍຸດຕະອະນີວະຣະນີຍະປັນຍາ (໑໔)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ປະຣາມັດຖະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອຸປະຣາມັດຖະປັນຍາ (໑໕)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ປະຣາມາສະວິບປະຍຸດຕະປະຣາມັດຖະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ປະຣາມາສະວິບປະຍຸດຕະອະປະຣາມັດຖະປັນຍາ (໑໖)

ປັນຍາໃນສະພາວະທຳທີ່ເປັນວິບາກໃນພູມ ໓ ຊື່ວ່າ ອຸປາທິນນະປັນຍາ ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະກິຣິຍາໃນພູມ ໓ ແລະໃນມັກ ໔ ຜົນ ໔ ຊື່ວ່າອະນຸປາທິນນະປັນຍາ (໑໗)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ອຸປາທານີຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະນຸປາທານີຍະປັນຍາ (໑໘)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ອຸປາທານະວິບປະຍຸດຕະອຸປາທານີຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອຸປາທານະວິບປະຍຸດຕະອະນຸປາທານີຍະປັນຍາ (໑໙)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ສັງກິເລສິກະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະສັງກິເລສິກະປັນຍາ (໔໐)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ກິເລສະວິບປະຍຸດຕະສັງກິເລສິກະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ກິເລສະວິບປະຍຸດຕະສັງກິເລສິກະປັນຍາ (໔໑)

ປັນຍາທີ່ສຳປະຍຸດດ້ວຍວິຕົກຊື່ວ່າ ສະວິຕັກກະປັນຍາ ປັນຍາທີ່ວິບປະຍຸດຈາກວິຕົກຊື່ວ່າ ອະວິຕັກກະປັນຍາ (໔໔)

ປັນຍາທີ່ສຳປະຍຸດດ້ວຍວິຈານຊື່ວ່າ ສະວິຈາຣະປັນຍາ ປັນຍາທີ່ວິບປະຍຸດຈາກວິຈານຊື່ວ່າ ອະວິຈາຣະປັນຍາ (໔໓)

ປັນຍາທີ່ສຳປະຍຸດດ້ວຍປີຕິຊື່ວ່າ ສັບປີຕິກະປັນຍາ ປັນຍາທີ່ວິບປະຍຸດຈາກປີຕິຊື່ວ່າ ອັບປີຕິກະປັນຍາ (໔໔)

ປັນຍາທີ່ສຳປະຍຸດດ້ວຍປີຕິຊື່ວ່າ ປີຕິສະຫະຄະຕະປັນຍາ ປັນຍາທີ່ວິບປະຍຸດຈາກປີຕິຊື່ວ່າ ນະປີຕິສະຫະຄະຕະປັນຍາ (໔໕)

ປັນຍາທີ່ສຳປະຍຸດດ້ວຍສຸກຊື່ວ່າ ສຸຂະສະຫະຄະຕະປັນຍາ ປັນຍາທີ່ວິບປະຍຸດຈາກສຸກຊື່ວ່າ ນະສຸຂະສະຫະຄະຕະປັນຍາ (໔໖)

ປັນຍາທີ່ສຳປະຍຸດດ້ວຍອຸເປກຂາຊື່ວ່າ ອຸເປກຂາສະຫະຄະຕະປັນຍາ ປັນຍາທີ່ວິບປະຍຸດຈາກອຸເປກຂາຊື່ວ່າ ນະອຸເປກຂາສະຫະຄະຕະປັນຍາ (໔໗)

ປັນຍາໃນສະພາວະທຳທີ່ເປັນກາມາວະຈອນກຸສົນ ແລະກາມາວະຈອນອັບພະຍາກະຕະຊື່ວ່າ ກາມາວະຈະຣະປັນຍາ ປັນຍາທີ່ເປັນຣູບປາວະຈອນ ປັນຍາທີ່ເປັນອະຣູບປາວະຈອນ ປັນຍາທີ່ບໍ່ນັບເນື່ອງໃນວັດຕະທຸກຊື່ວ່າ ນະກາມາວະຈະຣະປັນຍາ (໔໘)

ປັນຍາໃນສະພາວະທຳທີ່ເປັນອະຣູບປາວະຈອນກຸສົນ ແລະຣູບປາວະຈອນອັບພະຍາກະຕະຊື່ວ່າ ຣູປາວະຈະຣະປັນຍາ ປັນຍາທີ່ເປັນກາມາວະຈອນ ປັນຍາທີ່ເປັນອະຣູບປາວະຈອນ ແລະປັນຍາທີ່ບໍ່ນັບເນື່ອງໃນວັດຕະທຸກຊື່ວ່າ ນະຣູປາວະຈະຣະປັນຍາ (໔໙)

ປັນຍາໃນສະພາວະທຳທີ່ເປັນອະຣູບປາວະຈອນກຸສົນ ແລະອະຣູບປາວະຈອນອັບພະຍາກະຕະຊື່ວ່າ ອະຣູປາວະຈອນປັນຍາ ປັນຍາທີ່ເປັນກາມາວະຈອນ ປັນຍາທີ່ເປັນອະຣູບປາວະຈອນ ແລະປັນຍາທີ່ບໍ່ນັບເນື່ອງໃນວັດຕະທຸກຊື່ວ່າ ນະອະຣູປາວະຈະຣະປັນຍາ (໕໐)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ປະຣິຍາປັນນະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະປະຣິຍາປັນນະປັນຍາ (໕໑)

ປັນຍາໃນມັກ ໔ ຊື່ວ່າ ນິຍະຍານິກະປັນຍາ ປັນຍາໃນສະພາວະທຳທີ່ເປັນກຸສົນໃນພູມ ໓ ທີ່ເປັນວິບາກໃນພູມ ໔ ແລະທີ່ເປັນອັບພະຍາກະຕະກິຣິຍາໃນພູມ ໓ ຊື່ວ່າ ອະນິຍະຍານິກະປັນຍາ (໕໔)

ປັນຍາໃນມັກ ໔ ຊື່ວ່າ ນິຍະຕະປັນຍາ ປັນຍາໃນສະພາວະທຳທີ່ເປັນກຸສົນໃນພູມ ໓ ທີ່ເປັນວິບາກໃນພູມ ໔ ແລະທີ່ເປັນອັບພະຍາກະຕະກິຣິຍາໃນພູມ ໓ ຊື່ວ່າ ອະນິຍະຕະປັນຍາ (໕໓)

ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະໃນພູມ ໓ ຊື່ວ່າ ສະອຸຕຕະຣະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະນຸດຕະຣະປັນຍາ (໓໔)

ບັນດາປັນຍາເຫຼົ່ານັ້ນ ອັດຖະຊາປິກະປັນຍາ ເປັນແນວໃດ?

ປັນຍາໃນສະພາວະທຳທີ່ເປັນກຸສົນໃນພູມ ໔ ແລະທີ່ເປັນອັບພະຍາກະຕະກິຣິຍາຂອງພຣະອະຣະຫັນຜູ້ກຳລັງກະທຳອະພິນຍາໃຫ້ເກີດຂຶ້ນ ຜູ້ກຳລັງກະທຳສະມາບັດໃຫ້ເກີດຂຶ້ນ ຊື່ວ່າ ອັດຖະຊາປິກະປັນຍາ ປັນຍາໃນສະພາວະທຳທີ່ເປັນວິບາກໃນພູມ ໔ ແລະທີ່ເປັນອັບພະຍາກະຕະກິຣິຍາຂອງພຣະອະຣະຫັນ ໃນເມື່ອອະພິນຍາ ແລະສະມາບັດເກີດຂຶ້ນແລ້ວ ຊື່ວ່າ ຊາປິຕັດຖະປັນຍາ (໓໕)

ຍານະວັດຖຸໝວດລະ ໔ ມີດ້ວຍປະການດັ່ງນີ້

**ທຸກາກະນິດເທດ ຈົບ**

## ໓. ຕິກະນິດເທດ

[ກ໗໙] ບັນດາຍານະວັດຖຸໝວດລະ ໓ ນັ້ນ ຈິນຕາມະຍະປັນຍາ ເປັນແນວໃດ?

ໃນວຽກງານທັງຫຼາຍທີ່ຕ້ອງຈັດການດ້ວຍປັນຍາ ໃນສິລະປະທັງຫຼາຍ ທີ່ຕ້ອງຈັດການດ້ວຍປັນຍາ ຫຼື ໃນວິຊາທັງຫຼາຍທີ່ຕ້ອງຈັດການດ້ວຍປັນຍາ ບຸກຄົນບໍ່ໄດ້ຟັງຈາກຜູ້ອື່ນໄດ້ ກຳມັດສະກະຕາຍານ ຫຼື ໄດ້ສັດຈານຸໂລມິກະຍານວ່າ ຮູບບໍ່ທ່ຽງ ຯລຯ ເວທະນາບໍ່ທ່ຽງ ຯລຯ ສັນຍາບໍ່ທ່ຽງ ຯລຯ ສັງຂານບໍ່ທ່ຽງ ຯລຯ ວິນຍານບໍ່ທ່ຽງດັ່ງນີ້ແດ່ ໄດ້ຄວາມສາມາດ ຄວາມຄິດອ່ານ ຄວາມພໍໃຈ ຄວາມກະຈ່າງ ຄວາມເພ່ງພິນິດ ແລະໄດ້ ປັນຍາທີ່ສາມາດໄຕ່ຕອງສະພາວະທຳອັນເໝາະສົມ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ຈິນຕາມະຍະປັນຍາ

ສຸຕະມະຍະປັນຍາ ເປັນແນວໃດ?

ໃນວຽກງານທັງຫຼາຍທີ່ຕ້ອງຈັດການດ້ວຍປັນຍາ ໃນສິລະປະທັງຫຼາຍທີ່ຕ້ອງຈັດການດ້ວຍປັນຍາໃນວິຊາທັງຫຼາຍທີ່ຕ້ອງຈັດການດ້ວຍປັນຍາ ບຸກຄົນໄດ້ຟັງຈາກຜູ້ອື່ນ ໄດ້ກຳມັດສະກະຕາຍານ ຫຼື ໄດ້ສັດຈານຸໂລມິກະຍານວ່າ ຮູບບໍ່ທ່ຽງ ຯລຯ ເວທະນາບໍ່ທ່ຽງ ຯລຯ ສັນຍາບໍ່ທ່ຽງ ຯລຯ ສັງຂານບໍ່ທ່ຽງ ຯລຯ ວິນຍານບໍ່ທ່ຽງດັ່ງນີ້ແດ່ ໄດ້ຄວາມສາມາດ ຄວາມຄິດອ່ານ ຄວາມພໍໃຈ ຄວາມກະຈ່າງ ຄວາມເພ່ງພິນິດ ແລະໄດ້ປັນຍາທີ່ສາມາດໄຕ່ຕອງສະພາວະທຳອັນເໝາະສົມ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສຸຕະມະຍະປັນຍາປັນຍາຂອງຜູ້ເຂົ້າສະມາບັດແມ່ນທັງໝົດຊື່ວ່າ ພາວະນາມະຍະປັນຍາ (໑)

[ກ໘໐] ທານະມະຍະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິຜາຣົບທານເກີດຂຶ້ນແກ່ບຸກຄົນຜູ້ໃຫ້ທານ ນີ້ຮຽກວ່າ ທານະມະຍະປັນຍາ

ສີລະມະຍະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຜາຣິບສິນເກີດຂຶ້ນແກ່ບຸກຄົນຜູ້ຮັກສາສິນ ນີ້ຮຽກວ່າ ສີລະມະຍະປັນຍາ ປັນຍາຂອງຜູ້ເຂົ້າສະມາບັດແມ່ນທັງໝົດຊື່ວ່າ ພາວະນາມະຍະປັນຍາ (໔)

[໗໗໐] ອະທິສີລະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ຜູ້ສັງລວມປາຕິໂມກສັງວອນ ນີ້ຮຽກວ່າ ອະທິສີລະປັນຍາ (໖)

ອະທິຈິດຕະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ຜູ້ເຂົ້າຣູບປາວະຈອນສະມາບັດ ແລະອະຣູບປາວະຈອນສະມາບັດ ນີ້ຮຽກວ່າ ອະທິຈິດຕະປັນຍາ

ອະທິປັນຍະປັນຍາ ເປັນແນວໃດ?

ປັນຍາໃນມັກ ໔ ຜົນ ໔ ນີ້ຮຽກວ່າ ອະທິປັນຍະປັນຍາ (໖)

[໗໗໑] ອາຍະໂກສະລະ ເປັນແນວໃດ?

ເມື່ອບຸກຄົນພິຈາລະນາທຳເຫຼົ່ານີ້ຢູ່ ທຳທີ່ເປັນອະກຸສົນເຊິ່ງຍັງບໍ່ເກີດກໍບໍ່ເກີດ ທີ່ເກີດແລ້ວກໍເສື່ອມໄປ ຫຼື ເມື່ອບຸກຄົນພິຈາລະນາທຳເຫຼົ່ານີ້ຢູ່ ທຳທີ່ເປັນກຸສົນເຊິ່ງຍັງບໍ່ເກີດກໍເກີດ ແລະທີ່ເກີດແລ້ວກໍເປັນໄປເພື່ອພິນໂຍພາບ ໄພບູນ ຈະເລີນ ບໍລິບູນ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິໃນຂໍ້ນັ້ນ ນີ້ຮຽກວ່າ ອາຍະໂກສະລະ

ອະປາຍະໂສລະ ເປັນແນວໃດ?

ເມື່ອບຸກຄົນພິຈາລະນາທຳເຫຼົ່ານີ້ຢູ່ ທຳທີ່ເປັນກຸສົນເຊິ່ງຍັງບໍ່ເກີດກໍບໍ່ເກີດ ທີ່ເກີດແລ້ວກໍດັບໄປ ຫຼື ເມື່ອບຸກຄົນພິຈາລະນາທຳເຫຼົ່ານີ້ຢູ່ ທຳທີ່ເປັນອະກຸສົນເຊິ່ງ ຍັງບໍ່ເກີດກໍເກີດ ແລະທີ່ເກີດແລ້ວກໍເປັນໄປເພື່ອພິນໂຍພາບ ໄພບູນ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິໃນຂໍ້ນັ້ນ ນີ້ຮຽກວ່າ ອະປາຍະໂກສະລະ ປັນຍາແມ່ນທັງໝົດທີ່ເປັນອຸບາຍສຳລັບແກ້ໄຂໃນເມື່ອກິດຮີບພ້າວຫຼືໄພທີ່ເກີດ ແລ້ວນັ້ນຊື່ວ່າ ອຸປາຍະໂກສະລະ (໔)

[໗໗໔] ປັນຍາໃນສະພາວະທຳທີ່ເປັນວິບາກໃນພູມ ໔ ຊື່ວ່າ ວິປາກະປັນຍາ ປັນຍາ ໃນສະພາວະທຳທີ່ເປັນກຸສົນໃນພູມ ໔ ຊື່ວ່າ ວິປາກະທຳມະທຳມະປັນຍາ ປັນຍາໃນສະພາວະທຳທີ່ເປັນອັບພະຍາກະຕະກິຣິຍາໃນພູມ ໓ ຊື່ວ່າ ເນວະວິປາກະນະວິປາກະທຳມະທຳມະປັນຍາ (໕)

[໗໗໓] ປັນຍາໃນສະພາວະທຳທີ່ເປັນວິບາກໃນພູມ ໓ ຊື່ວ່າ ອຸປາທິນນຸປາທານິຍະປັນຍາ ປັນຍາໃນສະພາວະທຳທີ່ເປັນກຸສົນໃນພູມ ໓ ແລະທີ່ເປັນອັບພະຍາກະຕະກິຣິຍາໃນພູມ ໓ ຊື່ວ່າ

ອະນຸປາທິນນຸປາທານິຍະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະນຸປາທິນນະອະນຸປາທານິຍະປັນຍາ (໖)

[໗໗໔] ປັນຍາທີ່ສຳປະຍຸດດ້ວຍວິຕົກແລະວິຈານຊື່ວ່າ ສະວິຕັກກະສະວິຈາຣະປັນຍາ ປັນຍາທີ່ວິບປະຍຸດຈາກວິຕົກ ແຕ່ສຳປະຍຸດດ້ວຍວິຈານຊື່ວ່າ ອະວິຕັກກະວິຈາຣະມັດຕະປັນຍາ ປັນຍາ ທີ່ວິບປະຍຸດຈາກວິຕົກແລະວິຈານຊື່ວ່າ ອະວິຕັກກະອະວິຈາຣະປັນຍາ (໗)

[໗໗໕] ປັນຍາທີ່ສຳປະຍຸດດ້ວຍປິຕິຊື່ວ່າ ປີຕິສະຫະຄະຕະປັນຍາ ປັນຍາທີ່ສຳປະຍຸດດ້ວຍສຸກຊື່ວ່າ ສຸຂະສະຫະຄະຕະປັນຍາ ປັນຍາທີ່ສຳປະຍຸດດ້ວຍອຸເປກຂາຊື່ວ່າ ອຸເປກຂາສະຫະຄະຕະປັນຍາ (໘)

[໗໗໖] ປັນຍາໃນສະພາວະທຳທີ່ເປັນກຸສົນໃນພູມ ໓ ຊື່ວ່າ ອາຈະຍະຄາມິນີປັນຍາ ປັນຍາໃນມັກ ໔ ຊື່ວ່າ ອະປະຈະຍະຄາມິນີປັນຍາ ປັນຍາໃນສະພາວະທຳທີ່ເປັນວິບາກໃນພູມ ໔ ແລະທີ່ເປັນອັບພະຍາກະຕະກິຣິຍາໃນພູມ ໓ ຊື່ວ່າ ເນວາຈະຍະຄາມິນາປະຈະຍະຄາມິນີປັນຍາ (໙)

[໗໗໗] ປັນຍາໃນມັກ ໔ ແລະໃນຜົນ ໓ ຊື່ວ່າ ເສກຂະປັນຍາ ປັນຍາໃນອະຣະຫັດຕະຜົນອັນເປັນຜົນເບື້ອງເທິງຊື່ວ່າ ອະເສກຂະປັນຍາ ປັນຍາໃນສະພາວະທຳທີ່ເປັນກຸສົນໃນພູມ ໓ ທີ່ເປັນວິບາກໃນພູມ ໓ ແລະທີ່ເປັນອັບພະຍາກະຕະກິຣິຍາໃນພູມ ໓ ຊື່ວ່າ ເນວະເສກຂະນາເສກຂະປັນຍາ (໑໐)

[໗໗໘] ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະເຊິ່ງເປັນກາມາວະຈອນຊື່ວ່າ ປະຣິດຕະປັນຍາ ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະເຊິ່ງເປັນຣູບປາວະຈອນແລະ ອະຣູບປາວະຈອນຊື່ວ່າ ມະຫັກຄະຕະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອັບປະມານະປັນຍາ (໑໑)

[໗໗໙] ບັນດາປັນຍາເຫຼົ່ານັ້ນ ປະຣິດຕາຣຳມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິ ຜາຣົບສະພາວະທຳທີ່ເປັນປະຣິດຕະເກີດຂຶ້ນ ນີ້ຮຽກວ່າ ປະຣິດຕາຣຳມະນະປັນຍາ (໑໘)

[໗໘໐] ມະຫັກຄະຕາຣຳມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຜາຣົບສະພາວະທຳທີ່ເປັນມະຫັກຕະເກີດຂຶ້ນ ນີ້ຮຽກວ່າ ມະຫັກຄະຕາຣຳມະນະປັນຍາ (໑໘)

[໗໘໑] ອັບປະມານາຣຳມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຜາຣົບສະພາວະທຳທີ່ເປັນອັບປະມານະເກີດຂຶ້ນ ນີ້ຮຽກວ່າ ອັບປະມານາ

## ຣຳມະນະປັນຍາ (໑໘)

[໗໙໘] ມັກຄາຣຳມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ

ສຳມາທິດຖິ ຜາຣົບອະຣິຍະມັກເກີດຂຶ້ນ ນີ້ຮຽກວ່າ ມັກຄາຣຳມະນະປັນຍາ

ປັນຍາໃນມັກ ໔ ຊື່ວ່າ ມັກຄະເຫຕຸກະປັນຍາ (໑໙)

[໗໙໑] ມັກຄາທິປະຕິນີປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ

ສຳມາທິດຖິ ກະທຳອະຣິຍະມັກໃຫ້ເປັນອະທິບໍດີເກີດຂຶ້ນ ນີ້ຮຽກວ່າ ມັກຄາທິປະຕິນີ ປັນຍາ (໑໑)

[໗໙໔] ປັນຍາໃນສະພາວະທຳທີ່ເປັນວິບາກໃນພູມ ໔ ທີ່ເກີດຂຶ້ນກໍມີ ທີ່ຈັກເກີດຂຶ້ນແນ່ນອນກໍມີ ແຕ່ກ່າວບໍ່ໄດ້ວ່າ ຍັງບໍ່ເກີດຂຶ້ນ ປັນຍາໃນສະພາວະທຳທີ່ເປັນກຸສົນໃນພູມ ໔ ແລະ ທີ່ເປັນອັບພະຍາກະຕະກິຣິຍາໃນພູມ ໑ ທີ່ເກີດຂຶ້ນກໍມີ ທີ່ຍັງບໍ່ເກີດຂຶ້ນກໍມີ ແຕ່ກ່າວບໍ່ໄດ້ວ່າ ຈັກເກີດຂຶ້ນແນ່ນອນ (໑໔)

[໗໙໕] ປັນຍາທັງໝົດທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ(໑໕)

[໗໙໖] ອະຕີຕາຣຳມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິ ຜາຣົບສະພາວະທຳທີ່ເປັນອະດີດເກີດຂຶ້ນ ນີ້ຮຽກວ່າ ອະຕີຕາຣຳມະນະປັນຍາ (໑໖)

[໗໙໗] ອະນາຄະຕາຣຳມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ

ສຳມາທິດຖິ ຜາຣົບສະພາວະທຳທີ່ເປັນອະນາຄົດເກີດຂຶ້ນ ນີ້ຮຽກວ່າ ອະນາຄະຕາຣຳມະນະປັນຍາ (໑໖)

[໗໙໙] ປັດຈຸບັນນາຣຳມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ

ສຳມາທິດຖິ ຜາຣົບສະພາວະທຳທີ່ເປັນປັດຈຸບັນເກີດຂຶ້ນ ນີ້ຮຽກວ່າ ປັດຈຸບັນນາຣຳມະນະປັນຍາ (໑໖)

[໗໙໗] ປັນຍາທັງໝົດນັ້ນ ໆ ທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນ ແລະພາຍນອກຕົນກໍມີ (໑໗)

[໗໙໐] ອັດຊັດຕາຣໍາມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທໍາ

ສໍາມາທິດຖິ ຜາຣົບສະພາວະທໍາທີ່ເປັນພາຍໃນຕົນເກີດຂຶ້ນ ນີ້ຮຽກວ່າ ອັດຊັດຕາຣໍາມະນະປັນຍາ (໑໗)

[໗໙໑] ພະຫິດທາຣໍາມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທໍາ

ສໍາມາທິດຖິ ຜາຣົບສະພາວະທໍາທີ່ເປັນພາຍນອກຕົນເກີດຂຶ້ນ ນີ້ຮຽກວ່າ ພະຫິດທາຣໍາມະນະປັນຍາ (໑໗)

[໗໙໔] ອັດຊັດຕະພາຫິດທາຣໍາມະນະປັນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທໍາ ສໍາມາທິດຖິ ຜາຣົບສະພາວະທໍາທີ່ເປັນພາຍໃນຕົນ ແລະພາຍນອກຕົນເກີດຂຶ້ນ ນີ້ຮຽກວ່າ ອັດຊັດຕະພາຫິດທາຣໍາມະນະປັນຍາ (໑໗)

ຍານະວັດຖຸໝວດລະ ໓ ມີດ້ວຍປະການດັ່ງນີ້

**ຕິກະນິດເທດ ຈົບ**

## ໔. ຈະຕຸກກະນິດເທດ

[໗໙໓] ບັນດາຍານະວັດຖຸໝວດລະ ໔ ນັ້ນ ກໍາມັດສະກະຕາຍານ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທໍາ ສໍາມາທິດຖິເຊິ່ງມີລັກສະນະວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການບວງສວງມີຜົນ ຜົນວິບາກຂອງກໍາທີ່ເຮັດດີເຮັດຊົ່ວມີຢູ່ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນບິດາມີຄຸນສັດຜູ້ເກີດຜຸດຂຶ້ນມີຢູ່ ສະມະນະພາມຜູ້ປະພຶດດີປະຕິບັດຊອບຮູ້ແຈ້ງໂລກນີ້ ແລະໂລກໜ້າ ດ້ວຍຕົນເອງແລ້ວສອນໃຫ້ຜູ້ອື່ນຮູ້ແຈ້ງມີຢູ່ໃນໂລກ" ດັ່ງນີ້ ນີ້ຮຽກວ່າ ກໍາມັດສະກະຕາຍານ ເວັ້ນສັດຈານຸໂລມິກະຍານແລ້ວ ປັນຍາທີ່ເປັນກຸສົນເຊິ່ງເປັນອາລົມຂອງອາສະວະແມ່ນທັງໝົດຊື່ວ່າ ກໍາມັດສະກະຕາຍານ

ສັດຈານຸໂລມິກະຍານ ເປັນແນວໃດ?

ຄວາມສາມາດ ຄວາມຄິດອ່ານ ຄວາມພໍໃຈ ຄວາມກະຈ່າງ ຄວາມເພ່ງພິນິດ ປັນຍາທີ່ສາມາດໄຕ່ຕອງສະພາວະທໍາອັນເໝາະສົມເຊິ່ງມີລັກສະນະຫຼືວ່າ "ຮູບບໍ່ທ່ຽງ ເວທະນາບໍ່ທ່ຽງ

ຯລຯ ສັນຍາບໍ່ທ່ຽງ ຯລຯ ສັງຂານບໍ່ທ່ຽງ ຯລຯ ຫຼື ວິນຍານ ບໍ່ທ່ຽງ" ດັ່ງນີ້ແດ່ ນີ້ຮຽກວ່າ ສັດຈານຸໂລມິກະຍານ

ປັນຍາໃນມັກ ໔ ຊື່ວ່າ ມັກຄະສະມັງຄີຍານ

ປັນຍາໃນຜົນ ໔ ຊື່ວ່າ ຜະລະສະມັງຄີຍານ (໑)

[ກຸ໗໔] ມັກຄະສະມັງຄີຍານ ໄດ້ແກ່ ຄວາມຮູ້ໃນທຸກ ຄວາມຮູ້ໃນທຸກຂະສະມຸໄທ ຄວາມຮູ້ໃນທຸກຂະນິໂຣທະ ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ

ບັນດາຄວາມຮູ້ເຫຼົ່ານັ້ນ ຄວາມຮູ້ໃນທຸກ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິຜາຣົບທຸກເກີດຂຶ້ນ ນີ້ຮຽກວ່າ ຄວາມຮູ້ໃນທຸກ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິຜາຣົບທຸກຂະສະມຸໄທ ຯລຯ ຜາຣົບທຸກຂະນິໂຣທະ ຯລຯ ຜາຣົບທຸກຂະນິໂຣທະຄາມິນີປະຕິປະທາເກີດຂຶ້ນ ນີ້ຮຽກວ່າ ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ (໔)

[ກຸ໗໕] ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະທີ່ເປັນກາມາວະຈອນຊື່ວ່າ ກາມາວະຈະຣະປັນຍາ ປັນຍາໃນສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະທີ່ເປັນອະຮູບປາວະຈອນຊື່ວ່າ ຣູປາວະຈະຣະປັນຍາ ປັນຍາໃນສະພາວະທຳທີ່ເປັນກຸສົນແລະອັບພະຍາກະຕະທີ່ເປັນອະຮູບປາວະຈອນຊື່ວ່າ ອະຣູປາວະຈະຣະປັນຍາ ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ອະປະຣິຍາປັນນະປັນຍາ (໓)

[ກຸ໗໖] ທຳມະຍານ ເປັນແນວໃດ?

ປັນຍາໃນມັກ ໔ ຜົນ ໔ ຊື່ວ່າ ທຳມະຍານ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຊົງນຳໄນຍະ (ຄືປັດຈະເວກຂະນະຍານ) ໄປໃນອະດີດແລະອະນາຄົດດ້ວຍທຳນີ້ເຊິ່ງຊົງຮູ້ ຊົງເຫັນ ຊົງບັນລຸ ຊົງຮູ້ແຈ້ງ ແລະຊົງຢັ່ງເຖິງແລ້ວວ່າໃນອະດີດຕະການ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງໄດ້ຮູ້ທຸກ ຮູ້ທຸກຂະສະມຸໄທຮູ້ທຸກຂະນິໂຣທະ ແລະຮູ້ທຸກຂະນິໂຣທະຄາມິນີປະຕິປະທາ ສະມະນະ ຫຼື ພາມເຫຼົ່ານັ້ນກໍໄດ້ຮູ້ທຸກນີ້ ຮູ້ທຸກຂະສະມຸໄທນີ້ ຮູ້ທຸກຂະນິໂຣທະນີ້ ຮູ້ທຸກຂະນິໂຣທະຄາມິນີປະຕິປະທານີ້

ໃນອະນາຄົດຕະການ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງຈັກຮູ້ທຸກ ຮູ້ທຸກຂະສະມຸໄທ ຮູ້ທຸກຂະນິໂຣທະ ຮູ້ທຸກຂະນິໂຣທະຄາມິນີປະຕິປະທາ ສະມະນະ ຫຼື ພາມເຫຼົ່ານັ້ນກໍຈັກຮູ້ທຸກນີ້ ຮູ້ທຸກຂະສະມຸໄທນີ້ ຮູ້ທຸກຂະນິໂຣທະນີ້ ຮູ້ທຸກຂະນິໂຣທະຄາມິນີປະຕິປະທານີ້

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິໃນການນຳໄນຄືປັດຈະເວກຂະນະຍານໄປນັ້ນ ນີ້ຮຽກວ່າ ອັນນະວະຍະຍານ

ປະຣິດຈະຍານ ເປັນແນວໃດ?

ພິກຂຸໃນທຳວິໄນນີ້ກຳນົດຮູ້ຈິດຂອງສັດເຫຼົ່າອື່ນ ຂອງບຸກຄົນເຫຼົ່າອື່ນດ້ວຍຈິດ ຄືຮູ້ຈິດມີຣາຄະວ່າ ຈິດມີຣາຄະ ຮູ້ຈິດປາສະຈາກຣາຄະວ່າຈິດປາສະຈາກຣາຄະ ຮູ້ຈິດມີໂທສະວ່າ ຈິດມີໂທສະ ຮູ້ຈິດປາສະຈາກໂທສະວ່າ ຈິດປາສະຈາກໂທສະ ຮູ້ຈິດມີໂມຫະວ່າຈິດມີໂມຫະ ຮູ້ຈິດປາສະຈາກໂມຫະວ່າ ຈິດປາສະຈາກໂມຫະ ຮູ້ຈິດຫົດຫູ່ວ່າ ຈິດຫົດຫູ່ ຮູ້ຈິດຟຸ້ງຊ່ານວ່າຈິດຟຸ້ງຊ່ານ ຮູ້ຈິດທີ່ເປັນມະຫັກຄະຕະວ່າ ຈິດເປັນມະຫັກຄະຕະ ຮູ້ຈິດທີ່ບໍ່ເປັນມະຫັກຄະຕະວ່າ ຈິດບໍ່ເປັນມະຫັກຄະຕະ ຮູ້ຈິດເປັນສະອຸດຕະຣະວ່າ ຈິດເປັນສະອຸດຕະຣະ ຮູ້ຈິດອະນຸດຕະຣະວ່າຈິດອະນຸດຕະຣະ ຮູ້ຈິດທີ່ເປັນສະມາທິວ່າ ຈິດເປັນສະມາທິ ຫຼືຮູ້ຈິດບໍ່ເປັນສະມາທິວ່າ ຈິດບໍ່ເປັນສະມາທິ ຮູ້ຈິດຫຼຸດພົ້ນວ່າ ຈິດຫຼຸດພົ້ນ ຫຼື ຮູ້ຈິດບໍ່ຫຼຸດພົ້ນວ່າຈິດບໍ່ຫຼຸດພົ້ນ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນຈິດຂອງສັດເຫຼົ່າອື່ນ ຂອງບຸກຄົນເຫຼົ່າອື່ນນັ້ນ ນີ້ຮຽກວ່າ ປະຣິດຈະຍານ

ເວັ້ນທຳມະຍານ ອັນນະວະຍະຍານ ປະຣິດຈະຍານແລ້ວ ປັນຍາທີ່ເຫຼືອຊື່ວ່າ ສະມະຕິຍານ (໔)

[໗໙໗] ອາຈະຍະໂນອະປະຈະຍະປັນຍາ ເປັນແນວໃດ?

ປັນຍາໃນະການາວະຈອນກຸສົນຊື່ວ່າ ອາຈະຍະໂນອະປະຈະຍະປັນຍາ ປັນຍາໃນມັກ ໔ ຊື່ວ່າ ອະປະຈະຍະໂນອາຈະຍະປັນຍາ ປັນຍາໃນະຣູບປາວະຈອນກຸສົນ ແລະອະຣູບປາວະຈອນກຸສົນຊື່ວ່າ ອາຈະຍະອະປະຈະຍະປັນຍາ ປັນຍາທີ່ເຫຼືອຊື່ວ່າ ອາຈະຍະໂນອະປະຈະຍະປັນຍາ (໕)

[໗໙໘] ນິບພິທາໂນປະຕິເວທະປັນຍາ ເປັນແນວໃດ?

ບຸກຄົນເປັນຜູ້ປາສະຈາກຣາຄະໃນການທັງຫຼາຍ ແຕ່ບໍ່ໄດ້ແທງຕະຫຼອດອະພິນຍາແລະສັດຈະທັງຫຼາຍດ້ວຍປັນຍາໃດ ນີ້ຮຽກວ່າ ນິບພິທາໂນປະຕິເວທະປັນຍາ

ບຸກຄົນນັ້ນເປັນຜູ້ປາສະຈາກຣາຄະໃນການທັງຫຼາຍນັ້ນແລໄດ້ແທງຕະຫຼອດອະພິນຍາ ແຕ່ບໍ່ໄດ້ແທງຕະຫຼອດສັດຈະທັງຫຼາຍດ້ວຍປັນຍາ ນີ້ຮຽກວ່າ ປະຕິເວທະໂນນິບພິທາປັນຍາ

ປັນຍາໃນມັກ ໔ ຊື່ວ່າ ນິບພິທາປະຕິເວທະປັນຍາ

ປັນຍາທີ່ເຫຼືອ ຊື່ວ່າ ເນວະນິບພິທາໂນປະຕິເວທະປັນຍາ (໖)

[໗໙໙] ຫານະພາຄິນີປັນຍາ ເປັນແນວໃດ?

ສັນຍາມະນະສິການທີ່ປະກອບດ້ວຍການຄອບງຳໂຍຄາວະຈອນບຸກຄົນຜູ້ໄດ້ປະຖົມຊານຊື່ວ່າ ຫານະພາຄິນີປັນຍາ ສະຕິທີ່ມີສະພາວະສົມຄວນແກ່ທຳນັ້ນຕັ້ງໝັ້ນຊື່ວ່າຖິຕິພາຄິນີປັນຍາ ສັນຍາມະນະສິການທີ່ບໍ່ປະກອບດ້ວຍວິຕົກຄອບງຳ ຯລຯ ຊື່ວ່າ ວິເສສະພາຄິນີປັນຍາ ສັນຍາມະນະສິການທີ່ປະກອບດ້ວຍນິບພິທາ ປະກອບດ້ວຍວິຣາຄະຄອບງຳ ຯລຯ ຊື່ວ່າ ນິບເພທະພາຄິນີປັນຍາ

ສັນຍາມະນະສິການທີ່ປະກອບດ້ວຍວິຕົກຄອບງຳໂຍຄາວະຈອນບຸກຄົນຜູ້ໄດ້ທຸຕິຍະຊານ ຊື່ວ່າ ຫານະພາຄິນິປັນຍາ ສະຕິທີ່ມີສະພາວະສົມຄວນແກ່ທຳນັ້ນຕັ້ງໝັ້ນ ຊື່ວ່າ ຖິຕິພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍອຸເປກຂາຄອບງຳ ຯລຯ ຊື່ວ່າ ວິເສສະພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍນິບພິທາປະກອບດ້ວຍວິຣາຄະຄອບງຳ ຯລຯ ຊື່ວ່າ ນິບເພທະພາຄິນິປັນຍາ

ສັນຍາມະນະສິການທີ່ປະກອບດ້ວຍປີຕິ ແລະສຸກຄອບງຳໂຍຄາວະຈອນບຸກຄົນຜູ້ໄດ້ຕະຕິຍະຊານ ຊື່ວ່າ ຫານະພາຄິນິປັນຍາ ສະຕິທີ່ມີສະພາວະສົມຄວນແກ່ທຳນັ້ນຕັ້ງໝັ້ນຊື່ວ່າ ຖິຕິພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍອະທຸກຂະມະສຸຂະເວທະນາຄອບງຳ ຯລຯ ຊື່ວ່າ ວິເສສະພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍນິບພິທາປະກອບດ້ວຍວິຣາຄະຄອບງຳ ຯລຯ ຊື່ວ່າ ນິບເພທະພາຄິນິປັນຍາ

ສັນຍາມະນະສິການທີ່ປະກອບດ້ວຍອຸເປກຂາຄອບງຳໂຍຄາວະຈອນບຸກຄົນຜູ້ໄດ້ຈະຕຸດຖະຊານ ຊື່ວ່າ ຫານະພາຄິນິປັນຍາ ສະຕິທີ່ມີສະພາວະສົມຄວນແກ່ທຳນັ້ນຕັ້ງໝັ້ນຊື່ວ່າ ຖິຕິພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍອາກາສານັນຈາຍະຕະນະຄອບງຳ ຯລຯ ຊື່ວ່າ ວິເສສະພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍນິບພິທາປະກອບດ້ວຍວິຣາຄະຄອບງຳ ຯລຯ ຊື່ວ່າ ນິບເພທະພາຄິນິປັນຍາ

ສັນຍາມະນະສິການທີ່ປະກອບດ້ວຍຮູບຄອບງຳໂຍຄາວະຈອນບຸກຄົນຜູ້ໄດ້ອາກາສານັນຈາຍະຕະນະ ຊື່ວ່າ ຫານະພາຄິນິປັນຍາ ສະຕິທີ່ມີສະພາວະສົມຄວນແກ່ທຳນັ້ນຕັ້ງໝັ້ນຊື່ວ່າ ຖິຕິພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍວິນຍານັນຈາຍະຕະນະຄອບງຳ ຯລຯ ຊື່ວ່າ ວິເສສະພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍນິບພິທາປະກອບດ້ວຍວິຣາຄະຄອບງຳ ຯລຯ ຊື່ວ່າ ນິບເພທະພາຄິນິປັນຍາ

ສັນຍາມະນະສິການທີ່ປະກອບດ້ວຍອາກາສານັນຈາຍະຕະນະຄອບງຳໂຍຄາວະຈອນບຸກຄົນ ຜູ້ໄດ້ວິນຍານັນຈາຍະຕະນະຊື່ວ່າ ຫານະພາຄິນິປັນຍາ ສະຕິທີ່ມີສະພາວະສົມຄວນແກ່ທຳນັ້ນ ຕັ້ງໝັ້ນຊື່ວ່າ ຖິຕິພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍອາກິນຈັນຍາຍະຕະນະຄອບງຳ ຯລຯ ຊື່ວ່າ ວິເສສະພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍນິບພິທາປະກອບດ້ວຍວິຣາຄະ ຯລຯ ຊື່ວ່າ ນິບເພທະພາຄິນິປັນຍາ

ສັນຍາມະນະສິການທີ່ປະກອບດ້ວຍວິນຍານັນຈາຍະຕະນະຄອບງຳໂຍຄາວະຈອນບຸກຄົນຜູ້ໄດ້ອາກິນຈັນຍາຍະຕະນະຊື່ວ່າ ຫານະພາຄິນິປັນຍາ ສະຕິທີ່ມີສະພາວະສົມຄວນແກ່ທຳນັ້ນຕັ້ງໝັ້ນ ຊື່ວ່າ ຖິຕິພາຄິນິປັນຍາ ສັນຍາມະນະສິການທີ່ປະກອບດ້ວຍເນວະສັນຍານາສັນຍາຍະ

ຕະນະຄອບງຳ ໆລໆ ຊື່ວ່າ ວິເສສະພາຄິນີປັນຍາ ສັນຍາມະນະສິການທີ່ປະກອບດ້ວຍນິບພິທາ ປະກອບດ້ວຍວິຣາຄະຄອບງຳ ໆລໆ ຊື່ວ່າ ນິບເພທະພາຄິນີປັນຍາ (໗)

[໗໐໐] ປະຕິສຳພິທາ ໔ ເປັນແນວໃດ?

ປະຕິສຳພິທາ ໔ ຄື

໑. ອັດຖະປະຕິສຳພິທາ (ປັນຍາແຕກສານໃນອັດຖະ)
໒. ທຳມະປະຕິສຳພິທາ (ປັນຍາແຕກສານໃນທຳ)
໓. ນິຣຸດຕິປະຕິສຳພິທາ (ປັນຍາແຕກສານໃນນິຣຸດຕິ)
໔. ປະຕິພານະປະຕິສຳພິທາ (ປັນຍາແຕກສານໃນປະຕິພານ)

ຄວາມຮູ້ໃນອັດຖະຊື່ວ່າອັດຖະປະຕິສຳພິທາ ຄວາມຮູ້ໃນທຳຊື່ວ່າທຳມະປະຕິສຳພິທາ ຄວາມຮູ້ໃນການກ່າວທຳມະນິຣຸດຕິນັ້ນຊື່ວ່ານິຣຸດຕິປະຕິສຳພິທາ ຄວາມຮູ້ໃນຍານທັງຫຼາຍຊື່ວ່າ ປະຕິພານະປະຕິສຳພິທາ

ເຫຼົ່ານີ້ຊື່ວ່າປະຕິສຳພິທາ (໗)

[໗໐໑] ປະຕິປະທາ ໔ ເປັນແນວໃດ?

ປະຕິປະທາ ໔ ຄື

໑. ປັນຍາທີ່ເປັນທຸກຂາປະຕິປະທາທັນທາພິນຍາ (ປະຕິບັດລຳບາກທັງຮູ້ໄດ້ຊ້າ)
໒. ປັນຍາທີ່ເປັນທຸກຂາປະຕິປະທາຂິບປາພິນຍາ (ປະຕິບັດລຳບາກແຕ່ຮູ້ໄດ້ໄວ)
໓. ປັນຍາທີ່ເປັນສຸຂາປະຕິປະທາທັນທາພິນຍາ (ປະຕິບັດສະດວກແຕ່ຮູ້ໄດ້ຊ້າ)
໔. ປັນຍາທີ່ເປັນສຸຂາປະຕິປະທາຂິບປາພິນຍາ (ປະຕິບັດສະດວກທັງຮູ້ໄດ້ໄວ)

ບັນດາປະຕິປະທາ ໔ ເຫຼົ່ານັ້ນ ປັນຍາທີ່ເປັນທຸກຂາປະຕິປະທາທັນທາພິນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ໆລໆ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ໂຍຄາວະຈອນບຸກຄົນຜູ້ກະທຳສະມາທິໃຫ້ເກີດຂຶ້ນໂດຍຍາກໂດຍລຳບາກທັງຮູ້ຖານະນັ້ນຊ້າ ນີ້ຮຽກວ່າ ປັນຍາທີ່ເປັນທຸກຂາປະຕິປະທາທັນທາພິນຍາ

ປັນຍາທີ່ເປັນທຸກຂາປະຕິປະທາຂິບປາພິນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ໆລໆ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ໂຍຄາວະຈອນບຸກຄົນຜູ້ທຳສະມາທິໃຫ້ເກີດຂຶ້ນໂດຍຍາກໂດຍລຳບາກ ແຕ່ຮູ້ຖານະນັ້ນໄດ້ໄວ ນີ້ຮຽກວ່າ ປັນຍາທີ່ເປັນທຸກຂາປະຕິປະທາຂິບປາພິນຍາ

ປັນຍາທີ່ເປັນສຸຂາປະຕິປະທາທັນທາພິນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ໂຍຄາວະຈອນບຸກຄົນຜູ້ກະທຳສະມາທິໃຫ້ເກີດຂຶ້ນໂດຍບໍ່ຍາກ ໂດຍບໍ່ລຳບາກ ແຕ່ຮູ້ຖານະນັ້ນຊ້າ ນີ້ຮຽກວ່າ ປັນຍາທີ່ເປັນສຸຂາປະຕິປະທາທັນທາພິນຍາ

ປັນຍາທີ່ເປັນສຸຂາປະຕິປະທາຂິບປາພິນຍາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ໂຍຄາວະຈອນບຸກຄົນຜູ້ກະທຳສະມາທິໃຫ້ເກີດຂຶ້ນໂດຍບໍ່ຍາກ ໂດຍບໍ່ລຳບາກ ທັງຮູ້ຖານະນັ້ນໄວ ນີ້ຮຽກວ່າ ປັນຍາທີ່ເປັນສຸຂາປະຕິປະທາຂິບປາພິນຍາ

ເຫຼົ່ານີ້ຊື່ວ່າປະຕິປະທາ ໔ (໗)

[໗໐໔] ອາຣົາມະນະປັນຍາ ໔ ເປັນແນວໃດ?

ອາຣົາມະນະປັນຍາ ໔ ຄື

໑. ປັນຍາທີ່ເປັນປະຣິດຕະ ແລະມີປະຣິດຕະເປັນອາລົມ

໒. ປັນຍາທີ່ເປັນປະຣິດຕະແຕ່ມີອັບປະມານະເປັນອາລົມ

໓. ປັນຍາທີ່ເປັນອັບປະມານະແຕ່ມີປະຣິດຕະເປັນອາລົມ

໔. ປັນຍາທີ່ເປັນອັບປະມານະແລະມີອັບປະມານະເປັນອາລົມ

ບັນດາອາຣົາມະນະປັນຍາ ໔ ນັ້ນ ປັນຍາທີ່ເປັນປະຣິດຕະແລະມີປະຣິດຕະເປັນອາລົມ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ໂຍຄາວະຈອນບຸກຄົນຜູ້ໄດ້ສະມາທິທີ່ຍັງບໍ່ຊຳນານຄ່ອງແຄ້ວ ແຜ່ອາລົມໄປໄດ້ເລັກໜ້ອຍ ນີ້ຮຽກວ່າ ປັນຍາທີ່ເປັນປະຣິດຕະ ແລະມີປະຣິດຕະເປັນອາລົມ

ປັນຍາທີ່ເປັນປະຣິດຕະແຕ່ມີອັບປະມານະເປັນອາລົມ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ໂຍຄາວະຈອນບຸກຄົນຜູ້ໄດ້ສະມາທິທີ່ຍັງບໍ່ຊຳນານຄ່ອງແຄ້ວ ແຜ່ອາລົມໄປໄດ້ກວ້າງຂວາງຈົນຫາປະມານບໍ່ໄດ້ ນີ້ຮຽກວ່າ ປັນຍາທີ່ເປັນປະຣິດຕະແຕ່ມີອັບປະມານະເປັນອາລົມ

ປັນຍາທີ່ເປັນອັບປະມານະແຕ່ມີປະຣິດຕະເປັນອາລົມ ເປັນແນວໃດ?

ປັນຍາກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ໂຍຄາວະຈອນບຸກຄົນຜູ້ໄດ້ສະມາທິທີ່ຊຳນານຄ່ອງແຄ້ວ ແຜ່ອາລົມໄປໄດ້ເລັກໜ້ອຍ ນີ້ຮຽກວ່າ ປັນຍາທີ່ເປັນອັບປະມານະແຕ່ມີປະຣິດຕະເປັນອາລົມ

ປັນຍາທີ່ເປັນອັບປະມານະແລະມີອັບປະມານະເປັນອາລົມ ເປັນແນວໃດ?

ປັນຍາກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ເກີດຂຶ້ນແກ່ໂຍຄາວະຈອນບຸກຄົນຜູ້ໄດ້ສະມາທິທີ່ຊຳນານຄ່ອງແຄ້ວ ແຜ່ອາລົມໄປໄດ້ກວ້າງຂວາງຈົນຫາປະມານບໍ່ໄດ້ ນີ້ຮຽກວ່າ ປັນຍາທີ່ເປັນອັບປະມານະແລະມີອັບປະມານະ ເປັນອາລົມ
ເຫຼົ່ານີ້ຮຽກວ່າ ອາຣົາມະນະປັນຍາ ໔ (໑໐)

ມັກຄະສະມັງຄີຍານ ໄດ້ແກ່ ນີ້ຄວາມຮູ້ໃນຊະຣາມໍຣະນະ ນີ້ຄວາມຮູ້ໃນຊະຣາມໍຣະນະສະມຸໄທ

ນີ້ຄວາມຮູ້ໃນຊະຣາມໍຣະນະນິໂຣດ ນີ້ຄວາມຮູ້ໃນຊະຣາມໍຣະນະນິໂຣທະຄາມິນີປະຕິປະທາ

ຄວາມຮູ້ໃນຊະຣາມໍຣະນະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິ ຜາຣົບຊະຣາມໍຣະນະເກີດຂຶ້ນ ນີ້ຮຽກວ່າ ຄວາມຮູ້ໃນຊະຣາມໍຣະນະ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິ ຜາຣົບຊະຣາມໍຣະນະສະມຸໄທເກີດຂຶ້ນ ນີ້ຮຽກວ່າ ຄວາມຮູ້ໃນຊະຣາມໍຣະນະສະມຸໄທ ຯລຯ ຜາຣົບ ຊະຣາມໍຣະນະນິໂຣດເກີດຂຶ້ນ ນີ້ຮຽກວ່າ ຄວາມຮູ້ໃນຊະຣາມໍຣະນະນິໂຣດ ຯລຯ ຜາຣົບ ຊະຣາມໍຣະນະນິໂຣທະຄາມິນີປະຕິປະທາເກີດຂຶ້ນ ນີ້ຮຽກວ່າ ຄວາມຮູ້ໃນຊະຣາມໍຣະນະນິໂຣທະຄາມິນີປະຕິປະທາ (໑໑)

[໗໐໓] ມັກຄະສະມັງຄີຍານ ໄດ້ແກ່ ຄວາມຮູ້ໃນຊາດ ຯລຯ ຄວາມຮູ້ໃນພົບ ຯລຯ ຄວາມຮູ້ໃນອຸປາທານ ຯລຯ ຄວາມຮູ້ໃນຕັນຫາ ຯລຯ ຄວາມຮູ້ໃນເວທະນາ ຯລຯ ຄວາມຮູ້ ໃນຜັດສະ ຯລຯ ຄວາມຮູ້ໃນສະລາຍະຕະນະ ຯລຯ ຄວາມຮູ້ໃນນາມ ຯລຯ ຄວາມຮູ້ໃນວິນຍານ ຯລຯ ຄວາມຮູ້ໃນສັງຂານ ຯລຯ ຄວາມຮູ້ໃນສັງຂານສະມຸໄທ ຄວາມຮູ້ໃນສັງຂານນິໂຣດ ແລະຄວາມຮູ້ໃນສັງຂານນິໂຣທະຄາມິນີປະຕິປະທາ (໑໔-໔໑)

ບັນດາຄວາມຮູ້ເຫຼົ່ານັ້ນ ຄວາມຮູ້ໃນສັງຂານ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຜາຣົບສັງຂານທັງຫຼາຍເກີດຂຶ້ນ ນີ້ຮຽກວ່າ ຄວາມຮູ້ໃນສັງຂານ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ຜາຣົບສັງຂານສະມຸໄທ ຯລຯ ຜາຣົບສັງຂານນິໂຣດ ຯລຯ ຜາຣົບສັງຂານນິໂຣທະຄາມິນີປະຕິປະທາເກີດຂຶ້ນ ນີ້ຮຽກວ່າ ຄວາມຮູ້ໃນສັງຂານນິໂຣທະຄາມິນີປະຕິປະທາ (໔໔-໔໔)

ຍານະວັດຖຸໝວດລະ ໔ ມີດ້ວຍປະການດັ່ງນີ້

**ຈະຕຸກກະນິດເທດ ຈົບ**

# ໕. ປັນຈະກະນິດເທດ

[໗໐໔] ບັນດາຍານະວັດຖຸໝວດລະ ໕ ນັ້ນ ສຳມາສະມາທິມີອົງ ໕ ເປັນແນວໃດ?

ປັນຍາທີ່ແຜ່ປີຕິໄປ ປັນຍາທີ່ແຜ່ສຸກໄປ ປັນຍາທີ່ແຜ່ຈິດໄປ ປັນຍາທີ່ແຜ່ແສງສະຫວ່າງໄປ ແລະປັດຈະເວກຂະນະນິມິດ (ປັດຈະເວກຂະນະຍານ)

ປັນຍາໃນຊານ ໒ ຊື່ວ່າ ປັນຍາທີ່ແຜ່ປີຕິໄປ ປັນຍາໃນຊານ ໓ ຊື່ວ່າ ປັນຍາ ທີ່ແຜ່ສຸກໄປ ຍານໃນການກຳນົດຮູ້ຈິດຂອງຜູ້ອື່ນຊື່ວ່າ ປັນຍາທີ່ແຜ່ຈິດໄປ ທິບພະຈັກຂຸ ຊື່ວ່າ ປັນຍາທີ່ແຜ່ແສງສະຫວ່າງໄປ ປັດຈະເວກຂະນະຍານຂອງໂຍຄາວະຈອນບຸກຄົນຜູ້ອອກຈາກສະມາທິນັ້ນ ໆ ຊື່ວ່າ ປັດຈະເວກຂະນະນິມິດ ນີ້ຮຽກວ່າ ສຳມາສະມາທິມີອົງ ໕ (໑)

ສຳມາສະມາທິມີຍານ ໕ ເປັນແນວໃດ?

ຍານເກີດຂຶ້ນສະເພາະຕົນວ່າ ສະມາທິນີ້ມີສຸກໃນປັດຈຸບັນ ແລະມີສຸກເປັນວິບາກໃນອະນາຄົດ ຍານເກີດຂຶ້ນສະເພາະຕົນວ່າ ສະມາທິນີ້ໄກຈາກກິເລດ ຫາອາມິດບໍ່ໄດ້ ຍານເກີດຂຶ້ນສະເພາະຕົນວ່າ ສະມາທິນີ້ອັນບຸຣຸດຜູ້ມີປັນຍາຊາມເສບບໍ່ໄດ້ ຍານເກີດຂຶ້ນສະເພາະຕົນວ່າ ສະມາທິນີ້ສະງົບປະນີດ ໄດ້ຄວາມສະງົບຣະງັບ ໄດ້ບັນລຸແລ້ວໂດຍຄວາມເປັນທຳເອກຜຸດຂຶ້ນ ແລະບໍ່ໄດ້ບັນລຸໂດຍການຂົ່ມນິວອນ ຫ້າມກິເລດດ້ວຍຈິດທີ່ເປັນສະສັງຂາຣິກ ຍານເກີດຂຶ້ນສະເພາະຕົນວ່າ ກໍເຮົານັ້ນແລມີສະຕິເຂົ້າສະມາທິນີ້ ມີສະຕິອອກຈາກສະມາທິນີ້ ນີ້ຮຽກວ່າ ສຳມາສະມາທິມີຍານ ໕ (໒)

ຍານະວັດຖຸໝວດລະ ໕ ມີດ້ວຍປະການດັ່ງນີ້

**ປັນຈະກະນິດເທດ ຈົບ**

# ໖. ສັກກະນິດເທດ

[໗໐໕] ບັນດາຍານະວັດຖຸໝວດລະ ໖ ນັ້ນ ປັນຍາໃນອະພິນຍາ ໖ ເປັນແນວໃດ?

ປັນຍາໃນອະພິນຍາ ໖ ຄື

| | |
|---|---|
| ໑. ອິດທິວິທະຍານ | (ຄວາມຮູ້ທີ່ເຮັດໃຫ້ສະແດງລິດຕ່າງ ໆ ໄດ້) |
| ໒. ໂສຕະທາດວິສຸດທິຍານ | (ຄວາມຮູ້ທີ່ເຮັດໃຫ້ມີຫູທິບ) |
| ໓. ປະຣະຈິດຕະຍານ | (ຄວາມຮູ້ທີ່ເຮັດໃຫ້ຮູ້ໃຈຜູ້ອື່ນ) |
| ໔. ປຸບເພນິວາສານຸດສະຕິຍານ | (ຄວາມຮູ້ທີ່ເຮັດໃຫ້ຣະລຶກຊາດໄດ້) |
| ໕. ຈຸຕູປະປາຕະຍານ | (ຄວາມຮູ້ການຈຸຕິແລະເກີດ) |

ຜ. ອາສະວັກຂະຍະຍານ (ຄວາມຮູ້ທີ່ເຮັດໃຫ້ອາສະວະສິ້ນໄປ)

ເຫຼົ່ານີ້ຊື່ວ່າປັນຍາໃນອະພິນຍາ ຜ

ຍານະວັດຖຸໝວດລະ ຜ ມີດ້ວຍປະການດັ່ງນີ້ (໑)

# ໗. ສັດຕະກະນິດເທດ

[໘໐໖] ໃນຍານະວັດຖຸໝວດລະ ໗ ນັ້ນ ຍານະວັດຖຸ ໗໗ ເປັນແນວໃດ?

ຄວາມຮູ້ວ່າ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ເມື່ອຊາດບໍ່ມີ ກໍຮູ້ວ່າຊະຣາມໍຣະນະບໍ່ມີ

ແມ່ນໃນອະດີດຕະການ ຄວາມຮູ້ວ່າ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ເມື່ອຊາດບໍ່ມີ ກໍຮູ້ວ່າຊະຣາມໍຣະນະບໍ່ມີ

ແມ່ນໃນອະນາຄົດຕະການ ຄວາມຮູ້ວ່າ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະຈຶ່ງມີ ເມື່ອຊາດບໍ່ມີ ກໍຮູ້ວ່າຊະຣາມໍຣະນະບໍ່ມີ ຄວາມຮູ້ວ່າ ແມ່ນທຳມະຖິຕິຍານຂອງບຸກຄົນນັ້ນກໍມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ ຄວາມຮູ້ວ່າ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຯລຯ ຄວາມຮູ້ວ່າ ຍ້ອນອຸປາທານ ເປັນປັດໄຈ ພົບຈຶ່ງມີ ຯລຯ ຄວາມຮູ້ວ່າ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຯລຯ ຄວາມຮູ້ວ່າ ຍ້ອນເວທະນາເປັນປັດໄຈ ຕັນຫາ ຈຶ່ງມີ ຯລຯ ຄວາມຮູ້ວ່າ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຯລຯ ຄວາມຮູ້ວ່າ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ຯລຯ ຄວາມຮູ້ວ່າ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ຯລຯ ຄວາມຮູ້ວ່າ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ຯລຯ ຄວາມຮູ້ວ່າ ຍ້ອນສັງຂານເປັນປັດໄຈ ວິນຍານຈຶ່ງມີ ຯລຯ ຄວາມຮູ້ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ເມື່ອອະວິດຊາບໍ່ມີ ກໍຮູ້ວ່າສັງຂານບໍ່ມີ

ແມ່ນໃນອະດີດຕະການ ຄວາມຮູ້ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຄວາມຮູ້ວ່າ ເມື່ອອະວິດຊາບໍ່ມີ ສັງຂານກໍບໍ່ມີ

ແມ່ນໃນອະນາຄົດຕະການ ຄວາມຮູ້ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຄວາມຮູ້ວ່າ ເມື່ອອະວິດຊາບໍ່ມີ ກໍຮູ້ວ່າສັງຂານບໍ່ມີ ຄວາມຮູ້ວ່າ ແມ່ນທຳມະຖິຕິຍານຂອງບຸກຄົນນັ້ນກໍມີຄວາມ ສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ ເຫຼົ່ານີ້ຊື່ວ່າ ຍານະວັດຖຸ ໗໗[1]

ຍານະວັດຖຸໝວດລະ ໗ ມີດ້ວຍປະການດັ່ງນີ້ (໑)

# ໗. ອັດຖະກະນິດເທດ

[໗໐໗] ບັນດາຍານະວັດຖຸໝວດລະ ໗ ນັ້ນ ປັນຍາໃນມັກ ໔ ຜົນ ໔ ເປັນແນວໃດ?
ປັນຍາໃນມັກ ໔ ຜົນ ໔ ຄື

໑. ປັນຍາໃນໂສດາປັດຕິມັກ
໒. ປັນຍາໃນໂສດາປັດຕິຜົນ
໓. ປັນຍາໃນສະກະທາຄາມິມັກ
໔. ປັນຍາໃນສະກະທາຄາມິຜົນ
໕. ປັນຍາໃນອະນາຄາມິມັກ
໖. ປັນຍາໃນອະນາຄາມິຜົນ
໗. ປັນຍາໃນອະຣະຫັດຕະມັກ
໘. ປັນຍາໃນອະຣະຫັດຕະຜົນ

ເຫຼົ່ານີ້ຊື່ວ່າປັນຍາໃນມັກ ໔ ຜົນ ໔
ຍານະວັດຖຸໝວດລະ ໗ ມີດ້ວຍປະການດັ່ງນີ້ (໑)

# ໙. ນະວະກະນິດເທດ

[໗໐໘] ບັນດາຍານະວັດຖຸໝວດລະ ໙ ນັ້ນ ປັນຍາໃນອະນຸປຸບພະວິຫາຣະສະມາບັດ ໙ ເປັນແນວໃດ?

ປັນຍາໃນອະນຸປຸບພະວິຫາຣະສະມາບັດ ໙ ຄື

໑. ປັນຍາໃນປະຖົມຊານສະມາບັດ
໒. ປັນຍາໃນທຸຕິຍະຊານສະມາບັດ
໓. ປັນຍາໃນຕະຕິຍະຊານສະມາບັດ
໔. ປັນຍາໃນຈະຕຸດຖະຊານະສະມາບັດ
໕. ປັນຍາໃນອາກາສານັນຈາຍະຕະນະສະມາບັດ
໖. ປັນຍາໃນວິນຍານັນຈາຍະຕະນະສະມາບັດ
໗. ປັນຍາໃນອາກິນຈັນຍາຍະຕະນະສະມາບັດ
໘. ປັນຍາໃນເນວະສັນຍານາສັນຍາຍະຕະນະສະມາບັດ
໙. ປັດຈະເວກຂະນະຍານຂອງໂຍຄາວະຈອນບຸກຄົນຜູ້ອອກຈາກສັນຍາເວທະຍິຕະນິໂຣທະສະມາບັດເຫຼົ່ານີ້ຊື່ວ່າ ປັນຍາໃນອະນຸປຸບພະວິຫາຣະສະມາບັດ ໙

ຍານະວັດຖຸໝວດລະ ໙ ມີດ້ວຍປະການດັ່ງນີ້ (໑)

# ໑໐. ທະສະກະນິດເທດ

## ໑. ຖານາຖານະຍານ

### (ປັຊາຢັ່ງຮູ້ຖານະແລະອະຖານະ)

[໗໐໙] ບັນດາຍານະວັດຖຸໝວດລະ ໑໐ ນັ້ນ ພຣະຕະຖາຄົດຊົງຮູ້ທຳທີ່ເປັນຖານະໂດຍຄວາມເປັນຖານະ ແລະທຳທີ່ບໍ່ເປັນຖານະໂດຍຄວາມບໍ່ເປັນຖານະຕາມຄວາມເປັນຈິງເປັນແນວໃດ?

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ໂສດາບັນເຖິງພ້ອມດ້ວຍມັກຄະທິດຖິ ຈະເພິ່ງຢຶດຖືສັງຂານອັນໃດ ໆ ໂດຍຄວາມເປັນສະພາວະທີ່ທ່ຽງ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ປຸຖຸຊົນຈະເພິ່ງຢຶດຖືສັງຂານອັນໃດ ໆ ໂດຍຄວາມເປັນສະພາວະທີ່ທ່ຽງ ນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ໂສດາບັນເຖິງພ້ອມດ້ວຍມັກຄະທິດຖິຈະເພິ່ງຢຶດຖືສັງຂານອັນໃດ ໆ ໂດຍຄວາມເປັນສະພາວະທີ່ເປັນສຸກ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ປຸຖຸຊົນຈະເພິ່ງຢຶດຖືສັງຂານອັນໃດ ໆ ໂດຍຄວາມເປັນສະພາວະທີ່ເປັນສຸກ ນີ້ແລເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ໂສດາບັນເຖິງພ້ອມດ້ວຍມັກຄະທິດຖິຈະເພິ່ງຢຶດຖືທຳອັນໃດ ໆ ໂດຍຄວາມເປັນສະພາວະທີ່ເປັນຕົວຕົນ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ປຸຖຸຊົນຈະເພິ່ງຢຶດຖືທຳອັນໃດ ໆ ໂດຍຄວາມເປັນສະພາວະທີ່ເປັນຕົວຕົນນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ໂສດາບັນເຖິງພ້ອມດ້ວຍມັກຄະທິດຖິຈະເພິ່ງຂ້າມານດາ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ປຸຖຸຊົນ ຈະເພິ່ງຂ້າມານດານີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ໂສດາບັນເຖິງພ້ອມດ້ວຍມັກຄະທິດຖິຈະເພິ່ງຂ້າບິດາ ฯລฯ ຂ້າພຣະອະຣະຫັນ ฯລฯ ມີຈິດຄິດປະທຸດສະຮ້າຍເຮັດພຣະໂລຫິດຂອງພຣະຕະຖາຄົດໃຫ້ຫໍ້ຂຶ້ນ ฯລฯ ທຳສົງໃຫ້ແຕກກັນ ฯລฯ ນັບຖືສາດສະດາອື່ນ ฯລฯ ບັງເກີດໃນພົບທີ ໘ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ປຸຖຸຊົນຈະເພິ່ງບັງເກີດໃນພົບທີ ໘ ນີ້ແລເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ໒ ພຣະອົງຈະເພິ່ງອຸບັດຂຶ້ນພ້ອມ ໆ ກັນໃນໂລກກະທາດອັນດຽວກັນ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ພຣະອະຣະຫັນຕະສຳມາສຳພຸດທະເຈົ້າຈະເພິ່ງອຸບັດຂຶ້ນພຣະອົງດຽວໃນໂລກກະທາດດຽວ ນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ພຣະເຈົ້າຈັກກະພັດ ໒ ອົງຈະເພິ່ງອຸບັດຂຶ້ນ ພ້ອມ ໆ ກັນໃນໂລກກະທາດອັນດຽວກັນ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ພຣະເຈົ້າຈັກກະພັດຈະເພິ່ງອຸບັດຂຶ້ນພຣະອົງດຽວໃນໂລກກະທາດດຽວນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ສະຕີຈະເພິ່ງເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ບຸຣຸດຈະເພິ່ງເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າໄດ້ນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ສະຕີຈະເພິ່ງເປັນພຣະເຈົ້າຈັກກະພັດ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ບຸຣຸດຈະເພິ່ງເປັນພຣະເຈົ້າຈັກກະພັດ ນີ້ແລເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ສະຕີຈະເພິ່ງເກີດເປັນພຣະອິນເປັນມານ ເປັນພົມ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ບຸຣຸດຈະເພິ່ງເກີດເປັນພຣະອິນເປັນມານ ເປັນພົມ ນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ກາຍທຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ກາຍທຸດຈະຣິດຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ນີ້ແລເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ວະຈີທຸດຈະຣິດ ຯລຯ ມະໂນທຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ວະຈີທຸດຈະຣິດ ຯລຯ ມະໂນທຸດຈະຣິດຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ກາຍສຸດຈະຣິດຈະເພິ່ງເກີດຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ກາຍ

ສຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ວະຈີສຸດຈະຣິດ ໆລໆ ມະໂນສຸດຈະຣິດຈະເພິ່ງເກີດຜົນ ທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ວະຈີສຸດຈະຣິດ ໆລໆ ມະໂນສຸດຈະຣິດຈະເພິ່ງເກີດຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍກາຍທຸດຈະຣິດ ຫຼັງຈາກຕາຍແລ້ວຈະເພິ່ງເຂົ້າເຖິງສຸຄະຕິໂລກສະຫວັນ ຍ້ອນກາຍທຸດຈະຣິດນັ້ນເປັນເຫດເປັນປັດໄຈ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍກາຍທຸດຈະຣິດ ຫຼັງຈາກຕາຍແລ້ວຈະເພິ່ງເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນກາຍທຸດຈະຣິດນັ້ນເປັນເຫດເປັນປັດໄຈນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍວະຈີທຸດຈະຣິດ ໆລໆ ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈະເພິ່ງເຂົ້າເຖິງສຸຄະຕິໂລກສະຫວັນ ຍ້ອນວະຈີທຸດຈະຣິດແລະມະໂນທຸດຈະຣິດນັ້ນເປັນເຫດເປັນປັດໄຈ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍວະຈີທຸດຈະຣິດ ໆລໆ ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍມະໂນທຸດຈະຣິດ ຫຼັງຈາກຕາຍແລ້ວຈະເພິ່ງເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນວະຈີທຸດຈະຣິດແລະມະໂນທຸດຈະຣິດນັ້ນເປັນເຫດເປັນປັດໄຈນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍກາຍສຸດຈະຣິດ ຫຼັງຈາກຕາຍແລ້ວຈະເພິ່ງເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນກາຍສຸດຈະຣິດນັ້ນເປັນເຫດເປັນປັດໄຈ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ພຣະອົງຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍກາຍສຸດຈະຣິດ ຫຼັງຈາກຕາຍແລ້ວຈະເພິ່ງເຂົ້າເຖິງສຸຄະຕິໂລກສະຫວັນ ຍ້ອນກາຍສຸດຈະຣິດນັ້ນເປັນເຫດເປັນປັດໄຈນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍວະຈີສຸດຈະຣິດ ໆລໆ ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍມະໂນສຸດຈະຣິດຫຼັງຈາກຕາຍແລ້ວ ຈະເພິ່ງເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດ ນະຮົກ ຍ້ອນວະຈີສຸດຈະຣິດ ແລະມະໂນສຸດຈະຣິດນັ້ນເປັນເຫດເປັນປັດໄຈ ນີ້ບໍ່ແມ່ນຖານະບໍ່ແມ່ນໂອກາດທີ່ຈະມີໄດ້ ຄືພຣະອົງຊົງຮູ້ວ່າ ຂໍ້ທີ່ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍວະຈີສຸດຈະຣິດ ໆລໆ ບຸກຄົນຜູ້ມີຄວາມພຽບພ້ອມດ້ວຍມະໂນສຸດຈະຣິດ

ຫຼັງຈາກຕາຍແລ້ວຈະເພິ່ງເຂົ້າເຖິງສຸຄະຕິໂລກສະຫວັນ ຍ້ອນວະຈີສຸດຈະຣິດແລະມະໂນສຸດຈະຣິດນັ້ນເປັນເຫດເປັນປັດໄຈນີ້ແລ ເປັນຖານະທີ່ມີໄດ້ເປັນໄດ້

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ສະພາວະທຳໃດ ໆ ເປັນເຫດເປັນປັດໄຈໃຫ້ສະພາວະທຳໃດ ໆ ເກີດຂຶ້ນ ສະພາວະທຳນັ້ນ ໆ ເປັນຖານະ ສະພາວະທຳໃດ ໆ ບໍ່ເປັນເຫດບໍ່ເປັນປັດໄຈໃຫ້ສະພາວະທຳໃດ ໆ ເກີດຂຶ້ນ ສະພາວະທຳນັ້ນ ໆ ບໍ່ເປັນຖານະ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງ ຄວາມໄຈ້ແຍກທຳ ສຳມາທິດຖິໃນສະພາວະທຳ ທີ່ເປັນຖານະແລະສະພາວະທຳທີ່ບໍ່ເປັນຖານະເຫຼົ່ານັ້ນ ນີ້ຊື່ວ່າ ພຣະຕະຖາຄົດຊົງຮູ້ ສະພາວະທຳທີ່ເປັນຖານະໂດຍຄວາມເປັນຖານະ ແລະສະພາວະທຳທີ່ບໍ່ເປັນຖານະໂດຍຄວາມບໍ່ເປັນຖານະຕາມຄວາມເປັນຈິງ (໑)

## ໒. ກຳມະວິປາກະຍານ

### (ປັຊາຢັ່ງຮູ້ຜົນຂອງກຳ)

[໗໑໐] ພຣະຕະຖາຄົດຊົງຮູ້ຜົນຂອງກຳສະມາທານທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນຕາມຄວາມເປັນຈິງ ໂດຍຖານະ ໂດຍເຫດ ເປັນແນວໃດ?

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ກຳສະມາທານທີ່ເປັນບາບບາງຢ່າງອັນຄະຕິສົມບັດຫ້າມໄວ້ຈຶ່ງບໍ່ໃຫ້ຜົນກໍມີ ກຳສະມາທານທີ່ເປັນບາບບາງຢ່າງອັນອຸປະທິສົມບັດຫ້າມໄວ້ ຈຶ່ງບໍ່ໃຫ້ຜົນກໍມີ ກຳສະມາທານທີ່ເປັນບາບບາງຢ່າງອັນການສົມບັດຫ້າມໄວ້ຈຶ່ງບໍ່ໃຫ້ຜົນກໍມີ ກຳສະມາທານທີ່ເປັນບາບບາງຢ່າງອັນປະໂຍຄະສົມບັດຫ້າມໄວ້ຈຶ່ງບໍ່ໃຫ້ຜົນກໍມີ

ກຳສະມາທານທີ່ເປັນບາບບາງຢ່າງອາໄສຄະຕິວິບັດຈຶ່ງໃຫ້ຜົນກໍມີ ກຳສະມາທານທີ່ເປັນບາບບາງຢ່າງອາໄສອຸປະທິວິບັດຈຶ່ງໃຫ້ຜົນກໍມີ ກຳສະມາທານທີ່ເປັນບາບບາງຢ່າງອາໄສ ການວິບັດຈຶ່ງໃຫ້ຜົນກໍມີ ກຳສະມາທານທີ່ເປັນບາບບາງຢ່າງອາໄສປະໂຍຄະວິບັດຈຶ່ງໃຫ້ຜົນກໍມີ

ກຳສະມາທານທີ່ເປັນບຸນບາງຢ່າງອັນຄະຕິວິບັດຫ້າມໄວ້ຈຶ່ງບໍ່ໃຫ້ຜົນກໍມີ ກຳສະມາທານທີ່ເປັນບຸນບາງຢ່າງອັນອຸປະທິວິບັດຫ້າມໄວ້ຈຶ່ງບໍ່ໃຫ້ຜົນກໍມີ ກຳສະມາທານທີ່ເປັນບຸນບາງຢ່າງອັນການວິບັດຫ້າມໄວ້ຈຶ່ງບໍ່ໃຫ້ຜົນກໍມີ ກຳສະມາທານທີ່ເປັນບຸນບາງຢ່າງອັນປະໂຍຄະວິບັດຫ້າມໄວ້ຈຶ່ງບໍ່ໃຫ້ຜົນກໍມີ

ກຳສະມາທານທີ່ເປັນບຸນບາງຢ່າງອາໄສຄະຕິສົມບັດຈຶ່ງໃຫ້ຜົນກໍມີ ກຳສະມາທານທີ່ເປັນບຸນບາງຢ່າງອາໄສອຸປະທິສົມບັດຈຶ່ງໃຫ້ຜົນກໍມີ ກຳສະມາທານທີ່ເປັນບຸນບາງຢ່າງອາໄສການສົມບັດຈຶ່ງໃຫ້ຜົນກໍມີ ກຳສະມາທານທີ່ເປັນບຸນບາງຢ່າງອາໄສປະໂຍຄະສົມບັດຈຶ່ງໃຫ້ຜົນກໍມີ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິໃນກຳສະມາທານນັ້ນ ນີ້ຊື່ ພຣະຕະຖາຄົດຊົງຮູ້ວິບາກຂອງກຳສະມາທານທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນຕາມຄວາມເປັນຈິງໂດຍຖານະ ໂດຍເຫດ (໔)

## ໓. ສັບພັດຖະຄາມິນີປະຕິປະທາຍານ

### (ປັຊາຢັ່ງຮູ້ທາງທີ່ຈະນຳໄປສູ່ພູມທັງປວງ)

[໗໑໑] ພຣະຕະຖາຄົດຊົງຮູ້ທາງໄປສູ່ພູມທັງປວງຕາມຄວາມເປັນຈິງ ເປັນແນວໃດ?

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ທາງນີ້ ປະຕິປະທານີ້ ໃຫ້ໄປສູ່ນະຣົກ ຊົງຮູ້ວ່າ ທາງນີ້ ປະຕິປະທານີ້ ໃຫ້ໄປສູ່ກຳເນີດສັດເດຍຣັດສານ ຊົງຮູ້ວ່າ ທາງນີ້ ປະຕິປະທານີ້ພາໃຫ້ໄປສູ່ວິໄສແຫ່ງເຜດ ຊົງຮູ້ວ່າ ທາງນີ້ ປະຕິປະທານີ້ພາໃຫ້ໄປສູ່ມະນຸດໂລກ ຊົງຮູ້ວ່າ ທາງນີ້ ປະຕິປະທານີ້ພາໃຫ້ໄປສູ່ເທວະໂລກ ຊົງຮູ້ວ່າ ທາງນີ້ ປະຕິປະທານີ້ພາໃຫ້ໄປສູ່ນິບພານ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິໃນທາງໄປສູ່ພູມທັງປວງນັ້ນ ນີ້ຊື່ວ່າ ພຣະຕະຖາຄົດຊົງຮູ້ທາງໄປສູ່ພູມທັງປວງຕາມຄວາມເປັນຈິງ (໓)

## ໔. ນານາທາຕຸຍານະ

### (ປັຊາຢັ່ງຮູ້ສັດທີ່ມີທາດແຕກຕ່າງກັນ)

[໗໑໔] ພຣະຕະຖາຄົດຊົງຮູ້ໂລກທີ່ເປັນອະເນກທາດ ແລະນານາທາດຕາມຄວາມເປັນຈິງເປັນແນວໃດ?

ພຣະຕະຖາຄົດໃນໂລກນີ້ຊົງຮູ້ຄວາມເປັນຕ່າງ ໆ ກັນແຫ່ງຂັນ ຊົງຮູ້ຄວາມເປັນ ຕ່າງ ໆ ກັນແຫ່ງອາຍະຕະນະ ຊົງຮູ້ຄວາມເປັນຕ່າງ ໆ ກັນແຫ່ງທາດ ຊົງຮູ້ຄວາມເປັນຕ່າງ ໆ ກັນແຫ່ງໂລກທີ່ເປັນອະເນກທາດແລະທີ່ເປັນນານາທາດ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິໃນໂລກທີ່ເປັນອະເນກທາດ ແລະທີ່ເປັນນານາທາດນັ້ນ ນີ້ຊື່ວ່າ ພຣະຕະຖາຄົດຊົງຮູ້ໂລກ ທີ່ເປັນອະເນກທາດ ແລະທີ່ເປັນນານາທາດຕາມຄວາມເປັນຈິງ (໔)

## ໕. ນານາທິມຸດຕິກະຍານ

### (ປັນຍາຢັ່ງຮູ້ສັດທີ່ມີອັດທະຍາໄສແຕກຕ່າງກັນ)

[໗໑໓] ພຣະຕະຖາຄົດຊົງຮູ້ຄວາມທີ່ສັດທັງຫຼາຍເປັນຜູ້ມີອັດທະຍາໄສຕ່າງ ໆ ກັນຕາມຄວາມເປັນຈິງ ເປັນແນວໃດ?

ພຣະຕະຖາຄົດໃນໂລກນີ້ຊົງຮູ້ວ່າ ສັດທັງຫຼາຍທີ່ມີອັດທະຍາໄສຊາມກໍມີ ສັດທັງຫຼາຍທີ່ມີອັດທະຍາໄສປະນີດກໍມີ ເຫຼົ່າສັດທີ່ມີອັດທະຍາໄສຊາມຍ່ອມຄົບຫາສະມາຄົມເຂົ້າໄປຫາເລື້ອຍ ໆ ເຊິ່ງເຫຼົ່າສັດທີ່ມີອັດທະຍາໄສຊາມ ເຫຼົ່າສັດທີ່ມີອັດທະຍາໄສປະນີດກໍຄົບຫາສະມາຄົມເຂົ້າຫາເລື້ອຍ ໆ ເຊິ່ງເຫຼົ່າສັດທີ່ມີອັດທະຍາໄສປະນີດ

ແມ່ນແຕ່ໃນອະດີດຕະການ ສັດທັງຫຼາຍທີ່ມີອັດທະຍາໄສຊາມໄດ້ຄົບຫາສະມາຄົມເຂົ້າຫາເລື້ອຍ ໆ ເຊິ່ງເຫຼົ່າສັດຜູ້ມີອັດທະຍາໄສຊາມມາແລ້ວ ສັດທັງຫຼາຍທີ່ມີອັດທະຍາໄສປະນີດກໍໄດ້ຄົບຫາສະມາຄົມເຂົ້າຫາເລື້ອຍ ໆ ເຊິ່ງເຫຼົ່າສັດທີ່ມີອັດທະຍາໄສປະນີດມາແລ້ວ

ແມ່ນໃນອະນາຄົດຕະການ ສັດທັງຫຼາຍທີ່ມີອັດທະຍາໄສຊາມ ກໍຈັກຄົບຫາສະມາຄົມເຂົ້າຫາເລື້ອຍ ໆ ເຊິ່ງເຫຼົ່າສັດທີ່ມີອັດທະຍາໄສຊາມ ສັດທັງຫຼາຍທີ່ມີອັດທະຍາໄສປະນີດກໍຈັກຄົບຫາສະມາຄົມເຂົ້າຫາເລື້ອຍ ໆ ເຊິ່ງເຫຼົ່າສັດທີ່ມີອັດທະຍາໄສປະນີດ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິໃນຄວາມທີ່ສັດທັງຫຼາຍ ມີອັດທະຍາໄສຕ່າງ ໆ ກັນນັ້ນ ນີ້ຊື່ວ່າ ພຣະຕະຖາຄົດຊົງຮູ້ຄວາມທີ່ສັດທັງຫຼາຍມີອັດທະຍາໄສຕ່າງ ໆ ກັນຕາມຄວາມເປັນຈິງ (໕)

## ໖. ອິນທະຣິຍະປະໂຣປະຣິຍັດຕິຍານ

### (ປັນຍາຢັ່ງຮູ້ສັດທີ່ມີອິນຊີແກ່ກ້າ ແລະບໍ່ແກ່ກ້າ)

[໗໑໔] (໖) ພຣະຕະຖາຄົດຊົງຮູ້ຄວາມແກ່ກ້າ ແລະບໍ່ແກ່ກ້າແຫ່ງອິນຊີຂອງສັດເຫຼົ່າອື່ນຂອງບຸກຄົນເຫຼົ່າອື່ນຕາມຄວາມເປັນຈິງ ເປັນແນວໃດ?

ພຣະຕະຖາຄົດໃນໂລກນີ້ຊົງຮູ້ອາສະຍະ ອະນຸໄສ ຈະຣິດ ອະທິມຸດຕິຂອງສັດທັງຫຼາຍຊົງຮູ້ສັດທັງຫຼາຍຜູ້ມີທຸລີຄືກິເລດໜ້ອຍ ມີທຸລີຄືກິເລດຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊົ່ວ ແນະນຳໃຫ້ເຂົ້າໃຈໄດ້ງ່າຍ ແນະນຳໃຫ້ເຂົ້າໃຈໄດ້ຍາກ ຄວນບັນລຸທຳ ແລະບໍ່ຄວນບັນລຸທຳ

[໗໑໕] ອາສະຍະຂອງສັດທັງຫຼາຍ ເປັນແນວໃດ?

ຄວາມເຫັນວ່າ ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີບ່ອນສຸດ ໂລກບໍ່ມີບ່ອນສຸດ ຊີວະເປັນຢ່າງໜຶ່ງ ສະຣີຣະກໍເປັນອີກຢ່າງໜຶ່ງ ຊີວະກັບສະຣີຣະເປັນຢ່າງດຽວກັນ ຊີວະກັບສະຣີຣະເປັນ ຄົນລະຢ່າງກັນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍແມ່ນ ຈະວ່າບໍ່ເກີດອີກກໍແມ່ນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ສັດທັງຫຼາຍຜູ້ອາໄສພະວະທິດຖິ ຫຼື ວິພະວະທິດຖິດັ່ງກ່າວມານີ້ ຫຼື ສັດທັງຫຼາຍຜູ້ບໍ່ເຂົ້າໄປອາໄສບ່ອນສຸດທັງ ໔ ນີ້ ໄດ້ອະນຸໂລມິກະຂັນຕິ ໃນສະພາວະທຳທັງຫຼາຍທີ່ເປັນປັດໄຈຂອງກັນແລະກັນ ແລະອາໄສກັນແລະກັນເກີດຂຶ້ນກໍມີ ຍານຮູ້ຕາມຄວາມເປັນຈິງ ນີ້ຊື່ວ່າ ອາສະຍະຂອງສັດທັງຫຼາຍ

[໗໑໖] ອະນຸໄສຂອງສັດທັງຫຼາຍ ເປັນແນວໃດ?

ອະນຸໄສ ໗ ຄື

໑. ກາມະຣາຄານຸໄສ (ອະນຸໄສຄືກາມຣາຄະ)
໒. ປະຕິຄານຸໄສ (ອະນຸໄສຄືປະຕິຄະ)
໓. ມານານຸໄສ (ອະນຸໄສຄືມານະ)
໔. ທິດຖານຸໄສ (ອະນຸໄສຄືທິດຖິ)
໕. ວິຈິກິດສານຸໄສ (ອະນຸໄສຄືວິຈິກິດສາ)
໖. ພະວະຣາຄານຸໄສ (ອະນຸໄສຄືພາວະຣາຄະ)
໗. ອະວິດຊານຸໄສ (ອະນຸໄສຄືອະວິດຊາ)

ຣາຄານຸໄສຂອງສັດທັງຫຼາຍ ຍ່ອມນອນເນື່ອງຢູ່ໃນປິຍະຣູບສາຕະຣູບ ໃນໂລກປະຕິຄານຸໄສ ຂອງສັດທັງຫຼາຍຍ່ອມນອນເນື່ອງຢູ່ໃນອັບປິຍະຣູບອະສາຕະຣູປະໃນໂລກອະວິດຊາຕົກໄປໃນສະພາວະທຳທັງ ໒ ນີ້ ດ້ວຍອາການແນວນີ້ ມານະ ທິດຖິ ແລະວິຈິກິດສາ ເພິ່ງເຫັນວ່າຕັ້ງຢູ່ໃນຖານະແຫ່ງດຽວກັນກັບອະວິດຊານັ້ນ ນີ້ຊື່ວ່າ ອະນຸໄສຂອງສັດທັງຫຼາຍ

[໗໑໗] ຈະຣິດຂອງສັດທັງຫຼາຍ ເປັນແນວໃດ?

ປຸນຍາພິສັງຂານ (ສະພາບທີ່ປຸງແຕ່ງກຳຝ່າຍດີ) ອະປຸນຍາພິສັງຂານ (ສະພາບທີ່ ປຸງແຕ່ງກຳຝ່າຍຊົ່ວ) ອາເນນຊາພິສັງຂານ (ສະພາບທີ່ປຸງແຕ່ງພົບອັນໝັ້ນຄົງ) ທີ່ເປັນກາມາວະຈອນພູມ ຫຼື ທີ່ເປັນຣູບປາວະຈອນພູມແລະອະຣູບປາວະຈອນພູມ ນີ້ຊື່ວ່າ ຈະຣິດຂອງສັດທັງຫຼາຍ

[໗໑໘] ອັດທະຍາໄສຂອງສັດທັງຫຼາຍ ເປັນແນວໃດ?

ສັດທັງຫຼາຍທີ່ມີອັດທະຍາໄສຊາມກໍມີ ສັດທັງຫຼາຍທີ່ມີອັດທະຍາໄສປະນີດກໍມີ ເຫຼົ່າສັດທີ່ມີອັດທະຍາໄສຊາມຍ່ອມຄົບຫາສະມາຄົມເຂົ້າໄປຫາເຫຼົ່າສັດທີ່ມີອັດທະຍາໄສຊາມ ເຫຼົ່າສັດທີ່ມີອັດທະຍາໄສປະນີດກໍຍ່ອມຄົບຫາສະມາຄົມເຂົ້າໄປຫາເຫຼົ່າສັດທີ່ມີອັດທະຍາໄສປະນີດ

ແມ່ນໃນອະດີດຕະການ ສັດທັງຫຼາຍທີ່ມີອັດທະຍາໄສຊາມກໍໄດ້ຄົບຫາສະມາຄົມເຂົ້າໄປຫາ ເຫຼົ່າສັດທີ່ມີອັດທະຍາໄສຊາມມາແລ້ວ ສັດທັງຫຼາຍທີ່ມີອັດທະຍາໄສປະນີດກໍໄດ້ຄົບຫາສະມາຄົມເຂົ້າໄປຫາເຫຼົ່າສັດທີ່ມີອັດທະຍາໄສປະນີດມາແລ້ວ

ແມ່ນໃນອະນາຄົດຕະການ ສັດທັງຫຼາຍທີ່ມີອັດທະຍາໄສຊາມກໍຈັກຄົບຫາສະມາຄົມເຂົ້າໄປຫາເຫຼົ່າສັດທີ່ມີອັດທະຍາໄສຊາມ ສັດທັງຫຼາຍທີ່ມີອັດທະຍາໄສປະນີດກໍຈັກຄົບຫາສະມາຄົມເຂົ້າໄປຫາເຫຼົ່າສັດທີ່ມີອັດທະຍາໄສປະນີດ ນີ້ຊື່ວ່າ ອັດທະຍາໄສຂອງສັດທັງຫຼາຍ

[໗໑໙] ສັດທັງຫຼາຍທີ່ມີທຸລີຄືກິເລດໃນປັນຍາຈັກຂຸຫຼາຍເຫຼົ່ານັ້ນເປັນແນວໃດ?
ກິເລດວັດຖຸ ໑໐ ຄື

| | |
|---|---|
| ໑. ໂລພະ (ຄວາມຢາກໄດ້) | ໒. ໂທສະ (ຄວາມຄິດປະທຸດສະຮ້າຍ) |
| ໓. ໂມຫະ (ຄວາມຫຼົງ) | ໔. ມານະ (ຄວາມຖືຕົວ) |
| ໕. ທິດຖິ (ຄວາມເຫັນຜິດ) | ໖. ວິຈິກິດສາ (ຄວາມລັງເລສົງໄສ) |
| ໗. ຖີນະ (ຄວາມທໍ້ແທ້) | ໘. ອຸດທັດຈະ (ຄວາມຟຸ້ງຊ່ານ) |
| ໙. ອະຫິຣິກະ (ຄວາມບໍ່ລະອາຍ) | ໑໐. ອະໂນດຕັບປະ (ຄວາມບໍ່ເກງກົວ) |

ກິເລດວັດຖຸ ໑໐ ເຫຼົ່ານີ້ອັນສັດເຫຼົ່າໃດສ້ອງເສບຈະເລີນ ເຮັດໃຫ້ຫຼາຍເພີ່ມພູນຂຶ້ນແລ້ວ ສັດເຫຼົ່ານີ້ນັ້ນຊື່ວ່າ ຜູ້ມີທຸລີຄືກິເລດໃນປັນຍາຈັກຂຸຫຼາຍ

[໗໒໐] ສັດທັງຫຼາຍທີ່ມີທຸລີ ຄື ກິເລດໃນປັນຍາຈັກຂຸໜ້ອຍ ເຫຼົ່ານັ້ນເປັນແນວໃດ?
ກິເລດວັດຖຸ ໑໐ ເຫຼົ່ານີ້ສັດເຫຼົ່າໃດບໍ່ສ້ອງເສບ ບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍ ບໍ່ເພີ່ມພູນຂຶ້ນແລ້ວ ສັດເຫຼົ່ານີ້ນັ້ນຊື່ວ່າມີທຸລີ ຄື ກິເລດໃນປັນຍາຈັກຂຸໜ້ອຍ

[໗໒໑] ສັດທັງຫຼາຍທີ່ມີອິນຊີອ່ອນ ເຫຼົ່ານັ້ນເປັນແນວໃດ?
ອິນຊີ ໕ ຄື

| | |
|---|---|
| ໑. ສັດທິນຊີ (ອິນຊີ ຄື ສັດທາ) | ໒. ວິຣິຍິນຊີ (ອິນຊີ ຄື ວິຣິຍະ) |
| ໓. ສະຕິນຊີ (ອິນຊີ ຄື ສະຕິ) | ໔. ສະມາທິນຊີ (ອິນຊີ ຄື ສະມາທິ) |
| ໕. ປັນຍິນຊີ (ອິນຊີ ຄື ປັນຍາ) | |

ອິນຊີ ໕ ເຫຼົ່ານີ້ອັນສັດເຫຼົ່າໃດບໍ່ສ້ອງເສບ ບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍ ບໍ່ເຮັດໃຫ້ເພີ່ມພູນຂຶ້ນແລ້ວ ສັດເຫຼົ່ານີ້ນັ້ນຊື່ວ່າ ຜູ້ມີອິນຊີອ່ອນ

[໘໔໔] ສັດທັງຫຼາຍທີ່ມີອິນຊີແກ່ກ້າ ເຫຼົ່ານັ້ນເປັນແນວໃດ?

ອິນຊີ ໕ ເຫຼົ່ານີ້ອັນສັດເຫຼົ່າໃດສ້ອງເສບ ຈະເລີນ ເຮັດໃຫ້ຫຼາຍ ເພີ່ມພູນຂຶ້ນແລ້ວ ສັດເຫຼົ່ານີ້ນັ້ນຊື່ວ່າ ຜູ້ມີອິນຊີແກ່ກ້າ

[໘໔໓] ສັດທັງຫຼາຍຜູ້ມີອາການຊົ່ວ ເຫຼົ່ານັ້ນເປັນແນວໃດ?

ສັດເຫຼົ່ານັ້ນໃດມີອາສະວະຊົ່ວ ມີອະນຸໄສຊົ່ວ ມີຈະຣິດຊົ່ວ ມີອັດທະຍາໄສຊົ່ວ ມີທຸລິຄືກິເລດໃນປັນຍາຈັກຂຸຫຼາຍ ມີອິນຊີອ່ອນ ສັດເຫຼົ່ານີ້ນັ້ນຊື່ວ່າຜູ້ມີອາການຊົ່ວ

[໘໔໔] ສັດທັງຫຼາຍຜູ້ມີອາການດີ ເຫຼົ່ານັ້ນເປັນແນວໃດ?

ສັດເຫຼົ່ານັ້ນໃດທີ່ມີອາສະຍະດີ ມີຈະຣິດດີ ມີອັດທະຍາໄສດີ ມີທຸລິຄືກິເລດໃນປັນຍາຈັກຂຸໜ້ອຍ ມີອິນຊີແກ່ກ້າ ສັດເຫຼົ່ານັ້ນນີ້ຊື່ວ່າ ຜູ້ມີອາການດີ

[໘໔໕] ສັດທັງຫຼາຍຜູ້ທີ່ແນະນຳໃຫ້ເຂົ້າໃຈໄດ້ຍາກ ເຫຼົ່ານັ້ນເປັນແນວໃດ?

ກໍສັດເຫຼົ່າໃດມີອາການຊົ່ວ ສັດເຫຼົ່ານັ້ນແລຊື່ວ່າ ຜູ້ແນະນຳໃຫ້ເຂົ້າໃຈໄດ້ຍາກ ສ່ວນສັດເຫຼົ່າໃດມີອາການດີ ສັດເຫຼົ່ານັ້ນແລຊື່ວ່າຜູ້ແນະນຳໃຫ້ເຂົ້າໃຈໄດ້ງ່າຍ

[໘໔໖] ສັດທັງຫຼາຍຜູ້ບໍ່ຄວນບັນລຸທຳ ເຫຼົ່ານັ້ນເປັນແນວໃດ?

ສັດເຫຼົ່ານັ້ນໃດປະກອບດ້ວຍເຄື່ອງກາງກັ້ນຄືກຳ ປະກອບດ້ວຍເຄື່ອງກາງກັ້ນ ຄືກິເລດປະກອບດ້ວຍເຄື່ອງກາງກັ້ນຄືວິບາກ ເປັນຜູ້ບໍ່ມີສັດທາ ບໍ່ມີສັນທະ ມີປັນຍາຊາມ ບໍ່ຄວນທີ່ຈະຢັ່ງລົງສູ່ມັກຄື ສຳມັດຕະນິຍາມໃນສະພາວະທຳທີ່ເປັນກຸສົນທັງຫຼາຍ ສັດເຫຼົ່ານີ້ນັ້ນຊື່ວ່າຜູ້ບໍ່ຄວນບັນລຸທຳ

[໘໔໗] ສັດທັງຫຼາຍຜູ້ຄວນບັນລຸທຳ ເຫຼົ່ານັ້ນເປັນແນວໃດ?

ສັດເຫຼົ່ານັ້ນໃດບໍ່ປະກອບດ້ວຍເຄື່ອງກາງກັ້ນຄືກຳ ບໍ່ປະກອບດ້ວຍເຄື່ອງກາງກັ້ນຄືກິເລດບໍ່ປະກອບດ້ວຍເຄື່ອງກາງກັ້ນຄືວິບາກ ມີສັດທາ ມີສັນທະ ມີປັນຍາ ຄວນທີ່ຈະຢັ່ງລົງສູ່ມັກຄືສຳມັດຕະນິຍາມໃນສະພາວະທຳທີ່ເປັນກຸສົນທັງຫຼາຍ ສັດເຫຼົ່ານີ້ນັ້ນຊື່ວ່າ ຜູ້ຄວນບັນລຸທຳ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິໃນຄວາມແກ່ກ້າ ແລະບໍ່ແກ່ກ້າແຫ່ງອິນຊີຂອງສັດທັງຫຼາຍນັ້ນ ນີ້ຊື່ວ່າພຣະຕະຖາຄົດຊົງຮູ້ຄວາມແກ່ກ້າ ແລະບໍ່ແກ່ກ້າແຫ່ງອິນຊີຂອງສັດເຫຼົ່າອື່ນຂອງບຸກຄົນເຫຼົ່າອື່ນຕາມຄວາມເປັນຈິງ (໖)

## ໗. ຊານາທິສັງກິເລສາທິຍານ

### (ປັຊາຢັ່ງຮູ້ຄວາມເສົ້າໝອງ ຜ່ອງແຜ້ວແລະການອອກຈາກຊານເປັນຕົ້ນຕາມເປັນຈິງ)

[໗໔໗] ພຣະຕະຖາຊົງຊົງຮູ້ຄວາມເສົ້າໝອງ ຄວາມຜ່ອງແຜ້ວ ແຫ່ງຊານ ວິໂມກ ສະມາທິ ສະມາບັດ ແລະຄວາມອອກຈາກຊານເປັນຕົ້ນນັ້ນຕາມຄວາມເປັນຈິງ ເປັນແນວໃດ?

ໂຍຄາວະຈອນບຸກຄົນຜູ້ຈະເລີນຊານ ໔ ຈຳພວກຊື່ວ່າຊາຍີ ຄື ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນສຳຄັນຊານທີ່ຕົນໄດ້ແລ້ວນັ້ນຜິດຈາກວ່າຍັງບໍ່ໄດ້ກໍມີ ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນສຳຄັນຊານທີ່ຕົນຍັງບໍ່ໄດ້ນັ້ນຜິດໄປວ່າໄດ້ແລ້ວກໍມີ ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນສຳຄັນຊານທີ່ຕົນໄດ້ແລ້ວນັ້ນວ່າໄດ້ແລ້ວກໍມີ ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນສຳຄັນຊານທີ່ຕົນຍັງບໍ່ໄດ້ນັ້ນວ່າຍັງບໍ່ໄດ້ກໍມີ ເຫຼົ່ານີ້ຊື່ວ່າໂຍຄາວະຈອນບຸກຄົນຜູ້ຈະເລີນຊານ ໔ ຈຳພວກ

ໂຍຄາວະຈອນບຸກຄົນຜູ້ຈະເລີນຊານອີກ ໔ ຈຳພວກ ຄື ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນເຂົ້າຊານໄດ້ຊ້າແຕ່ອອກໄດ້ໄວກໍມີ ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນເຂົ້າຊານໄວແຕ່ອອກຊ້າກໍມີ ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນເຂົ້າຊານໄດ້ຊ້າແລະອອກຊ້າກໍມີ ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນເຂົ້າຊານໄດ້ໄວແລະອອກໄດ້ໄວກໍມີ ເຫຼົ່ານີ້ຊື່ວ່າ ໂຍຄາວະຈອນບຸກຄົນ ໔ ຈຳພວກ

ໂຍຄາວະຈອນບຸກຄົນຜູ້ຈະເລີນຊານອີກ ໔ ຈຳພວກ ຄື ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນເປັນຜູ້ສະຫຼາດໃນການກຳນົດສະມາທິໃນສະມາທິ ແຕ່ບໍ່ສະຫຼາດໃນການກຳນົດສະມາບັດໃນສະມາທິກໍມີ ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນເປັນຜູ້ສະຫຼາດໃນການກຳນົດສະມາບັດໃນສະມາທິ ແຕ່ບໍ່ສະຫຼາດໃນການກຳນົດສະມາທິໃນສະມາທິກໍມີ ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນເປັນຜູ້ສະຫຼາດໃນການກຳນົດສະມາທິໃນສະມາທິແລະສະຫຼາດໃນການກຳນົດສະມາບັດໃນສະມາທິກໍມີ ໂຍຄາວະຈອນບຸກຄົນຜູ້ຈະເລີນຊານບາງຄົນເປັນຜູ້ບໍ່ສະຫຼາດໃນການກຳນົດສະມາທິໃນສະມາທິ ບໍ່ສະຫຼາດໃນການກຳນົດສະມາບັດໃນສະມາທິກໍມີ ເຫຼົ່ານີ້ຊື່ວ່າໂຍຄາວະຈອນບຸກຄົນຜູ້ຈະເລີນຊານ ໔ ຈຳພວກ

ຄຳວ່າ ຊານ ໄດ້ແກ່ ຊານ ໔ ຄື ປະຖົມຊານ ທຸຕິຍະຊານ ຕະຕິຍະຊານ ຈະຕຸດຖະຊານ

ຄຳວ່າ ວິໂມກ ໄດ້ແກ່ ວິໂມກ ໗ ຄື ໂຍຄາວະຈອນບຸກຄົນຜູ້ໄດ້ຮູບຊານໂດຍກະທຳບໍຣິກຳໃນຮູບພາຍໃນຕົນຍ່ອມເຫັນຮູບທັງຫຼາຍ ນີ້ຊື່ວ່າ ວິໂມກຂໍ້ທີ ໑

ໂຍຄາວະຈອນບຸກຄົນຜູ້ໄດ້ອະຮູປະຊານໂດຍກະທຳບໍຣິກຳໃນຮູບພາຍໃນຕົນຍ່ອມເຫັນຮູບທັງຫຼາຍ ໃນພາຍນອກຕົນ ນີ້ຊື່ວ່າ ວິໂມກຂໍ້ທີ ໔

ໂຍຄາວະຈອນບຸກຄົນເປັນຜູ້ນ້ອມຈິດໄປວ່າ ງາມແທ້ ນີ້ຊື່ວ່າວິໂມກຂໍ້ທີ ໓

ຍ້ອນກ້າວລ່ວງຮູບສັນຍາໄດ້ໂດຍປະການທັງປວງ ຍ້ອນຄວາມດັບໄປແຫ່ງປະຕິຄະສັນຍາ ແລະຍ້ອນບໍ່ໄດ້ມະນະສິການເຊິ່ງນານັດຕະສັນຍາ ໂຍຄາວະຈອນບຸກຄົນຈຶ່ງບັນລຸອາກາສານັນຈາຍະຕະນະຊານ ໂດຍບໍຣິກຳວ່າ ອາກາດບໍ່ມີບ່ອນສຸດດັ່ງນີ້ຢູ່ ນີ້ຊື່ວ່າວິໂມກຂໍ້ທີ ໔

ຍ້ອນກ້າວລ່ວງອາກາສານັນຈາຍະຕະນະໄດ້ໂດຍປະການທັງປວງ ໂຍຄາວະຈອນບຸກຄົນຈຶ່ງບັນລຸວິນຍານັນຈາຍະຕະນະຊານ ໂດຍບໍຣິກຳວ່າ ວິນຍານບໍ່ມີບ່ອນສຸດ ດັ່ງນີ້ຢູ່ ນີ້ຊື່ວ່າວິໂມກຂໍ້ທີ ໕

ຍ້ອນກ້າວລ່ວງວິນຍານັນຈາຍະຕະນະໄດ້ໂດຍປະການທັງປວງ ໂຍຄາວະຈອນບຸກຄົນຈຶ່ງບັນລຸອາກິນຈັນຍາຍະຕະນະຊານ ໂດຍບໍຣິກຳວ່າອັນໃດ ໆ ກໍບໍ່ມີ ດັ່ງນີ້ຢູ່ ນີ້ຊື່ວ່າວິໂມກ ຂໍ້ທີ ໖

ຍ້ອນກ້າວລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ໂຍຄາວະຈອນບຸກຄົນຈຶ່ງບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ຊື່ວ່າ ວິໂມກຂໍ້ທີ ໗

ຍ້ອນກ້າວລ່ວງເນວະສັນຍານາສັນຍາຍະຕະນະໄດ້ໂດຍປະການທັງປວງ ໂຍຄາວະຈອນບຸກຄົນຈຶ່ງບັນລຸສັນຍາເວທະຍິຕະນິໂຣດຢູ່ ນີ້ຊື່ວ່າວິໂມກຂໍ້ທີ ໘

ຄຳວ່າ ສະມາທິ ໄດ້ແກ່ ສະມາທິ ໓ ຄື

໑. ສະວິຕັກກະສະວິຈາຣະສະມາທິ (ສະມາທິທີ່ມີທັງວິຕົກແລະວິຈານ)
໒. ອະວິຕັກກະວິຈາຣະປັດຕະສະມາທິ (ສະມາທິທີ່ບໍ່ມີວິຕົກມີພຽງວິຈານ)
໓. ອະວິຕັກກະອະວິຈາຣະສະມາທິ (ສະມາທິທີ່ບໍ່ມີທັງວິຕົກແລະວິຈານ)

ຄຳວ່າ ສະມາບັດ ໄດ້ແກ່ ອະນຸປຸບພະວິຫາຣະສະມາບັດ ໙ ຄື

໑. ປະຖົມຊານສະມາບັດ
໒. ທຸຕິຍະຊານສະມາບັດ
໓. ຕະຕິຍະຊານສະມາບັດ
໔. ຈະຕຸດຖະຊານສະມາບັດ
໕. ອາກາສານັນຈາຍະຕະນະສະມາບັດ
໖. ວິນຍານັນຈາຍະຕະນະສະມາບັດ
໗. ອາກິນຈັນຍາຍະຕະນະສະມາບັດ
໘. ເນວະສັນຍານາສັນຍາຍະຕະນະສະມາບັດ
໙. ສັນຍາເວທະຍິຕະນິໂຣທະສະມາບັດ

ບົດວ່າ ຄວາມເສົ້າໝອງ ໄດ້ແກ່ ສະພາວະທຳທີ່ເປັນຝ່າຍເສື່ອມ

ບົດວ່າ ຄວາມຜ່ອງແຜ້ວ ໄດ້ແກ່ ສະພາວະທຳທີ່ເປັນຝ່າຍຄຸນວິເສສະ

ບົດວ່າ ຄວາມອອກ ໄດ້ແກ່ ແມ່ນຄວາມຜ່ອງແຜ້ວ ກໍຊື່ວ່າຄວາມອອກ ແມ່ນຄວາມອອກຈາກສະມາທິນັ້ນ ໆ ກໍຊື່ວ່າ ຄວາມອອກ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິໃນຄວາມເສົ້າໝອງ ຄວາມຜ່ອງແຜ້ວ ຄວາມອອກຈາກຊານ ນີ້ຊື່ວ່າ ພຣະຕະຖາຄົດ ຊົງຮູ້ຄວາມເສົ້າໝອງ ຄວາມຜ່ອງແຜ້ວ ແຫ່ງຊານ ວິໂມກ ສະມາທິ ສະມາບັດ ແລະຄວາມອອກຈາກຊານເປັນຕົ້ນນັ້ນຕາມຄວາມເປັນຈິງ (໗)

## ໘. ປຸບເພນິວາສະນານຸດສະຕິຍານ

## (ປັຊາຢັ່ງຮູ້ເຮັດໃຫ້ຣະລຶກພົບທີ່ເຄີຍຢູ່ໃນຫົນຫຼັງໄດ້)

[໘໔໙] ພຣະຕະຖາຄົດຊົງຮູ້ການຣະລຶກຊາດໃນຫົນຫຼັງຕາມຄວາມເປັນຈິງ ເປັນແນວໃດ?

ພຣະຕະຖາຄົດໃນໂລກນີ້ຊົງຣະລຶກຊາດໃນຫົນຫຼັງໄດ້ຫຼາຍ ໆ ຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຫຼາຍສັງວັດຕະກັບແດ່ ຫຼາຍວິວັດຕະກັບແດ່ ຫຼາຍສັງວັດຕະວິວັດຕະກັບແດ່ວ່າ ເຮົາຢູ່ໃນພົບນັ້ນ ເປັນຜູ້ມີຊື່ແນວນີ້ ມີໂຄດແນວນີ້ ມີວັນນະແນວນີ້ ມີອາຫານແນວນີ້ ສະເຫວີຍສຸກແລະທຸກແນວນີ້ ມີກຳນົດອາຍຸແນວນີ້ ເຮົານັ້ນ ຈຸດຕິຈາກຊາດນັ້ນແລ້ວຈຶ່ງໄປເກີດໃນພົບນັ້ນ ເຮົາຢູ່ໃນພົບນັ້ນ ເປັນຜູ້ມີຊື່ແນວນີ້ ມີໂຄດແນວນີ້ ມີວັນນະແນວນີ້ ມີ ອາຫານແນວນີ້ ສະເຫວີຍສຸກແລະທຸກແນວນີ້ ມີກຳນົດອາຍຸແນວນີ້ ເຮົານັ້ນຈຸດຕິຈາກຊາດນັ້ນແລ້ວຈຶ່ງມາເກີດໃນພົບນີ້ ພຣະຕະຖາຄົດຊົງຣະລຶກຊາດໃນຫົນຫຼັງໄດ້ຫຼາຍ ໆ ຊາດພ້ອມ ທັງອາການ ພ້ອມທັງອຸເທດ ດ້ວຍປະການດັ່ງນີ້

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງ ຄວາມໄຈ້ແຍກທຳ ສຳມາທິດຖິໃນການຣະລຶກຊາດນັ້ນ ນີ້ຊື່ວ່າ ພຣະຕະຖາຄົດຊົງຮູ້ການຣະລຶກຊາດຫົນຫຼັງຕາມຄວາມເປັນຈິງ (໘)

## ໙. ຈຸຕູປະປາຕະຍານ

## (ປັຊາຢັ່ງຮູ້ຈຸຕິແລະອຸບັດຂອງສັດທັງຫຼາຍອັນເປັນໄປຕາມທຳ)

[໘໓໐] ພຣະຕະຖາຄົດຊົງຮູ້ຄວາມຈຸຕິ ແລະອຸບັດຂອງສັດທັງຫຼາຍຕາມຄວາມເປັນຈິງເປັນແນວໃດ?

ພຣະຕະຖາຄົດໃນໂລກນີ້ ຊົງມີທິບພະຈັກຂຸອັນບໍລິສຸດລ່ວງຈັກຂຸຂອງສາມັນມະນຸດ ຊົງເຫັນສັດຜູ້ກຳລັງຈຸຕິ ອຸບັດ ຊົ່ວ ປະນີດ ມີຜິວພັນດີ ມີຜິວພັນຊົ່ວ ໄປສຸກຄະຕິ ໄປທຸກຄະຕິ ຍ່ອມຊົງຮູ້ເຫຼົ່າສັດຜູ້ເປັນໄປຕາມກຳວ່າ ສັດຜູ້ຈະເລີນເຫຼົ່ານີ້ປະກອບດ້ວຍກາຍທຸດຈະຣິດ ປະກອບດ້ວຍວະຈີທຸດຈະຣິດ ປະກອບດ້ວຍມະໂນທຸດຈະຣິດ ກ່າວໃສ່ຮ້າຍພຣະອະຣິຍະ ເປັນມິດສາທິດຖິ ສະມາທານມິດສາທິດຖິ ຜາຣົບສັດເຫຼົ່ານັ້ນ ຫຼັງຈາກຕາຍແລ້ວກໍເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດ

ນະຣົກ ຫຼື ສັດຜູ້ຈະເລີນເຫຼົ່ານີ້ປະກອບດ້ວຍກາຍສຸຈະຣິດ ປະກອບດ້ວຍວະຈີສຸດຈະຣິດ ປະກອບດ້ວຍມະໂນສຸດຈະຣິດ ບໍ່ກ່າວໃສ່ຮ້າຍພຣະອະຣິຍະເປັນສຳມາທິດຖິ ສະມາທານ ສຳມາທິດຖິຜາຣົບ ສັດເຫຼົ່ານັ້ນຫຼັງຈາກຕາຍແລ້ວ ຈຶ່ງເຂົ້າເຖິງສຸກຄະຕິໂລກສະຫວັນ ພຣະຕະຖາຄົດຊົງມີທິບພະຈັກຂຸອັນບໍລິສຸດ ລ່ວງສາມັນມະນຸດຊົງເຫັນເຫຼົ່າສັດຜູ້ກຳລັງຈຸຕິ ອຸບັດ ຊົ່ວ ປະນີດ ມີຜິວພັນດີ ມີຜິວພັນຊົ່ວ ໄປສຸກຄະຕິ ໄປທຸກຄະຕິ ຊົງຮູ້ເຫຼົ່າສັດຜູ້ເປັນໄປຕາມກຳ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິໃນການຈຸຕິ ແລະອຸບັດແຫ່ງສັດທັງຫຼາຍນັ້ນ ນີ້ຊື່ວ່າ ພຣະຕະຖາຄົດຊົງຮູ້ການຈຸຕິ ແລະອຸບັດແຫ່ງສັດທັງຫຼາຍຕາມຄວາມເປັນຈິງ (໙)

## ໑໐. ອາສະວັກຂະຍະຍານ

## (ປີຊາຢັ່ງຮູ້ຄວາມສິ້ນໄປແຫ່ງອາສະວະ)

[໘໓໑] ພຣະຕະຖາຄົດຊົງຮູ້ຄວາມສິ້ນອາສະວະຕາມຄວາມເປັນຈິງ ເປັນແນວໃດ?

ພຣະຕະຖາຄົດໃນໂລກນີ້ຊົງເຮັດໃຫ້ແຈ້ງ ເຊິ່ງເຈໂຕວິມຸດຕິ ແລະປັນຍາວິມຸດຕິອັນຫາອາສະວະບໍ່ໄດ້ ຍ້ອນຄວາມສິ້ນໄປແຫ່ງອາສະວະດ້ວຍປັນຍາອັນຍິ່ງດ້ວຍພຣະອົງເອງ ເຂົ້າເຖິງຢູ່ໃນທິດຖິທຳ ດ້ວຍອາການແນວນີ້

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳສຳມາທິດຖິໃນຄວາມສິ້ນອາສະວະນັ້ນ ນີ້ຊື່ວ່າ ພຣະຕະຖາຄົດຊົງຮູ້ຄວາມສິ້ນອາສະວະຕາມຄວາມເປັນຈິງ (໑໐)

## ຍານະວິພັງ ຈົບບໍລິບູນ

# ໑໗. ຂຸດທະກະວັດຖຸວິພັງ

## ໑. ເອກກະມາຕິກາ

[໘໓໒] (໑) ຊາຕິມະທະ (ຄວາມເມົາຍ້ອນອາໄສຊາດ) (໘໔໓)
(໒) ໂຄດຕະມະທະ (ຄວາມເມົາຍ້ອນອາໄສໂຄດ) (໘໔໔)
(໓) ອາໂຣຄະຍະມະທະ (ຄວາມເມົາໃນຄວາມບໍ່ມີໂຣກ (໘໔໔)
(໔) ໂຍບພະນະມະທະ (ຄວາມເມົາໃນຄວາມເປັນໜຸ່ມສາວ) (໘໔໔)
(໕) ຊີວິຕະມະທະ (ຄວາມເມົາໃນຊີວິດ) (໘໔໔)
(໖) ລາພະມະທະ (ຄວາມເມົາໃນລາບ) (໘໔໔)
(໗) ສັກກາຣະມະທະ (ຄວາມເມົາໃນສັກກາຣະ) (໘໔໔)
(໘) ຄະຣຸກາຣະມະທະ (ຄວາມເມົາໃນຄວາມເຄົາລົບ) (໘໔໔)
(໙) ປຸເຣກະຂາຣະມະທະ (ຄວາມເມົາໃນຄວາມເປັນຫົວໜ້າ) (໘໔໔)
(໑໐) ປະຣິວາຣະມະທະ (ຄວາມເມົາໃນບໍລິວານ) (໘໔໔)
(໑໑) ໂພຄະມະທະ (ຄວາມເມົາໃນໂພຄະສົມບັດ) (໘໔໔)
(໑໒) ວັນນະມະທະ (ຄວາມເມົາຍ້ອນອາໄສຜິວພັນແລະຄຸນຄວາມດີ) (໘໔໔)
(໑໓) ສຸຕະມະທະ (ຄວາມເມົາໃນການສະດັບຮັບຟັງ) (໘໔໔)
(໑໔) ປະຕິພານະມະທະ (ຄວາມເມົາໃນປະຕິພານ) (໘໔໔)
(໑໕) ຣັດຕັນຍູມະທະ (ຄວາມເມົາໃນຄວາມເປັນຜູ້ຣັດຕັນຍູ) (໘໔໔)
(໑໖) ປິນດະປາຕິກະມະທະ (ຄວາມເມົາໃນການຖືທ່ຽວບິນທະບາດເປັນວັດ) (໘໔໔)
(໑໗) ອະນະວັນຍາຕະມະທະ (ຄວາມເມົາຍ້ອນບໍ່ຖືກໃຜດູຖູກ) (໘໔໔)
(໑໘) ອິຣິຍາປະຖະມະທະ (ຄວາມເມົາໃນອິຣິຍາບົດ) (໘໔໔)
(໑໙) ອິດທິມະທະ (ຄວາມເມົາໃນລິດ) (໘໔໔)
(໒໐) ຍະສະມະທະ (ຄວາມເມົາໃນຍົດ) (໘໔໔)
(໒໑) ສີລະມະທະ (ຄວາມເມົາໃນສິນ) (໘໔໔)
(໒໒) ຊານະມະທະ (ຄວາມເມົາໃນຊານ) (໘໔໔)
(໒໓) ສິບປະມະທະ (ຄວາມເມົາໃນສິລະປະ) (໘໔໔)
(໒໔) ອາໂຣຫະມະທະ (ຄວາມເມົາໃນຄວາມມີຊວດຊົງສູງ) (໘໔໔)
(໒໕) ປະຣິນາຫະມະທະ (ຄວາມເມົາໃນຄວາມມີຊວດຊົງສັນທັດ) (໘໔໔)
(໒໖) ສັນຖານະມະທະ (ຄວາມເມົາໃນຄວາມມີຊວດຊົງງາມ) (໘໔໔)
(໒໗) ປາຣິປູຣິມະທະ (ຄວາມເມົາໃນຄວາມມີຮ່າງກາຍສົມບູນ) (໘໔໔)

| | |
|---|---|
| (໔໗) ມະທະ | (ຄວາມເມົາ) (໗໔໕) |
| (໔໙) ປະມາທະ | (ຄວາມຜະໝາດ) (໗໔໖) |
| (໓໐) ຖໍາພະ | (ຄວາມຫົວດື້) (໗໔໗) |
| (໓໑) ສາຣໍາພະ | (ຄວາມແຂ່ງດີ) (໗໔໗) |
| (໓໒) ອະຕິຣິດສະຕາ | (ຄວາມຢາກໄດ້ເກີນປະມານ) (໗໔໙) |
| (໓໓) ມະຫິດສະຕາ | (ຄວາມມັກຫຼາຍ) (໗໕໐) |
| (໓໔) ປາປິດສະຕາ | (ຄວາມປາຖະໜາລາມົກ) (໗໕໑) |
| (໓໕) ສິງຄະ | (ຄວາມຍົວະຍຸ) (໗໕໒) |
| (໓໖) ຕິນຕິນະ | (ການເວົ້າກີດກັ້ນ) (໗໕໓) |
| (໓໗) ຈາປັນຍະ | (ການມັກຕົບແຕ່ງ) (໗໕໔) |
| (໓໗) ອະສະພາຄະວຸດຕິ | (ຄວາມປະພຶດບໍ່ເໝາະສົມ) (໗໕໕) |
| (໓໙) ອະຣະຕິ | (ຄວາມບໍ່ຍິນດີ) (໗໕໖) |
| (໔໐) ຕັນທິ | (ຄວາມໂງກງ່ວງ) (໗໕໗) |
| (໔໑) ວິຊໍາພິຕາ | (ຄວາມບິດກາຍ) (໗໕໗) |
| (໔໒) ພັດຕະສໍາມະທະ | (ຄວາມເມົາໃນອາຫານ) (໗໕໙) |
| (໔໓) ເຈຕະໂສລີນັດຕະ | (ຄວາມຫົດຫູ່ຈິດ) (໗໖໐) |
| (໔໔) ກຸຫະນາ | (ຄວາມຫຼອກລວງ) (໗໖໑) |
| (໔໕) ລະປະນາ | (ການເວົ້າປະຈົບ) (໗໖໒) |
| (໔໖) ເນມິດຕິກະຕາ | (ການທໍານິມິດ) (໗໖໓) |
| (໔໗) ນິບເປສິກະຕາ | (ການເວົ້າລົບລ້າງຄວາມດີຂອງຄົນອື່ນ) (໗໖໔) |
| (໔໗) ລາເພນະລາພັງນິຊິຄິງສະນະຕາ | (ການແລກປ່ຽນລາບດ້ວຍລາບ) (໗໖໕) |
| (໔໙) ຄວາມຖືຕົວວ່າ | ເປັນຜູ້ເລີດກວ່າເຂົາ (໗໖໖) |
| (໕໐) ຄວາມຖືຕົວວ່າ | ເປັນຜູ້ສະເໝີເຂົາ (໗໖໗) |
| (໕໑) ຄວາມຖືຕົວວ່າ | ເປັນຜູ້ດ້ອຍກວ່າເຂົາ (໗໖໗) |
| (໕໒) ເປັນຜູ້ເລີດກວ່າເຂົາ | ຖືຕົວວ່າເລີດກວ່າເຂົາ (໗໖໙) |
| (໕໓) ເປັນຜູ້ເລີດກວ່າເຂົາ | ຖືຕົວວ່າສະເໝີເຂົາ (໗໗໐) |
| (໕໔) ເປັນຜູ້ເລີດກວ່າເຂົາ | ຖືຕົວວ່າດ້ອຍກວ່າເຂົາ (໗໗໑) |
| (໕໕) ເປັນຜູ້ສະເໝີເຂົາ | ຖືຕົວວ່າເລີດກວ່າເຂົາ (໗໗໒) |
| (໕໖) ເປັນຜູ້ສະເໝີເຂົາ | ຖືຕົວວ່າສະເໝີເຂົາ (໗໗໓) |
| (໕໗) ເປັນຜູ້ສະເໝີເຂົາ | ຖືຕົວວ່າດ້ອຍກວ່າເຂົາ (໗໗໔) |
| (໕໗) ເປັນຜູ້ດ້ອຍກວ່າເຂົາ | ຖືຕົວວ່າເລີດກວ່າເຂົາ (໗໗໕) |

| | |
|---|---|
| (໕໙) ເປັນຜູ້ດ້ອຍກວ່າເຂົາ | ຖືຕົວວ່າສະເໝີເຂົາ (໗໘໖) |
| (໖໐) ເປັນຜູ້ດ້ອຍກວ່າເຂົາ | ຖືຕົວວ່າດ້ອຍກວ່າເຂົາ (໗໘໘) |
| (໖໑) ມານະ | (ຄວາມຖືຕົວ) (໗໘໗) |
| (໖໒) ອະຕິມານະ | (ຄວາມດູຖູກຜູ້ອື່ນ) (໗໘໙) |
| (໖໓) ມານາຕິມານະ | (ຄວາມຈອງຫອງຖືຕົວ) (໗໗໐) |
| (໖໔) ໂອມານະ | (ຄວາມດູຖູກຕົນເອງ) (໗໗໑) |
| (໖໕) ອະທິມານະ | (ຄວາມສຳຄັນວ່າໄດ້ບັນລຸ) (໗໗໒) |
| (໖໖) ອັດສະມິມານະ | (ຄວາມສຳຄັນວ່າມີຕົວຕົນ) (໗໗໓) |
| (໖໘) ມິດສາມານະ | (ຄວາມຖືຕົວຜິດ) (໗໗໔) |
| (໖໗) ຍາຕະວິຕັກກະ | (ຄວາມນຶກເຖິງຍາດ) (໗໗໕) |
| (໖໙) ຊະນະປະທະວິຕັກກະ | (ຄວາມນຶກເຖິງຊົນນະບົດ) (໗໗໖) |
| (໘໐) ອະມະຣະວິຕັກກະ | (ຄວາມນຶກເພື່ອເອົາຕົວລອດ) (໗໗໘) |

(໘໑) ປານຸດທະຍະຕາປະຕິສັງຍຸດຕະວິຕັກກະ (ຄວາມນຶກກ່ຽວດ້ວຍຄວາມອີດູ ຜູ້ອື່ນ) (໗໗໗)

(໘໒) ລາພະສັກກາຣະສິໂລກປະຕິສັງຍຸດຕະວິຕັກກະ (ຄວາມນຶກກ່ຽວດ້ວຍລາບສັກກາຣະແລະຊື່ສຽງ) (໗໗໙)

(໘໓) ອະນະວັນຍັດຕິປະຕິສັງຍຸດຕະວິຕັກກະ (ຄວາມນຶກກ່ຽວດ້ວຍຄວາມບໍ່ຕ້ອງການໃຫ້ໃຜດູຖູກ) (໗໙໐)

**ເອກກະມາຕິກາ ຈົບ**

## ໒. ທຸກະມາຕິກາ

| | | |
|---|---|---|
| [໗໓໓] | (໑) ໂກທະ | (ຄວາມໂກດ) (໗໙໑) |
| | ອຸປະນາຫະ | (ຄວາມຜູກໂກດ) (໗໙໑) |
| | (໒) ມັກຂະ | (ຄວາມລົບຫຼູ່) (໗໙໒) |
| | ປະລາສະ | (ຄວາມຕີຕົວສະເໝີ) (໙໗໒) |
| | (໓) ອິດສາ | (ຄວາມຣິດສະຫຍາ) (໗໙໓) |
| | ມັດສະຣິຍະ | (ຄວາມຂີ້ຖີ່) (໗໙໓) |
| | (໔) ມາຍາ | (ຄວາມເຈົ້າເລ້) (໗໙໔) |
| | ສາເຖີຍຍະ | (ຄວາມໂອ້ອວດ) (໗໙໔) |
| | (໕) ອະວິດຊາ | (ຄວາມບໍ່ຮູ້) (໗໙໕) |

| | |
|---|---|
| ພະວະຕັນຫາ | (ຄວາມປາຖະໜາພົບ) (໗໙໕) |
| (໖) ພະວະທິດຖິ | (ຄວາມເຫັນວ່າເກີດອີກ) (໗໙໖) |
| ວິພະວະທິດຖິ | (ຄວາມເຫັນວ່າບໍ່ເກີດອີກ) (໗໙໖) |
| (໗) ສັດສະຕະທິດຖິ | (ຄວາມເຫັນວ່າທ່ຽງ) (໗໙໗) |
| ອຸດເສທະທິດຖິ | (ຄວາມເຫັນວ່າຂາດສູນ) (໗໙໗) |
| (໘) ອັນຕະວາທິດຖິ | (ຄວາມເຫັນວ່າມີບ່ອນສຸດ) (໗໙໘) |
| ອະນັນຕະວາທິດຖິ | (ຄວາມເຫັນວ່າບໍ່ມີບ່ອນສຸດ) (໗໙໘) |
| (໙) ປຸບພັນຕານຸທິດຖິ | (ຄວາມເຫັນຜາຣົບສ່ວນອະດີດ) (໗໙໙) |
| ອະປະຣັນຕານຸທິດຖິ | (ຄວາມເຫັນຜາຣົບສ່ວນອະນາຄົດ) (໗໙໙) |
| (໑໐) ອະຫິຣິກະ | (ຄວາມບໍ່ລະອາຍຕໍ່ການປະພຶດທຸດຈະຣິດ) (໙໐໐) |
| ອະໂນດຕັບປະ | (ຄວາມບໍ່ສະດຸ້ງຢ້ານຕໍ່ການປະພຶດທຸດຈະຣິດ) (໙໐໐) |
| (໑໑) ໂທວະຈັດສະຕາ | (ຄວາມເປັນຜູ້ວ່າຍາກ) (໙໐໑) |
| ປາປະມິດຕະຕາ | (ຄວາມເປັນຜູ້ມີມິດຊົ່ວ) (໙໐໑) |
| (໑໒) ອະນັດຊະວະ | (ຄວາມບໍ່ຊື່ຕົງ) (໙໐໒) |
| ອະມັດທະວະ | (ຄວາມບໍ່ອ່ອນໂຍນ) (໙໐໒) |
| (໑໓) ອະຂັນຕິ | (ຄວາມບໍ່ອົດທົນ) (໙໐໓) |
| ອະໂສຣັດຈະ | (ຄວາມບໍ່ສະງ່ຽມ) (໙໐໓) |
| (໑໔) ອະສາຂັນລະຍະ | (ຄວາມບໍ່ມີວາຈາອ່ອນນວນ) (໙໐໔) |
| ອັບປະຕິສັນຖາຣະ | (ຄວາມບໍ່ມີປະຕິສັນຖານ) (໙໐໔) |
| (໑໕) ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ (໙໐໕) | |
| ຄວາມບໍ່ຮູ້ຈັກປະມານໃນການບໍຣິໂພກ (໙໐໕) | |
| (໑໖) ມຸດຖະສັດຈະ | (ຄວາມຫຼົງລືມສະຕິ) (໙໐໖) |
| ອະສຳປະຊັນຍະ | (ຄວາມເປັນຜູ້ບໍ່ມີສຳປະຊັນຍະ) (໙໐໖) |
| (໑໗) ສີລະວິປັດຕິ | (ຄວາມວິບັດແຫ່ງສີນ) (໙໐໗) |
| ທິດຖິວິປັດຕິ | (ຄວາມວິບັດແຫ່ງທິດຖິ) (໙໐໗) |
| (໑໘) ອັດຊັດຕະສັນໂຍຊະນະ | (ສັງໂຍດພາຍໃນ) (໙໐໘) |
| ພະຫິດທາສັນໂຍຊະນະ | (ສັງໂຍດພາຍນອກ) (໙໐໘) |

**ທຸກະມາຕິກາ ຈົບ**

# ໓. ຕິກະມາຕິກາ

| | |
|---|---|
| [໗໓໔] (໑) ອະກຸສົນມູນ | (ຮາກເຫງົ້າແຫ່ງອະກຸສົນ) ໓ (໙໐໙) |
| (໒) ອະກຸສົນວິຕົກ | (ຄວາມນຶກທີ່ເປັນອະກຸສົນ) ໓ (໙໑໐) |
| (໓) ອະກຸສົນສັນຍາ | (ການກຳນົດໝາຍທີ່ເປັນອະກຸສົນ) ໓ (໙໑໑) |
| (໔) ອະກຸສົນທາດ | (ທາດທີ່ເປັນອະກຸສົນ) ໓ (໙໑໒) |
| (໕) ທຸດຈະຣິດ | (ຄວາມປະພຶດຊົ່ວ) ໓ (໙໑໓) |
| (໖) ອາສະວະ | (ສະພາວະທີ່ໝັກດອງສັນດານ) ໓ (໙໑໔) |
| (໗) ສັງໂຍດ | (ກິເລດເຄື່ອງປະກອບສັດໄວ້ໃນພົບ) ໓ (໙໑໕) |
| (໘) ຕັນຫາ | (ຄວາມທະຍານຢາກ) ໓ (໙໑໖) |
| (໙) ຕັນຫາ ໓ ອີກໄນໜຶ່ງ | (໙໑໗) |
| (໑໐) ຕັນຫາ ໓ ແມ່ນອີກໄນໜຶ່ງ | (໙໑໘) |
| (໑໑) ເອສະນາ | (ຄວາມພໍໃຈ) ໓ (໙໑໙) |
| (໑໒) ວິທາ ໓ (໙໒໐) | |
| (໑໓) ໄພ ໓ (໙໒໑) | |
| (໑໔) ຕະມະ | (ຄວາມມືດ) ໓ (໙໒໒) |
| (໑໕) ຕິດຖາຍະຕະນະ | (ຖິ່ນເກີດຂອງທິດຖິ) ໓ (໙໒໓) |
| (໑໖) ກິນຈະນະ | (ກິເລດເຄື່ອງກັງວົນ) ໓ (໙໒໔) |
| (໑໗) ອັງຄະນະ | (ກິເລດພຽງດັ່ງເນີນ) ໓ (໙໒໔) |
| (໑໘) ມະລະ | (ມົນທິນ) ໓ (໙໒໔) |
| (໑໙) ວິສະມະ | (ຄວາມປະພຶດບໍ່ສະໝ່ຳສະເໝີ) ໓ (໙໒໔) |
| (໒໐) ວິສະມະ ໓ ອີກໄນໜຶ່ງ (໙໒໔) | |
| (໒໑) ອັກຄີ | (ໄຟ) ໓ (໙໒໔) |
| (໒໒) ກະສາວະ | (ກິເລດເໝືອນນ້ຳຝາດ) ໓ (໙໒໔) |
| (໒໓) ກະສາວະ ໓ ອີກໄນໜຶ່ງ (໙໒໔) | |
| (໒໔) ອັດສາທະທິດຖິ | (ຄວາມເຫັນຜິດທີ່ປະກອບດ້ວຍຄວາມຍິນດີ) (໙໒໕) |
| ອັດຕານຸທິດຖິ | (ຄວາມເຫັນຜິດວ່າມີຕົວຕົນ) (໙໒໕) |
| ມິດສາທິດຖິ | (ຄວາມເຫັນຜິດ) (໙໒໕) |
| (໒໕) ອະຣະຕິ | (ຄວາມບໍ່ຍິນດີ) (໙໒໖) |
| ວິເຫສາ | (ຄວາມບຽດບຽນ) (໙໒໖) |
| ອະທຳມະຈະຣິຍາ | (ຄວາມປະພຶດບໍ່ເປັນທຳ) (໙໒໖) |

(໘໖) ໂທວະຈັດສະຕາ (ຄວາມເປັນຜູ້ວ່າຍາກ) (໙໘໗)
ປາປະມິດຕະຕາ (ຄວາມເປັນຜູ້ມີມິດຊົ່ວ) (໙໘໗)
ນານັດຕະສັນຍາ (ສັນຍາທີ່ແຕກຕ່າງກັນ) (໙໘໗)
(໘໗) ອຸດທັດຈະ (ຄວາມຟຸ້ງຊ່ານ) (໙໘໘)
ໂກສັດຊະ (ຄວາມຂີ້ຄ້ານ) (໙໘໘)
ປະມາທະ (ຄວາມຜະໝາດ) (໙໘໘)
(໘໘) ອະສັນຕຸດຖິຕາ (ຄວາມບໍ່ສັນໂດດ) (໙໘໙)
ອະສຳປະຊັນຍະຕາ (ຄວາມບໍ່ມີສຳປະຊັນຍະ) (໙໘໙)
ມະຫິດສະຕາ (ຄວາມມັກຫຼາຍ) (໙໘໙)
(໘໙) ອະຫິຣິກະ (ຄວາມບໍ່ລະອາຍຕໍ່ການປະພຶດທຸດຈະຣິດ) (໙໙໐)
ອະໂນດຕັບປະ (ຄວາມບໍ່ສະດຸ້ງຢ້ານຕໍ່ການປະພຶດທຸດຈະຣິດ) (໙໙໐)
ປະມາທະ (ຄວາມຜະໝາດ) (໙໙໐)
(໙໐) ອະນາທະຣິຍະ (ຄວາມບໍ່ເອື້ອເຟື້ອ) (໙໙໑)
ໂທວະຈັດສະຕາ (ຄວາມເປັນຜູ້ວ່າຍາກ) (໙໙໑)
ປາປະມິດຕະຕາ (ຄວາມເປັນຜູ້ມີມິດຊົ່ວ) (໙໙໑)
(໙໑) ອັດສັດທິຍະ (ຄວາມບໍ່ເຊື່ອ) (໙໙໒)
ອະວະທັນຍຸຕາ (ຄວາມເປັນຜູ້ບໍ່ໂອບອ້ອມອາຣີ) (໙໙໒)
ໂກສັດຊະ (ຄວາມຂີ້ຄ້ານ) (໙໙໒)
(໙໒) ອຸດທັດຈະ (ຄວາມຟຸ້ງຊ່ານ) (໙໙໓)
ອະສັງວອນ (ຄວາມບໍ່ສັງລວມ) (໙໙໓)
ທຸດສີລະຍະ (ຄວາມເປັນຜູ້ທຸສີນ) (໙໙໓)
(໙໓) ອະຣິຍານັງອະທັດສະນະກຳມະຍະຕາ (ຄວາມບໍ່ຢາກເຫັນພຣະອະຣິຍະ)(໙໙໔)
ສັດທຳມັງ ອະໂສຕຸກຳມະຍະຕາ (ຄວາມບໍ່ຢາກຟັງພຣະສັດທຳ) (໙໙໔)
ອຸປາຣຳພະຈິດຕະຕາ (ຄວາມຄິດແຂ່ງດີ) (໙໙໔)
(໙໔) ມຸດຖັດສັດຈະ (ຄວາມເປັນຜູ້ມີສະຕິຟັ່ນເຟືອນ) (໙໙໕)
ອະສຳປະຊັນຍະ (ຄວາມເປັນຜູ້ບໍ່ມີສຳປະຊັນຍະ) (໙໙໕)
ເຈຕະໂສວິກະເຂປະ (ຄວາມຟຸ້ງຊ່ານແຫ່ງຈິດ) (໙໙໕)
(໙໕) ອະໂຍນິໂສມະນະສິການ (ການບໍ່ພິຈາລະນາໂດຍແຍບຄາຍ) (໙໙໖)
ກຸມມັກຄະເສວະນາ (ການຢຶດຖືທາງຜິດ) (໙໙໖)
ເຈຕະໂສລີນັດຕະ (ຄວາມຫົດຫູ່ຈິດ) (໙໙໖)

**ຕິກະມາຕິກາ ຈົບ**

# ໔. ຈະຕຸກກະມາຕິກາ

[໗໓໕] (໑) ອາສະວະ (ສະພາວະທີ່ໝັກດອງໃນສັນດານ) ໔ (໙໓໗)
(໒) ຄັນຖະ (ກິເລດເຄື່ອງຮ້ອຍຮັດໃຈ) ໔ (໙໓໘)
(໓) ໂອຄະ (ກິເລດເໝືອນຫ້ວງນ້ຳ) ໔ (໙໓໘)
(໔) ໂຍຄະ (ກິເລດເປັນເຄື່ອງປະກອບສັດໄວ້ໃນພົບ) ໔ (໙໓໘)
(໕) ອຸປາທານ (ຄວາມຍຶດໝັ້ນ) ໔ (໙໓໘)
(໖) ຕັນຫຸປາທານ (ຄວາມຍຶດໝັ້ນດ້ວຍຕັນຫາ) ໔ (໙໓໙)
(໗) ອະຄະຕິຄະມະນະ (ການເຖິງອະຄະຕິ) ໔ (໙໓໙)
(໘) ວິປະຣິເຍສະ (ການສະແຫວງຫາຜິດ) ໔ (໙໓໙)
(໙) ອະນະຣິຍະໂວຫານ (ໂວຫານຂອງຜູ້ບໍ່ແມ່ນພຣະອະຣິຍະ) ໔ (໙໓໙)
(໑໐) ອະນະຣິຍະໂວຫານ ໔ ອີກໄນໜຶ່ງ (໙໓໙)
(໑໑) ທຸດຈະຣິດ (ຄວາມປະພຶດຊົ່ວ) ໔ (໙໓໙)
(໑໒) ທຸດຈະຣິດ ໔ ອີກໄນໜຶ່ງ (໙໓໙)
(໑໓) ໄພ ໔ (໙໓໙)
(໑໔) ໄພ ໔ ອີກໄນໜຶ່ງ (໙໓໙)
(໑໕) ໄພ ໔ ອື່ນອີກໄນໜຶ່ງ (໙໓໙)
(໑໖) ໄພ ໔ ອື່ນຕໍ່ໄປອີກໄນໜຶ່ງ (໙໓໙)
(໑໗) ທິດຖິ (ຄວາມເຫັນຜິດ) ໔ (໙໓໙)

**ຈະຕຸກກະມາຕິກາ ຈົບ**

# ໕. ປັນຈະກະມາຕິກາ

[໗໓໖] (໑) ໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ (໙໔໐)
(໒) ອຸດທຳພາຄິຍະສັງໂຍດ (ສັງໂຍດເບື້ອງສູງ) ໕ (໙໔໐)
(໓) ມັດສະຣິຍະ (ຄວາມຂີ້ຖີ່) ໕ (໙໔໐)
(໔) ສັງຄະ (ກິເລດເຄື່ອງຂ້ອງ) ໕ (໙໔໐)
(໕) ສັນລະ (ກິເລດເໝືອນລູກສອນ) ໕ (໙໔໐)
(໖) ເຈໂຕຂີລະ (ກິເລດເໝືອນຕະປູຕຶງໃຈ) ໕ (໙໔໑)
(໗) ເຈຕະໂສວິນິພັນທະ (ກິເລດເຄື່ອງຜູກພັນໃຈ) ໕ (໙໔໑)
(໘) ນີວອນ (ກິເລດເຄື່ອງກັ້ນຄວາມດີ) ໕ (໙໔໑)

(໙) ອະນັນຕະຣິຍະກຳ (ກຳໜັກ) ໕ (໙໔໑)

(໑໐) ທິດຖິ (ຄວາມເຫັນຜິດ) ໕ (໙໔໑)

(໑໑) ເວຣະ (ຄວາມແຄ້ນເຄືອງ) ໕ (໙໔໒)

(໑໒) ພະຍະຕະນະ (ຄວາມພິນາດ) ໕ (໙໔໒)

(໑໓) ໂທດແຫ່ງຄວາມບໍ່ອົດທົນ ໕ (໙໔໒)

(໑໔) ໄພ ໕ (໙໔໒)

(໑໕) ຖິດຖະທຳມະນິບພານະວາທະ (ວາທະວ່ານິບພານມີໃນຊີວິດປັດຈຸບັນ) ໕ (໙໔໓)

**ປັນຈະກະມາຕິກາ ຈົບ**

## ໖. ສັກກະມາຕິກາ

[໗໓໗] (໑) ວິວາທະມູນ (ເຫດກໍ່ວິວາທະ) ໖ (໙໔໔)

(໒) ສັນທະຣາຄະເຄທະສິຕະທຳ (ສະພາວະທຳຄືສັນທະຣາຄະເຊິ່ງອາໄສການມະຄຸນ) (໙໔໔)

(໓) ວິໂຣທະວັດຖຸ ໖ (໙໔໔)

(໔) ຕັນຫາກາຍະ (ກອງຕັນຫາ) ໖ (໙໔໔)

(໕) ອະຄາຣະວະ (ຄວາມບໍ່ເຄົາລົບ) ໖ (໙໔໕)

(໖) ປະຣິຫານິຍະທຳ (ທຳເປັນທີ່ຕັ້ງແຫ່ງຄວາມເສື່ອມ) ໖ (໙໔໕)

(໗) ປະຣິຫານິຍະທຳ ໖ ອີກໄນໜຶ່ງ (໙໔໖)

(໘) ໂສມະນັດສຸປະວິຈານ (ຄວາມຄຸ່ນຄິດກ່ຽວດ້ວຍໂສມະນັດ) ໖ (໙໔໖)

(໙) ໂທມະນັດສຸປະວິຈານ (ຄວາມຄຸ່ນຄິດກ່ຽວດ້ວຍໂທມະນັດ) ໖ (໙໔໖)

(໑໐) ອຸເປກຂູປະວິຈານ (ຄວາມຄຸ່ນຄິດກ່ຽວດ້ວຍອຸເປກຂາ) ໖ (໙໔໖)

(໑໑) ເຄທະສິຕະໂສມະນັດ (ໂສມະນັດທີ່ອາໄສການມະຄຸນ) ໖ (໙໔໗)

(໑໒) ເຄທະສິຕະໂທມະນັດ (ໂທມະນັດທີ່ອາໄສການມະຄຸນ) ໖ (໙໔໗)

(໑໓) ເຄທະສິຕະອຸເປກຂາ (ອຸເປກຂາທີ່ອາໄສການມະຄຸນ) ໖ (໙໔໖)

(໑໔) ທິດຖິ (ຄວາມເຫັນຜິດ) ໖ (໙໔໘)

**ສັກກະມາຕິກາ ຈົບ**

# ໗. ສັດຕະກະມາຕິກາ

[໘໓໘] (໑) ອະນຸໄສ (ກິເລດທີ່ນອນເນື່ອງ) ໗ (໔໙)
(໒) ສັງໂຍດ (ກິເລດທີ່ປະກອບສັດໄວ້ໃນພົບ) ໗ (໔໙)
(໓) ປະຣິຍຸດຖານະ (ກິເລດເຄື່ອງກຸ້ມຣຸມໃຈ) ໗ (໔໙)
(໔) ອະສັດທຳ (ທຳຂອງຄົນພານ) ໗ (໕໐)
(໕) ທຸດຈະຣິດ (ຄວາມປະພຶດຊົ່ວ) ໗ (໕໐)
(໖) ມານະ (ຄວາມຖືຕົວ) ໗ (໕໐)
(໗) ທິດຖິ (ຄວາມເຫັນຜິດ) ໗ (໕໑)

**ສັດຕະກະມາຕິກາ ຈົບ**

# ໘. ອັດຖະກະມາຕິກາ

[໘໓໙] (໑) ກິເລສະວັດຖຸ (ສິ່ງກໍ່ຄວາມເສົ້າໝອງ) ໘ (໕໒)
(໒) ກຸສິຕະວັດຖຸ (ເຫດເກີດຄວາມຂີ້ຄ້ານ) ໘ (໕໒)
(໓) ຈິດກະທົບໃນໂລກະທຳ ໘ (໕໔)
(໔) ອະນະຣິຍະໂວຫານ (ຄຳເວົ້າຂອງຜູ້ບໍ່ແມ່ນພຣະອະຣິຍະ) ໘ (໕໕)
(໕) ມິດສັດຕະ (ຄວາມເຫັນຜິດ) ໘ (໕໖)
(໖) ບຸຣຸດໂທດ (ໂທດຂອງຄົນ) ໘ (໕໗)
(໗) ອະສັນຍິວາທະ (ວາທະວ່າອັດຕາບໍ່ມີສັນຍາ) ໘ (໕໘)
(໘) ເນວະສັນຍີນາສັນຍິວາທະ (ວາທະວ່າມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ) ໘ (໕໘)

**ອັດຖະກະມາຕິກາ ຈົບ**

# ໙. ນະວະກະມາຕິກາ

[໘໔໐] (໑) ອາຄາຕະວັດຖຸ (ເລື້ອງໃຫ້ເກີດຄວາມອາຄາດ) ໙ (໖໑)
(໒) ປຸຣິສະມະລະ (ມົນທິນຂອງຄົນ) ໙ (໖໒)
(໓) ມານະ (ຄວາມຖືຕົວ) ໙ (໖໓)
(໔) ຕັນຫາມູລະກະທຳ (ທຳທີ່ມີຕັນຫາເປັນມູນ) ໙ (໖໔)
(໕) ອິນຊິຕະ ໙ (໖໔)

(໗) ມັນຍິຕະ ໙ (໙໗໕)

(໘) ຜັນທິຕະ ໙ (໙໗໕)

(໙) ປະປັນຈິຕະ ໙ (໙໗໕)

(໑໐) ສັງຂະຕະ ໙ (໙໗໕)

**ນະວະກະມາຕິກາ ຈົບ**

## ໑໐. ທະສະກະມາຕິກາ

[໙໔໑] (໑) ກິເລສະວັດຖຸ (ສິ່ງກໍ່ຄວາມເສົ້າໝອງ) ໑໐ (໙໗໗)

(໒) ອາຄາຕະວັດຖຸ (ສິ່ງກໍ່ຄວາມອາຄາດ) ໑໐ (໙໗໘)

(໓) ອະກຸສົນກຳມະບົດ (ທາງແຫ່ງອະກຸສົນກຳ) ໑໐ (໙໗໙)

(໔) ສັງໂຍດ (ກິເລດທີ່ປະກອບສັດໄວ້ໃນພົບ) ໑໐ (໙໗໙)

(໕) ມິດສັດຕະ (ຄວາມເຫັນຜິດ) ໑໐ (໙໘໐)

(໖) ມິດສາທິດຖິມີວັດຖຸ (ຄວາມເຫັນຜິດມີ ໑໐ ຢ່າງ) ໑໐ (໙໘໑)

(໗) ອັນຕັກຄາຫິກະທິດຖິມີວັດຖຸ (ຄວາມເຫັນທີ່ຍຶດເອົາບ່ອນສຸດມີ ໑໐ ຢ່າງ) ໑໐ (໙໘໒)

**ທະສະກະມາຕິກາ ຈົບ**

[໙໔໒] ຕັນຫາວິຈະຣິດອາໄສອາຍະຕະນະພາຍໃນ ໑໘ ອາໄສອາຍະຕະນະພາຍນອກ ໑໘ ລວມເຂົ້ານຳກັນເປັນຕັນຫາວິຈະຣິດ ໓໖

ຕັນຫາວິຈະຣິດທີ່ເປັນອະດີດ ໓໖ ທີ່ເປັນອະນາຄົດ ໓໖ ທີ່ເປັນປັດຈຸບັນ ໓໖ ລວມເຂົ້ານຳກັນເປັນຕັນຫາວິຈະຣິດ ໑໐໘ ດ້ວຍປະການດັ່ງນີ້

ທິດຖິ ໖໒ ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ໃນພົມມະຊາລະສູດ

**ມາຕິກາ ຈົບ**

## ໑. ເອກກະນິດເທດ

[໙໔໓] ບັນດາເອກກະມາຕິກາເຫຼົ່ານັ້ນ ຊາຕະມະທະ ເປັນແນວໃດ?

ຄວາມເມົາ ກິຣິຍາທີ່ເມົາ ພາວະທີ່ເມົາ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຊາດ ນີ້ຮຽກວ່າ ຊາຕະມະທະ (໑)

[໗໘໔] ໂຄດຕະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສໂຄດ ນີ້ຮຽກວ່າ ໂຄດຕະມະທະ (໔)

ອາໂຣຄະຍະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມບໍ່ມີໂຣກ ນີ້ຮຽກວ່າ ອາໂຣຄະຍະມະທະ (໓)

ໂຍບພະນະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມເປັນໜຸ່ມເປັນສາວ ນີ້ຮຽກວ່າ ໂຍບພະນະມະທະ (໔)

ຊີວິຕະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຊີວິດ ນີ້ຮຽກວ່າ ຊີວິຕະມະທະ (໕)

ລາພະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສລາບ ນີ້ຮຽກວ່າ ລາພະມະທະ (໖)

ສັກກາຣະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສສັກກາຣະ ນີ້ຮຽກວ່າ ສັກກາຣະມະທະ (໗)

ຄະຣຸກາຣະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມເຄົາລົບ ນີ້ຮຽກວ່າ ຄະຣຸກາຣະມະທະ (໘)

ປຸເຣກະຂາຣະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມເປັນຫົວໜ້າ ນີ້ຮຽກວ່າ ປຸເຣກະຂາຣະມະທະ (໙)

ປະຣິວາຣະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສບໍລິວານ ນີ້ຮຽກວ່າ ປະຣິວາຣະມະທະ (໑໐)

ໂພຄະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສໂພຄະ ນີ້ຮຽກວ່າ ໂພຄະມະທະ (໑໑)

ວັນນະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມຍ້ອງຍໍ ນີ້ຮຽກວ່າ ວັນນະມະທະ (໑໒)

ສຸຕະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສການສະດັບຮັບຟັງຫຼາຍ ນີ້ຮຽກວ່າ ສຸຕະມະທະ (໑໓)

ປະຕິພານະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສປະຕິພານ ນີ້ຮຽກວ່າ ປະຕິພານະມະທະ (໑໔)

ຣັດຕັນຍູມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມເປັນຜູ້ຣັດຕັນຍູ ນີ້ຮຽກວ່າ ຣັດຕັນຍູມະທະ (໑໕)

ປິນດະປາຕິກະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມເປັນຜູ້ຖືທຸ່ງອບິນທະບາດເປັນວັດ ນີ້ຮຽກວ່າ ປິນດະປາຕິກະມະທະ (໑໖)

ອະນະວັນຍາຕະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມທີ່ບໍ່ມີໃຜດູຖູກ ນີ້ຮຽກວ່າ ອະນະວັນຍາຕະມະທະ (໑໗)

ອິຣິຍາປະຖະມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສອິລິຍາບົດ ນີ້ຮຽກວ່າ ອິຣິຍາປະຖະມະທະ (໑໘)

ອິດທິມະທະ ເປັນແນວໃດ?

ຄວາມເມົາ ໆລໆ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສລິດ ນີ້ຮຽກວ່າ ອິດທິມະທະ (໑໙)

ຍະສະມະທະ ເປັນແນວໃດ?

ຄວາມເມົາ ຯລຯ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຍົດ ນີ້ຮຽກວ່າ ຍະສະມະທະ (໔໐)

ສີລະມະທະ ເປັນແນວໃດ?

ຄວາມເມົາ ຯລຯ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສສີນ ນີ້ຮຽກວ່າ ສີລະມະທະ (໔໑)

ຊານະມະທະ ເປັນແນວໃດ?

ຄວາມເມົາ ຯລຯ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຊານ ນີ້ຮຽກວ່າ ຊານະມະທະ (໔໒)

ສິລະປະມະທະ ເປັນແນວໃດ?

ຄວາມເມົາ ຯລຯ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສສິນລະປະ ນີ້ຮຽກວ່າ ສິລະປະມະທະ (໔໓)

ອາໂຣຫະມະທະ ເປັນແນວໃດ?

ຄວາມເມົາ ຯລຯ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມເປັນຜູ້ມີຊວດຊົງສູງ ນີ້ຮຽກວ່າ ອາໂຣຫະມະທະ (໔໔)

ປະຣິນາຫະມະທະ ເປັນແນວໃດ?

ຄວາມເມົາ ຯລຯ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມມີຊວດຊົງສັນທັດ ນີ້ຮຽກວ່າ ປະຣິນາຫະມະທະ (໔໕)

ສັນຖານະມະທະ ເປັນແນວໃດ?

ຄວາມເມົາ ຯລຯ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມມີຊວດຊົງງາມ ນີ້ຮຽກວ່າ ສັນຖານະມະທະ (໔໖)

ປາຣິປູຣິມະທະ ເປັນແນວໃດ?

ຄວາມເມົາ ກິຣິຍາທີ່ເມົາ ພາວະທີ່ເມົາ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີນຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງຍ້ອນອາໄສຄວາມມີຮ່າງກາຍສົມບູນ ນີ້ຮຽກວ່າ ປາຣິປູຣິມະທະ (໔໗)

[໙໔໕] ມະທະ ເປັນແນວໃດ?

ຄວາມເມົາ ກິຣິຍາທີ່ເມົາ ພາວະທີ່ເມົາ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເຊີດຊູຕົນເປັນເໝືອນທຸງ ນີ້ຮຽກວ່າ ມະທະ (໔໙)

[໙໔໖] ປະມາທະ ເປັນແນວໃດ?

ຄວາມປ່ອຍຈິດໄປ ການເພີ່ມພູນຄວາມປ່ອຍຈິດໄປໃນກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼື ໃນກາມມະຄຸນ ໕ ຫຼື ການເຮັດໂດຍບໍ່ເຄົາລົບ ການເຮັດບໍ່ໃຫ້ຕິດຕໍ່ ການເຮັດທີ່ບໍ່ໝັ້ນຄົງ ຄວາມປະພຶດທໍ້ຍໍ່ອນ ຄວາມປະຖິ້ມສັນທະ ຄວາມປະຖິ້ມທຸຣະ ຄວາມບໍ່ເສບ ຄວາມບໍ່ຈະເລີນ ຄວາມບໍ່ເຮັດໃຫ້ຫຼາຍ ຄວາມຕັ້ງໃຈບໍ່ຈິງ ຄວາມບໍ່ໝັ່ນປະກອບ ຄວາມຜະໝາດ ໃນການຈະເລີນສະພາວະທຳທີ່ເປັນກຸສົນທັງຫຼາຍ ຄວາມຜະໝາດ ກິຣິຍາທີ່ຜະໝາດ ພາວະທີ່ຜະໝາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ປະມາທະ (໔໘)

[໙໔໗] ຖຳພະ ເປັນແນວໃດ?

ຄວາມຫົວດື້ ກິຣິຍາທີ່ຫົວດື້ ພາວະທີ່ຫົວດື້ ຄວາມແຂງກະດ້າງ ຄວາມຫຍາບຄາຍ ຄວາມເປັນຜູ້ມີຈິດແຂງກະດ້າງ ຄວາມບໍ່ອ່ອນໂຍນ ນີ້ຮຽກວ່າ ຖຳພະ (໕໐)

[໙໔໘] ສາຣຳພະ ເປັນແນວໃດ?

ຄວາມແຂ່ງດີ ຄວາມແຂ່ງດີຕອບ ກິຣິຍາທີ່ແຂ່ງດີ ກິຣິຍາທີ່ແຂ່ງດີຕອບ ພາວະທີ່ແຂ່ງດີຕອບ ນີ້ຮຽກວ່າ ສາຣຳພະ (໕໑)

[໙໔໙] ອະຕິຣິດສະຕາ ເປັນແນວໃດ?

ຄວາມຢາກໄດ້ຍິ່ງ ໆ ຂຶ້ນໄປຂອງພິກຂຸຜູ້ບໍ່ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຫຼືດ້ວຍກາມມະຄຸນ ໕ ຕາມມີຕາມໄດ້ ຄວາມຢາກໄດ້ ຄວາມປາຖະໜາ ຄວາມຢາກໄດ້ເກີນປະມານ ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອະຕິຣິດສະຕາ (໕໔)

[໙໕໐] ມະຫິດສະຕາ ເປັນແນວໃດ?

ຄວາມຢາກໄດ້ຍິ່ງ ໆ ຂຶ້ນໄປຂອງພິກຂຸຜູ້ບໍ່ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ ຫຼື ດ້ວຍກາມມະຄຸນ ໕ ຕາມມີຕາມໄດ້ ຄວາມຢາກໄດ້ ຄວາມປາຖະໜາ ຄວາມຢາກໄດ້ເກີນປະມານ ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ມະຫິດສະຕາ (໕໕)

[໗໕໑] ປາປິດສະຕາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ບໍ່ມີສັດທາປາຖະໜາວ່າ ຂໍປະຊາຊົນຈົ່ງເຂົ້າໃຈເຮົາວ່າ ເປັນຜູ້ມີສັດທາ ເປັນຜູ້ທຸສິນປາຖະໜາວ່າ ຂໍປະຊາຊົນຈົ່ງເຂົ້າໃຈເຮົາວ່າ ເປັນຜູ້ມີສິນ ເປັນຜູ້ມີສຸຕະໜ້ອຍ ປາຖະໜາວ່າ ຂໍປະຊາຊົນຈົ່ງເຂົ້າໃຈເຮົາວ່າ ເປັນຜູ້ມີສຸຕະຫຼາຍ ເປັນຜູ້ຍິນດີໃນການຄຸກຄີດ້ວຍໝູ່ປາຖະໜາວ່າ ຂໍປະຊາຊົນຈົ່ງເຂົ້າໃຈເຮົາວ່າ ເປັນຜູ້ມັກສະຫງັດ ເປັນຜູ້ຂີ້ຄ້ານປາຖະໜາວ່າ ຂໍປະຊາຊົນຈົ່ງເຂົ້າໃຈເຮົາວ່າ ເປັນຜູ້ພໍ່າເພັງພຽນ ເປັນຜູ້ມີສະຕິຫຼົງລືມປາຖະໜາວ່າ ຂໍປະຊາຊົນຈົ່ງເຂົ້າໃຈເຮົາວ່າ ເປັນຜູ້ມີສະຕິຕັ້ງໝັ້ນ ເປັນຜູ້ມີຈິດບໍ່ເປັນສະມາທິປາຖະໜາວ່າ ຂໍປະຊາຊົນຈົ່ງເຂົ້າໃຈເຮົາວ່າ ເປັນຜູ້ມີຈິດເປັນສະມາທິ ເປັນຜູ້ມີປັນຍາຊາມປາຖະໜາວ່າ ຂໍປະຊາຊົນຈົງເຂົ້າເຮົາວ່າ ເປັນຜູ້ມີປັນຍາ ເປັນຜູ້ຍັງບໍ່ສິ້ນອາສະວະປາຖະໜາວ່າ ຂໍປະຊາຊົນຈົ່ງເຂົ້າໃຈເຮົາວ່າ ເປັນຜູ້ສິ້ນອາສະວະ ຄວາມຢາກໄດ້ ຄວາມປາຖະໜາ ຄວາມປາຖະໜາລາມົກ ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ປາປິດສະຕາ (໖໔)

[໗໕໔] ສິງຄະ ເປັນແນວໃດ?

ຄວາມດຶງດູດ ຄວາມໜ້າຮັກ ຄວາມງາມສະງ່າ ຄວາມສົດໃສ ຄວາມມີສະເໜ່ ຄວາມໃສໄລ ນີ້ຮຽກວ່າ ສິງຄະ (໖໕)

[໗໕໖] ຕິນຕິນະ ເປັນແນວໃດ?

ການເວົ້າກົດກັ້ນ ກິຣິຍາທີ່ເວົ້າກົດກັ້ນ ພາວະທີ່ເວົ້າກົດກັ້ນ ຄວາມລະໂມບ ກິຣິຍາທີ່ລະໂມບ ພາວະທີ່ລະໂມບ ຄວາມຖ່ອມຕົນເພື່ອທີ່ຈະໄດ້ ຄວາມຕ້ອງການສິ່ງທີ່ປະນີດ ນີ້ຮຽກວ່າ ຕິນຕິນະ (໖໖)

[໗໕໔] ຈາປັນຍະ ເປັນແນວໃດ?

ການຕົບແຕ່ງຈີວອນ ການຕົບແຕ່ງບາດ ການຕົບແຕ່ງເສນາສະນະ ການປະດັບຮ່າງກາຍທີ່ເປື່ອຍເນົ່ານີ້ ຫຼື ບໍຣິຂານພາຍນອກ ການປະບຳລຸງຜິວ ການຫຼິ້ນຫົວ ຄວາມຮ່າເຣີງ ຄວາມກຳໜັດຍິນດີ ພາວະທີ່ກຳໜັດຍິນດີ ການຕົບແຕ່ງ ກິຣິຍາທີ່ມັກການຕົບແຕ່ງນີ້ຮຽກວ່າ ຈາປັນຍະ (໖໗)

[໗໕໕] ອະສະພາຄະວຸດຕິ ເປັນແນວໃດ?

ຄວາມບໍ່ປະພຶດຕາມ ຄວາມປະພຶດຂັດຂືນ ຄວາມບໍ່ເອື້ອເຟື້ອ ພາວະທີ່ບໍ່ເອື້ອເຟື້ອ ຄວາມບໍ່ເຄົາລົບ ຄວາມບໍ່ຢຳເກງໃນບຸກຄົນໃດບຸກຄົນໜຶ່ງ ຜູ້ທີ່ຄວນເຄົາລົບ ເຊັ່ນມານດາບິດາ ອ້າຍ ເອື້ອຍ ອາຈານ ອຸປັດຊາ ພຣະພຸດທະເຈົ້າ ຫຼື ພຣະສາວົກ ນີ້ຮຽກວ່າ ອະສະພາຄະວຸດຕິ (໖໘)

[໗໔໖] ອະຣະຕິ ເປັນແນວໃດ?

ຄວາມບໍ່ຍິນດີ ກິຣິຍາທີ່ບໍ່ຍິນດີ ຄວາມບໍ່ຍິນດີຍິ່ງ ກິຣິຍາທີ່ບໍ່ຍິນດີຍິ່ງ ຄວາມລຳຄານ ຄວາມກະວົນກະວາຍໃຈໃນເສນາສະນະທີ່ສະຫງັດ ຫຼື ໃນສະພາວະທຳທີ່ເປັນອະທິກຸສົນ ຄື ສະມະຖະ ແລະວິປັດສະນາແນວໃດແນວໜຶ່ງ ນີ້ຮຽກວ່າ ອະຣະຕິ (໓໙)

[໗໔໗] ຕັນທີ ເປັນແນວໃດ?

ຄວາມງ່ວງຊຶມ ກິຣິຍາທີ່ງ່ວງຊຶມ ພາວະທີ່ງ່ວງຊຶມ ຄວາມຂີ້ຄ້ານ ກິຣິຍາທີ່ຂີ້ຄ້ານ ພາວະທີ່ຂີ້ຄ້ານ ນີ້ຮຽກວ່າ ຕັນທີ (໔໐)

[໗໔໘] ວິຊຳພິຕາ ເປັນແນວໃດ?

ຄວາມບິດກາຍ ກິຣິຍາທີ່ບິດກາຍ ການເອນກາຍໄປຂ້າງໜ້າ ການເອນກາຍມາຂ້າງຫຼັງ ການເອນກາຍໄປຮອບ ການຕັ້ງກາຍໃຫ້ສູງຂຶ້ນ ຄວາມບໍ່ສະບາຍທາງກາຍ ນີ້ຮຽກວ່າ ວິຊຳພິຕາ (໔໑)

[໗໔໙] ພັດຕະສຳມະທະ ເປັນແນວໃດ?

ຄວາມເມົາຍ້ອນອາຫານ ຄວາມອຶດອັດລຳບາກຍ້ອນອາຫານ ຄວາມຮ້ອນຮົນກະວົນກະວາຍຍ້ອນອາຫານ ຄວາມໜັກໂຕຍ້ອນອາຫານ ຂອງຜູ້ຮັບປະທານອາຫານແລ້ວ ນີ້ຮຽກວ່າ ພັດຕະສຳມະທະ (໔໒)

[໗໖໐] ເຈຕະໂສລີນັດຕະ ເປັນແນວໃດ?

ຄວາມບໍ່ຄ່ອງແຫ່ງຈິດ ຄວາມບໍ່ຄວນແກ່ວຽກງານແຫ່ງຈິດ ຄວາມທໍ້ແທ້ ຄວາມທົດຖອຍ ຄວາມຫົດຫູ່ ກິຣິຍາທີ່ຫົດຫູ່ ພາວະທີ່ຫົດຫູ່ ຄວາມທໍ້ຖອຍ ກິຣິຍາທີ່ທໍ້ຖອຍ ພາວະທີ່ຈິດທໍ້ຖອຍ ນີ້ຮຽກວ່າ ເຈຕະໂສລີນັດຕະ (໔໓)

[໗໖໑] ກຸຫະນາ ເປັນແນວໃດ?

ຄວາມຫຼອກລວງດ້ວຍການເສບປັດໄຈ ຄວາມຫຼອກລວງດ້ວຍການກະຊິບໃນບ່ອນໃກ້ ຫຼື ການວາງທ່າທາງອິຣິຍາບົດ ກິຣິຍາທີ່ວາງທ່າທາງອິຣິຍາບົດ ຄວາມດຳຣົງອິຣິຍາບົດດ້ວຍດີ ການປັ້ນສີໜ້າ ພາວະທີ່ປັ້ນສີໜ້າ ຄວາມຫຼອກລວງ ກິຣິຍາທີ່ຫຼອກລວງ ພາວະທີ່ຫຼອກລວງຂອງພິກຂຸຜູ້ມຸ້ງລາບສັກກາຣະແລະຊື່ສຽງ ຜູ້ປາຖະໜາລາມົກ ຖືກຄວາມຢາກຄອບງຳ ນີ້ຮຽກວ່າ ກຸຫະນາ (໔໔)

[໗໖໒] ລະປະນາ ເປັນແນວໃດ?

ການທັກທາຍຜູ້ອື່ນ ການເວົ້າແນະນຳຕົນເອງ ການເວົ້າປອບໂຍນ ການເວົ້າຍ້ອງຍໍການເວົ້າຍ້ອງຍໍໃຫ້ສູງຂຶ້ນທຸກສ່ວນ ການເວົ້າເອົາໃຈຄົນອື່ນ ການເວົ້າເອົາໃຈຄົນອື່ນຢູ່ ເລື້ອຍ ໆ

ການເວົ້າແນະນຳ ການເວົ້າແນະນຳເລື້ອຍ ໆ ການເວົ້າຍ້ອງຍໍເພື່ອຕ້ອງການຈະໃຫ້ເຂົາຮັກ ການເວົ້າເຮັດໃຫ້ຕົນຕໍ່າລົງ ການເວົ້າທີ່ຫຼົ້ນທີ່ຈິງເໝືອນແກງຖົ່ວ ການຮັບລ້ຽງເດັກຂອງພິກຂຸຜູ້ ມຸ້ງລາບສັກກາຣະແລະຊື່ສຽງ ຜູ້ມີຄວາມປາຖະໜາລາມົກ ຖືກຄວາມຢາກຄອບງຳ ນີ້ຮຽກວ່າ ລະປະນາ (໔໕)

[໗໒໖] ເນມິດຕິກະຕາ ເປັນແນວໃດ?

ການທຳນິມິດ ຄວາມສະຫຼາດໃນການທຳນິມິດ ການເວົ້າກ່ຽວຂ້ອງດ້ວຍປັດໄຈ ການເວົ້າເປັນເລດໄນ ການເວົ້າລຽບຄຽງຊຶນເຫຼົ່າອື່ນ ຂອງພິກຂຸຜູ້ມຸ້ງລາບສັກກາຣະແລະຊື່ສຽງຜູ້ມີຄວາມປາຖະໜາລາມົກ ຖືກຄວາມຢາກຄອບງຳ ນີ້ຮຽກວ່າ ເນມິດຕິກະຕາ (໔໖)

[໗໒໔] ນິບເປສິກະຕາ ເປັນແນວໃດ?

ການດ່າ ການເວົ້າຂົ່ມ ການເວົ້ານິນທາ ການເວົ້າຕຳນິໂທດ ການເວົ້າຕຳນິໂທດໜັກ ຂຶ້ນ ການເວົ້າຢຽດຢາມ ການເວົ້າຢຽດຢາມໃຫ້ໜັກຍິ່ງຂຶ້ນ ການເວົ້າໃຫ້ເສຍຊື່ສຽງ ການເວົ້າໃຫ້ເສຍຊື່ສຽງຢ່າງຮ້າຍແຮງ ການນຳເລື້ອງທ່ຽວໄປປະຈານ ການເວົ້າສັນເສີນຕໍ່ໜ້ານິນທາລັບຫຼັງ ຂອງພິກຂຸຜູ້ມຸ້ງລາບສັກກາຣະແລະຊື່ສຽງຜູ້ປາຖະໜາລາມົກ ຖືກຄວາມຢາກຄອບງຳ ນີ້ຮຽກວ່າ ນິບເປສິກະຕາ (໔໗)

[໗໒໕] ລາເພນະລາພັງນິຊິຄີສະນະຕາ ເປັນແນວໃດ?

ພິກຂຸຜູ້ມຸ້ງລາບສັກກາຣະແລະຊື່ສຽງ ຜູ້ມີຄວາມປາຖະໜາລາມົກ ຖືກຄວາມຢາກຄອບງຳ ນຳອາມິດທີ່ໄດ້ຈາກຂ້າງນີ້ໄປໃຫ້ຂ້າງນັ້ນ ຫຼື ທີ່ໄດ້ຈາກຂ້າງນັ້ນໄປໃຫ້ຂ້າງນີ້ ການສະແຫວງຫາ ການເສາະສະແຫວງຫາ ການເສາະສະແຫວງຫາເລື້ອຍ ໆ ກິຣິຍາທີ່ສະແຫວງຫາ ກິຣິຍາທີ່ເສາະສະແຫວງຫາ ກິຣິຍາທີ່ເສາະສະແຫວງຫາເລື້ອຍ ໆ ເຊິ່ງອາມິດດ້ວຍອາມິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ລາເພນະລາພັງນິຊິຄີສະນະຕາ (໔໘)

[໗໒໖] ຄວາມຖືຕົວວ່າເປັນຜູ້ເລີດກວ່າເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຖືຕົວໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ໂດຍຄວາມເປັນຜູ້ມີຮູບງາມ ໂດຍຊັບ ໂດຍຄວາມເປັນໃຫຍ່ ໂດຍໜ້າທີ່ວຽກງານ ໂດຍສິລະປະ ໂດຍວິທະຍະຖານະ ໂດຍການສຶກສາ ຫຼື ໂດຍປະຕິພານ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ການເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ຄວາມຖືຕົວວ່າ ເປັນຜູ້ເລີດກວ່າເຂົາ (໔໙)

[໗໒໗] ຄວາມຖືຕົວວ່າເປັນຜູ້ສະເໝີເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຖືຕົວໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ໂດຍຄວາມເປັນຜູ້ມີຮູບງາມ ໂດຍຊັບ ໂດຍຄວາມເປັນໃຫຍ່ ໂດຍໜ້າທີ່ວຽກງານ ໂດຍສິລະປະ ໂດຍວິທະຍະຖານະ ໂດຍການສຶກສາ ຫຼື ໂດຍປະຕິພານ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫິ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ

ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ຄວາມຖືຕົວວ່າ ເປັນຜູ້ສະເໝີເຂົາ (໕໐)

[໗໕໗] ຄວາມຖືຕົວວ່າ ເປັນຜູ້ດ້ອຍກວ່າເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ດູຖູກຕົນເອງໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ໂດຍຄວາມເປັນຜູ້ມີຮູບງາມ ໂດຍຊັບ ໂດຍຄວາມເປັນໃຫຍ່ ໂດຍໜ້າທີ່ວຽກງານ ໂດຍສິລະປະ ໂດຍວິທະຍະຖານະ ໂດຍການສຶກສາ ຫຼືໂດຍປະຕິພານ ຄວາມດູຖູກ ກິຣິຍາທີ່ດູຖູກ ພາວະທີ່ດູຖູກ ຄວາມກຽດຊັງຕົນ ຄວາມກຽດຊັງຕົນຍິ່ງ ພາວະທີ່ກຽດຊັງຕົນເປັນຢ່າງຍິ່ງ ຄວາມດູຖູກຕົນ ຄວາມດູຖູກຕົນວ່າຕ່ຳຕ້ອຍ ຄວາມດູແຄນຕົນ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ຄວາມຖືຕົວວ່າ ເປັນຜູ້ດ້ອຍກວ່າເຂົາ (໕໑)

[໗໕໙] ເປັນຜູ້ເລີດກວ່າເຂົາ ຖືຕົວວ່າ ເລີດກວ່າເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ເລີດກວ່າເຂົາ ຖືຕົວວ່າ ເລີດກວ່າຄົນອື່ນ ໆ ໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ໂດຍຄວາມເປັນຜູ້ມີຮູບງາມ ໂດຍຊັບ ໂດຍຄວາມເປັນໃຫຍ່ ໂດຍໜ້າທີ່ວຽກງານ ໂດຍສິລະປະ ໂດຍວິທະຍະຖານະ ໂດຍການສຶກສາ ຫຼື ໂດຍປະຕິພານ ເຂົາອາໄສການຖືຕົວວ່າເລີດກວ່າຄົນອື່ນ ໆ ເຊັ່ນນີ້ແລ້ວຖືຕົວ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫິ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ເປັນຜູ້ເລີດກວ່າເຂົາ ຖືຕົວວ່າເລີດກວ່າເຂົາ (໕໔)

[໗໗໐] ເປັນຜູ້ເລີດກວ່າເຂົາ ຖືຕົວວ່າສະເໝີເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ເລີດກວ່າເຂົາ ຖືຕົວວ່າສະເໝີກັບຄົນອື່ນ ໆ ໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ໂດຍຄວາມເປັນຜູ້ມີຮູບງາມ ໂດຍຊັບ ໂດຍຄວາມເປັນໃຫຍ່ ໂດຍໜ້າທີ່ວຽກງານ ໂດຍສິລະປະ ໂດຍວິທະຍະຖານະ ໂດຍການສຶກສາ ຫຼື ໂດຍປະຕິພານ ເຂົາອາໄສຄວາມຖືຕົວວ່າສະເໝີກັບຄົນອື່ນ ໆ ເຊັ່ນນີ້ແລ້ວຖືຕົວ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫິ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ເປັນຜູ້ເລີດກວ່າເຂົາ ຖືຕົວວ່າສະເໝີເຂົາ (໕໓)

[໘໗໑] ເປັນຜູ້ເລີດກວ່າເຂົາ ຖືຕົວວ່າດ້ອຍກວ່າເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ເລີດກວ່າເຂົາ ຖືຕົວວ່າດ້ອຍກວ່າຄົນອື່ນ ໆ ໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ໂດຍຄວາມເປັນຜູ້ມີຮູບງາມ ໂດຍຊັບ ໂດຍຄວາມເປັນໃຫຍ່ ໂດຍໜ້າທີ່ວຽກງານ ໂດຍສິນລະປະ ໂດຍວິທະຍະຖານະ ໂດຍການສຶກສາ ຫຼື ໂດຍປະຕິພານ ເຂົາອາໄສຄວາມຖືຕົວວ່າດ້ອຍກວ່າຄົນອື່ນ ໆ ເຊັ່ນນັ້ນແລ້ວດູຖູກຕົນ ຄວາມດູຖູກຕົນ ກິຣິຍາທີ່ດູຖູກຕົນ ພາວະທີ່ດູຖູກຕົນ ຄວາມກຽດຊັງຕົນ ກິຣິຍາທີ່ກຽດຊັງຕົນຍິ່ງ ພາວະທີ່ກຽດຊັງຕົນເປັນຢ່າງຍິ່ງ ຄວາມດູຖູກຕົນ ຄວາມດູຖູກຕົນວ່າຕ່ຳຕ້ອຍ ຄວາມດູແຄນຕົນ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ເປັນຜູ້ເລີດກວ່າເຂົາ ຖືຕົວວ່າດ້ອຍກວ່າເຂົາ (໕໔)

[໘໗໔] ເປັນຜູ້ສະເໝີເຂົາ ຖືຕົວວ່າເລີດກວ່າເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ສະເໝີເຂົາ ຖືຕົວວ່າເລີດກວ່າຄົນອື່ນ ໆ ໂດຍເຫດຢ່າງໃດຢ່າງໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ຯລຯ ເຂົາອາໄສຄວາມຖືຕົວວ່າເລີດກວ່າຄົນອື່ນ ໆ ເຊັ່ນນັ້ນແລ້ວຖືຕົວ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ເປັນຜູ້ສະເໝີເຂົາ ຖືຕົວວ່າເລີດກວ່າເຂົາ (໕໕)

[໘໗໓] ເປັນຜູ້ສະເໝີເຂົາ ຖືຕົວວ່າສະເໝີເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ສະເໝີເຂົາ ຖືຕົວວ່າສະເໝີກັບຄົນອື່ນ ໆ ໂດຍເຫດຢ່າງໃດຢ່າງໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ຯລຯ ເຂົາອາໄສຄວາມຖືຕົວວ່າສະເໝີກັບຄົນອື່ນ ໆ ເຊັ່ນນັ້ນແລ້ວຖືຕົວ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ເປັນຜູ້ສະເໝີເຂົາ ຖືຕົວວ່າສະເໝີເຂົາ (໕໖)

[໘໗໔] ເປັນຜູ້ສະເໝີເຂົາ ຖືຕົວວ່າດ້ອຍກວ່າເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ສະເໝີເຂົາ ຖືຕົວວ່າດ້ອຍກວ່າຄົນອື່ນ ໆ ໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ຯລຯ ເຂົາອາໄສຄວາມຖືຕົວວ່າດ້ອຍກວ່າຄົນອື່ນ ໆ ເຊັ່ນນັ້ນແລ້ວດູຖູກຕົນ ຄວາມດູຖູກຕົນ ກິຣິຍາທີ່ດູຖູກຕົນ ພາວະທີ່ດູຖູກຕົນ ຄວາມກຽດຊັງຕົນ ກິຣິຍາທີ່ກຽດຊັງຕົນຍິ່ງ ພາວະທີ່ກຽດຊັງຕົນເປັນຢ່າງຍິ່ງ ຄວາມດູຖູກຕົນ ຄວາມດູຖູກຕົນວ່າຕ່ຳຕ້ອຍ ຄວາມດູແຄນຕົນມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ເປັນຜູ້ສະເໝີເຂົາ ຖືຕົວວ່າດ້ອຍກວ່າເຂົາ (໕໗)

[໗໗໔] ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າເລີດກວ່າເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າເລີດກວ່າຄົນອື່ນ ໆ ໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ຯລຯ ເຂົາອາໄສຄວາມຖືຕົວວ່າເລີດກວ່າຄົນອື່ນ ໆ ເຊັ່ນນັ້ນແລ້ວຖືຕົວ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າເລີດກວ່າເຂົາ (໔໗)

[໗໗໖] ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າສະເໝີເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າສະເໝີກັບຄົນອື່ນ ໆ ໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ຯລຯ ເຂົາອາໄສຄວາມຖືຕົວວ່າສະເໝີກັບຄົນອື່ນ ໆ ເຊັ່ນນັ້ນແລ້ວຖືຕົວ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າສະເໝີເຂົາ (໔໙)

[໗໗໗] ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າດ້ອຍກວ່າເຂົາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າດ້ອຍກວ່າຄົນອື່ນ ໆ ໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ຯລຯ ເຂົາອາໄສຄວາມຖືຕົວວ່າດ້ອຍກວ່າຄົນອື່ນ ໆ ເຊັ່ນນັ້ນແລ້ວດູຖູກຕົນ ຄວາມດູຖູກຕົນ ກິຣິຍາທີ່ດູຖູກຕົນ ພາວະທີ່ດູຖູກຕົນ ຄວາມກຽດຊັງຕົນ ກິຣິຍາທີ່ກຽດຊັງຕົນ ພາວະທີ່ກຽດຊັງຕົນ ຄວາມດູຖູກຕົນ ຄວາມດູຖູກຕົນວ່າຕ່ຳຕ້ອຍ ຄວາມດູແຄນຕົນມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າດ້ອຍກວ່າເຂົາ (໖໐)

[໗໗໘] ມານະ ເປັນແນວໃດ?

ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ນີ້ຮຽກວ່າ ມານະ (໖໑)

[໗໗໙] ອະຕິມານະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ດູຖູກຄົນອື່ນ ໆ ໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ຯລຯ ຄວາມຖືຕົວ ກິຣິຍາທີ່ຖືຕົວພາວະທີ່ຖືຕົວ

ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອະຕິມານະ (໖໘)

[໙໒໐] ມານາຕິມານະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເບື້ອງຕົ້ນຖືຕົວວ່າສະເໝີກັບຄົນອື່ນ ໆ ຕໍ່ມາຖືຕົວວ່າເລີດກວ່າຄົນອື່ນ ໆ ໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ຯລຯ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ມານາຕິມານະ (໖໙)

[໙໒໑] ໂອມານະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ດູຖູກຕົນເອງໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ໂດຍຄວາມເປັນຜູ້ມີຮູບງາມ ໂດຍຊັບ ໂດຍຄວາມເປັນໃຫຍ່ ໂດຍໜ້າທີ່ວຽກງານ ໂດຍສິລະປະ ໂດຍວິທະຍະຖານະ ໂດຍການສຶກສາ ຫຼືໂດຍປະຕິພານ ຄວາມດູຖູກຕົນ ກິຣິຍາທີ່ດູຖູກຕົນ ພາວະທີ່ດູຖູກຕົນ ຄວາມກຽດຊັງຕົນ ກິຣິຍາທີ່ກຽດຊັງຕົນ ພາວະທີ່ກຽດຊັງຕົນ ຄວາມດູຖູກຕົນວ່າຕ່ຳຕ້ອຍ ຄວາມດູແຄນຕົນມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ໂອມານະ (໗໔)

[໙໒໔] ອະທິມານະ ເປັນແນວໃດ?

ຄວາມສຳຄັນທຳທີ່ຕົນຍັງບໍ່ໄດ້ບັນລຸວ່າບັນລຸແລ້ວ ຄວາມສຳຄັນກິດທີ່ຕົນຍັງບໍ່ໄດ້ເຮັດວ່າເຮັດແລ້ວ ຄວາມສຳຄັນທຳທີ່ຕົນຍັງບໍ່ໄດ້ບັນລຸວ່າບັນລຸແລ້ວ ຄວາມສຳຄັນທຳທີ່ຕົນ ຍັງບໍ່ໄດ້ເຮັດໃຫ້ແຈ້ງວ່າເຮັດໃຫ້ແຈ້ງແລ້ວ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອະທິມານະ (໗໕)

[໙໒໓] ອັດສະມິມານະ ເປັນແນວໃດ?

ຄວາມສຳຄັນວ່າເຮົາເປັນຮູບ ຄວາມພໍໃຈວ່າເຮົາເປັນຮູບ ຄວາມເຂົ້າໃຈວ່າເຮົາເປັນຮູບ ຄວາມສຳຄັນວ່າເຮົາເປັນເວທະນາ ຯລຯ ເຮົາເປັນສັນຍາ ຯລຯ ເຮົາເປັນສັງຂານ ຯລຯ ເຮົາເປັນວິນຍານ ຄວາມພໍໃຈວ່າເຮົາເປັນວິນຍານ ຄວາມເຂົ້າໃຈວ່າເຮົາເປັນວິນຍານ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫີ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອັດສະມິມານະ (໖໖)

[໙໘໔] ມົດສາມານະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຖືຕົວໂດຍເຫດແນວໃດແນວໜຶ່ງ ຄື ໂດຍໜ້າທີ່ວຽກງານ ໂດຍສິລະປະ ໂດຍວິທະຍະຖານະ ໂດຍການສຶກສາ ໂດຍປະຕິພານ ໂດຍສີນ ໂດຍພົດ ໂດຍສີນແລະພົດ ຫຼື ໂດຍທິດຖິ ອັນລາມົກ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມລຳພອງຕົນ ຄວາມທະນົງຕົນ ຄວາມເຊີດຊູຕົນເປັນເໝືອນທຸງ ຄວາມເຫິ່ເຫີມ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ມົດສາມານະ (໖໗)

[໙໘໕] ຍາຕະວິຕັກກະ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດທີ່ອາໄສເຮືອນ ຜາຣົບໝູ່ຍາດພີ່ນ້ອງ ນີ້ຮຽກວ່າ ຍາຕະວິຕັກກະ (໖໘)

[໙໘໖] ຊະນະປະທະວິຕັກກະ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດທີ່ອາໄສເຮືອນ ຜາຣົບຊົນນະບົດ ນີ້ຮຽກວ່າ ຊະນະປະທະວິຕັກກະ (໖໙)

[໙໘໗] ອະມະຣະວິຕັກກະ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດທີ່ອາໄສເຮືອນ ປະກອບດ້ວຍທຸກກະຣະກິຣິຍາ ຫຼື ປະກອບດ້ວຍທິດຖິ ນີ້ຮຽກວ່າ ອະມະຣະວິຕັກກະ (໗໐)

[໙໘໘] ປານຸດທະຍະຕາປະຕິສັງຍຸດຕະວິຕັກກະ ເປັນແນວໃດ?

ສະມະນະພາມບາງຄົນໃນໂລກນີ້ຢູ່ຄຸກຄີກັບຄະລຶຫັດມີຄວາມຮື່ນເຣີງຮ່ວມກັນມີຄວາມໂສກເສົ້າຮ່ວມກັນ ເຖິງເວລາເຂົາສຸກກໍສຸກນຳເຂົາ ເຖິງເວລາເຂົາທຸກກໍທຸກນຳເຂົາ ເມື່ອເຂົາມີກິດທີ່ຈະເພິ່ງເຮັດເກີດຂຶ້ນກໍພະຍາຍາມຊ່ອຍເຮັດດ້ວຍຕົນເອງ ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດທີ່ອາໄສເຮືອນ ຍ້ອນການຢູ່ຄຸກຄີດ້ວຍຄະລຶຫັດນັ້ນ ນີ້ຮຽກວ່າ ປານຸດທະຍະຕາປະຕິສັງຍຸດຕະວິຕັກກະ (໗໑)

[໙໘໙] ລາພະສັກກາຣະສິໂລກປະຕິສັງຍຸດຕະວິຕັກກະ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດທີ່ອາໄສເຮືອນ[໑] ຜາຣົບລາບສັກກາຣະແລະຊື່ສຽງ ນີ້ຮຽກວ່າ ລາພະສັກກາຣະສິໂລກະປະຕິສັງຍຸດຕະວິຕັກກະ (໗໔)

[໙໙໐] ອະນະວັນຍັດຕິປະຕິສັງຍຸດຕະວິຕັກກະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ຮ່ຳເພິງວ່າ ຄົນເຫຼົ່າອື່ນຢ່າໄດ້ດູຖູກເຮົາໂດຍເຫດແນວໃດແນວໜຶ່ງ ຄື ໂດຍຊາດ ໂດຍໂຄດ ໂດຍຄວາມເປັນບຸດຂອງຜູ້ມີຕະກູນ ໂດຍຄວາມເປັນຜູ້ມີຮູບງາມໂດຍຊັບ ໂດຍຄວາມເປັນໃຫຍ່ ໂດຍໜ້າທີ່ວຽກງານ ໂດຍສິລະປະ ໂດຍວິທະຍະຖານະ ໂດຍ

ການສຶກສາ ຫຼື ໂດຍປະຕິພານ ຄວາມນຶກ ຄວາມຄິດໂດຍອາການ ຕ່າງ ໆ ຄວາມດຳຣິຜິດທີ່ອາໄສເຮືອນ ຍ້ອນຄວາມບໍ່ຢາກໃຫ້ໃຜດູຖູກນັ້ນ ນີ້ຮຽກວ່າ ອະນະວັນຍັດຕິປະຕິສັງຍຸດຕະວິຕັກກະ (໗໙)

**ເອກກະນິດເທດ ຈົບ**

## ໒. ທຸກກະນິດເທດ

[໗໙໑] ບັນດາມາຕິກາເຫຼົ່ານັ້ນ ໂກທະ ເປັນແນວໃດ?

ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມຍິນຮ້າຍ ຄວາມຍິນຮ້າຍຕອບ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມທີ່ຈິດບໍ່ເບີກບານ ນີ້ຮຽກວ່າ ໂກທະ (໑)

ອຸປະນາຫະ ເປັນແນວໃດ?

ຄວາມໂກດຄັ້ງທຳອິດຊື່ວ່າຄວາມໂກດ ຄວາມໂກດໃນເວລາຕໍ່ມາຊື່ວ່າ ຄວາມຜູກໂກດ ຄາມຜູກໂກດ ກິຣິຍາທີ່ຜູກໂກດ ພາວະທີ່ຜູກໂກດ ການບໍ່ຢຸດໂກດ ການຕັ້ງຄວາມໂກດໄວ້ ການດຳຣົງຄວາມໂກດໄວ້ ການເວີນລົງໄປຕາມຄວາມໂກດ ການນຳໄປຜູກຄວາມໂກດໄວ້ ການເຮັດຄວາມຜູກໂກດໄວ້ໃຫ້ໝັ້ນ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອຸປະນາຫະ (໑)

[໗໙໒] ມັກຂະ ເປັນແນວໃດ?

ຄວາມລົບຫຼູ່ຄຸນທ່ານ ກິຣິຍາທີ່ລົບຫຼູ່ຄຸນທ່ານ ພາວະທີ່ລົບຫຼູ່ຄຸນທ່ານ ຄວາມດູຖູກ ການເຮັດຄວາມດູຖູກ ນີ້ຮຽກວ່າ ມັກຂະ

ປະລາສະ ເປັນແນວໃດ?

ຄວາມຕີສະເໝີ ກິຣິຍາທີ່ຕີສະເໝີ ພາວະທີ່ຕີສະເໝີ ສະພາວະທຳທີ່ເປັນອາຫານແຫ່ງການຕີສະເໝີໂດຍນຳເອົາຄວາມຊະນະຂອງຕົນມາອ້າງ ເຫດແຫ່ງຄວາມວິວາທະ ຄວາມແຂ່ງດີ ຄວາມບໍ່ຍອມສະລະ ນີ້ຮຽກວ່າ ປະລາສະ (໒)

[໗໙໓] ອິດສາ ເປັນແນວໃດ?

ຄວາມຣິດສະຫຍາ ກິຣິຍາທີ່ຣິດສະຫຍາ ພາວະທີ່ຣິດສະຫຍາ ຄວາມກຽດຊັງ ກິຣິຍາທີ່ກຽດຊັງ ພາວະທີ່ກຽດຊັງ ໃນເມື່ອຄົນອື່ນໄດ້ລາບສັກກາຣະ ໄດ້ຮັບຄວາມເຄົາລົບ ຄວາມນັບຖື ການຂາບໄຫວ້ ແລະການບູຊາ ນີ້ຮຽກວ່າ ອິດສາ

ມັດສະຣິຍະ ເປັນແນວໃດ?

ມັດສະຣິຍະ ໕ ຄື

໑. ອາວາສະມັດສະຣິຍະ (ຂີ້ຖີ່ບ່ອນຢູ່)
໒. ກຸລະມັດສະຣິຍະ (ຂີ້ຖີ່ຕະກູນ)
໓. ລາພະມັດສະຣິຍະ (ຂີ້ຖີ່ລາບ)
໔. ວັນນະມັດສະຣິຍະ (ຂີ້ຖີ່ວັນນະຫຼືຄຸນຄວາມດີ)
໕. ທຳມະມັດສະຣິຍະ (ຂີ້ຖີ່ທຳ)

ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມຫວງແຫນ ຄວາມໜຽວແໜ້ນ ຄວາມປົກປິດ ຄວາມມີຈິດຫວງແຫນ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ມັດສະຣິຍະ (໓)

[໗໙໔] ມາຍາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ປະພຶດທຸດຈະຣິດດ້ວຍກາຍ ວາຈາ ແລະໃຈແລ້ວຕັ້ງຄວາມປາຖະໜາລາມົກໄວ້ຍ້ອນມີຄວາມຕ້ອງການຈະປົກປິດທຸດຈະຣິດນັ້ນເປັນເຫດ ຄື ປາຖະໜາວ່າ ຂໍໃຜຢ່າໄດ້ຮູ້ທັນເຮົາ ດຳຣິວ່າ ຂໍໃຜຢ່າໄດ້ຮູ້ທັນເຮົາ ເວົ້າວ່າ ຂໍໃຜຢ່າໄດ້ຮູ້ທັນເຮົາ ຂວນຂວາຍດ້ວຍກາຍວ່າ ຂໍໃຜຢ່າໄດ້ຮູ້ທັນເຮົາ ຄວາມເຈົ້າເລ້ ຄວາມເປັນຄົນເຈົ້າເລ້ ກິຣິຍາທີ່ຫຼອກໃຫ້ຫຼົງ ຄວາມລວງ ຄວາມໂກງ ຄວາມປົກປິດ ຄວາມຫຼີກລ່ຽງ ຄວາມເຊື່ອງ ຄວາມຊຸກເຊື່ອງ ຄວາມປົກປິດ ຄວາມປິດບັງ ການກະທຳບໍ່ຊັດເຈນ ການບໍ່ເຮັດໃຫ້ແຈ້ງ ການປົກປິດມິດຊິດ ການກະທຳທີ່ຊົ່ວ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ມາຍາ

ສາເຖີຍຍະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ໂອ້ອວດ ເປັນຜູ້ໂອ້ອວດແຮງ ຄວາມໂອ້ອວດ ກິຣິຍາທີ່ໂອ້ອວດ ພາວະທີ່ໂອ້ອວດ ຄວາມກະດ້າງ ການເວົ້າມີຫຼຽມຄູ ພາວະທີ່ກະດ້າງໃນບຸກຄົນນັ້ນ ນີ້ຮຽກວ່າ ສາເຖີຍຍະ (໔)

[໗໙໕] ອະວິດຊາ ເປັນແນວໃດ?

ຄວາມບໍ່ຮູ້ ຄວາມບໍ່ເຫັນ ฯລฯ ຫຼົ້ມ ຄື ອະວິດຊາ ອະກຸສົນມູນ ຄື ໂມຫະ ນີ້ຮຽກວ່າ ອະວິດຊາ

ພະວະຕັນຫາ ເປັນແນວໃດ?

ຄວາມພໍໃຈໃນພົບ ຄວາມຍິນດີໃນພົບ ຄວາມເພີດເພີນໃນພົບ ຄວາມປາຖະໜາພົບ ຄວາມເຍື່ອໃຍໃນພົບ ຄວາມຮ້ອນຮົນຍ້ອນພົບ ຄວາມສະຍົບໃນພົບ ຄວາມມົກມຸ່ນໃນພົບ ນີ້ຮຽກວ່າ ພະວະຕັນຫາ (໕)

[໗໙໖] ພະວະທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກຈັກມີ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖື ໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ພະວະທິດຖິ

ວິພະວະທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກຈັກບໍ່ມີ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖື ໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ວິພະວະທິດຖິ (໖)

[໗໙໗] ສັດສະຕະທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກທ່ຽງ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖື ໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສັດສະຕະທິດຖິ

ອຸດເສທະທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກຂາດສູນ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອຸດເສທະທິດຖິ (໗)

[໗໙໘] ອັນຕະວາທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກມີບ່ອນສຸດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອັນຕະວາທິດຖິ

ອະນັນຕະວາທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກບໍ່ມີບ່ອນສຸດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອະນັນຕະວາທິດຖິ (໘)

[໗໙໙] ປຸບພັນຕານຸທິດຖິ ເປັນແນວໃດ?

ທິດຖິ ທຳມະຊາດທີ່ນັບວ່າທິດຖິ ຯລຯ ຄວາມຢຶດຖືໂດຍວິປະລາດ ພາຣົບສ່ວນອະດີດເກີດຂຶ້ນ ນີ້ຮຽກວ່າ ປຸບພັນຕານຸທິດຖິ

ອະປະຣັນຕານຸທິດຖິ ເປັນແນວໃດ?

ທິດຖິ ທຳມະຊາດທີ່ນັບວ່າທິດຖິ ຯລຯ ຄວາມຢຶດຖືໂດຍວິປະລາດ ພາຣົບສ່ວນອະນາຄົດເກີດຂຶ້ນ ນີ້ຮຽກວ່າ ອະປະຣັນຕານຸທິດຖິ (໙)

[໙໐໐] ອະຫິຣິກະ ເປັນແນວໃດ?

ຄວາມບໍ່ລະອາຍຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນລະອາຍ ຄວາມບໍ່ລະອາຍຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ອະຫິຣິກະ

ອະໂນດັບປະ ເປັນແນວໃດ?

ຄວາມບໍ່ເກງກົວຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນເກງກົວ ຄວາມບໍ່ເກງກົວຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ອະໂນດັບປະ (໑໐)

[໘໐໑] ໂທວະຈັດສະຕາ ເປັນແນວໃດ?

ຄວາມເປັນຜູ້ວ່າຍາກ ກິຣິຍາທີ່ເປັນຜູ້ວ່າຍາກ ພາວະທີ່ເປັນຜູ້ວ່າຍາກ ຄວາມຍຶດຖືຂ້າງຂັດຂືນ ຄວາມພໍໃຈທາງໂຕ້ແຍ້ງ ຄວາມບໍ່ເອື້ອເຟື້ອ ກິຣິຍາທີ່ບໍ່ເອື້ອເຟື້ອ ຄວາມບໍ່ເຄົາລົບ ຄວາມບໍ່ເຊື່ອຟັງໃນເມື່ອຖືກວ່າກ່າວໂດຍຊອບທຳ ນີ້ຮຽກວ່າ ໂທວະຈັດສະຕາ

ປາປະມິດຕະຕາ ເປັນແນວໃດ?

ບຸກຄົນເຫຼົ່າໃດບໍ່ມີສັດທາ ບໍ່ມີສີນ ມີການສຶກສາໜ້ອຍ ມີຄວາມຂີ້ຖີ່ ມີປັນຍາຊາມ ການເສບ ການເສບເປັນນິດ ການເສບດ້ວຍດີ ການຄົບ ການຄົບດ້ວຍດີ ຄວາມພັກດີ ຄວາມຈົງຮັກພັກດີຕໍ່ບຸກຄົນເຫຼົ່ານັ້ນ ຄວາມເປັນຜູ້ຮ່ວມພວກກັບບຸກຄົນເຫຼົ່ານັ້ນ ນີ້ຮຽກວ່າ ປາປະມິດຕະຕາ (໑໑)

[໘໐໒] ອະນັດຊະວະ ເປັນແນວໃດ?

ຄວາມບໍ່ຊື່ຕົງ ພາວະທີ່ບໍ່ຊື່ຕົງ ຄວາມຄົດ ຄວາມງໍ ຄວາມໂກງ ນີ້ຮຽກວ່າ ອະນັດຊະວະ

ອະມັດທະວະ ເປັນແນວໃດ?

ຄວາມບໍ່ອ່ອນໂຍນ ພາວະທີ່ບໍ່ອ່ອນ ຄວາມກະດ້າງ ຄວາມຫຍາບຄາຍ ພາວະທີ່ກະດ້າງ ຄວາມແຂງກະດ້າງ ຄວາມມີຈິດແຂງກະດ້າງ ຄວາມບໍ່ອ່ອນໂຍນ ນີ້ຮຽກວ່າ ອະມັດທະວະ (໑໒)

[໘໐໓] ອະຂັນຕິ ເປັນແນວໃດ?

ຄວາມບໍ່ອົດທົນ ພາວະທີ່ບໍ່ອົດທົນ ຄວາມບໍ່ອົດກັ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມທີ່ຈິດບໍ່ເບີກບານ ນີ້ຮຽກວ່າ ອະຂັນຕິ

ອະໂສຣັດຈະ ເປັນແນວໃດ?

ຄວາມລ່ວງລະເມີດທາງກາຍ ຄວາມລ່ວງລະເມີດທາງວາຈາ ຄວາມລ່ວງລະເມີດທາງກາຍແລະທາງວາຈາ ນີ້ຮຽກວ່າ ຄວາມບໍ່ສະງ່ຽມ ຄວາມເປັນຜູ້ທຸສີນແມ່ນທັງໝົດຮຽກວ່າອະໂສຣັດຈະ (໑໓)

[໘໐໔] ອະສາຂັນລະຍະ ເປັນແນວໃດ?

ວາຈາໃດເປັນປົມ ຫຍາບຄາຍ ເຜັດຮ້ອນຕໍ່ຜູ້ອື່ນ ກະທົບກະທັ່ງຜູ້ອື່ນ ໃກ້ຕໍ່ຄວາມໂກດ ບໍ່ເປັນໄປເພື່ອສະມາທິ ບຸກຄົນເປັນຜູ້ເວົ້າວາຈາເຊັ່ນນັ້ນ ຄວາມເປັນຜູ້ມີວາຈາບໍ່ອ່ອນຫວານ ຄວາມເປັນຜູ້ມີວາຈາບໍ່ລະມຸນລະໄມ ຄວາມເປັນຜູ້ມີວາຈາຫຍາບ ໃນລັກສະນະດັ່ງກ່າວນັ້ນນີ້ຮຽກວ່າ ອະສາຂັນລະຍະ

ອັບປະຕິສັນຖານ ເປັນແນວໃດ?

ປະຕິສັນຖານ ໔ ຄື ອາມິດປະຕິສັນຖານ ແລະທຳມະປະຕິສັນຖານ ບຸກຄົນບາງຄົນໃນໂລກນີ້ເປັນຜູ້ບໍ່ກະທຳການປະຕິສັນຖານດ້ວຍອາມິດປະຕິສັນຖານ ຫຼື ດ້ວຍທຳມະປະຕິສັນຖານ ນີ້ຮຽກວ່າ ອັບປະຕິສັນຖານ (໑໔)

[໙໐໕] ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຫັນຮູບດ້ວຍຈັກຂຸແລ້ວລວມຖື ແຍກຖື ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດຄອບງຳໄດ້ ບໍ່ປະຕິບັດເພື່ອສັງລວມໃນຈັກຂຸນຊີ ບໍ່ຮັກສາຈັກຂຸນຊີ ບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງ ດ້ວຍຫູ ຯລຯ ສູບກິ່ນດ້ວຍດັງ ຯລຯ ຊີມຣົດດ້ວຍລີ້ນ ຯລຯ ຖືກຕ້ອງໂຜດຖັບພະດ້ວຍກາຍ ຯລຯ ຮູ້ທຳມາຣົມດ້ວຍໃຈແລ້ວລວມຖື ແຍກຖື ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳ ຄື ອະພິດຊາແລະໂທມະນັດຄອບງຳໄດ້ບໍ່ປະຕິບັດເພື່ອສັງລວມໃນມະນິນຊີນັ້ນ ບໍ່ຮັກສາມະນິນຊີ ບໍ່ເຖິງຄວາມສັງລວມໃນມະນິນຊີ ຄວາມບໍ່ຄຸ້ມຄອງ ກິຣິຍາທີ່ບໍ່ຄຸ້ມຄອງ ຄວາມບໍ່ຮັກສາ ຄວາມບໍ່ສັງລວມໃນອິນຊີ ໖ ເຫຼົ່ານີ້ ນີ້ຮຽກວ່າ ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ

ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບໍ່ພິຈາລະນາໂດຍແຍບຄາຍຍ່ອມບໍຣິໂພກອາຫານເພື່ອຫຼິ້ນ ເພື່ອຄວາມມົວເມົາ ເພື່ອໃຫ້ຜິວພັນສວຍງາມ ເພື່ອຄວາມຕຸ້ຍພີ ຄວາມບໍ່ສັນໂດດ ຄວາມບໍ່ຮູ້ຈັກປະມານ ຄວາມບໍ່ພິຈາລະນາໃນໂພຊະນະນັ້ນ ນີ້ຮຽກວ່າ ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ (໑໕)

[໙໐໖] ມູດຖັດສັດຈະ ເປັນແນວໃດ?

ຄວາມຣະລຶກບໍ່ໄດ້ ຄວາມຫວນຣະລຶກບໍ່ໄດ້ ຄວາມຣະລຶກຍ້ອນຫຼັງບໍ່ໄດ້ ຄວາມຣະລຶກບໍ່ໄດ້ ພາວະທີ່ຣະລຶກບໍ່ໄດ້ ພາວະທີ່ຊົງຈຳບໍ່ໄດ້ ຄວາມເລື່ອນລອຍ ຄວາມຫຼົງລືມສະຕິ ນີ້ຮຽກວ່າ ມູດຖັດສັດຈະ

ອະສຳປະຊັນຍະ ເປັນແນວໃດ?

ຄວາມບໍ່ຮູ້ ຄວາມບໍ່ເຫັນ ຯລຯ ຫຼົ້ມ ຄື ອະວິດຊາ ອະກຸສົນມູນ ຄື ໂມຫະ ນີ້ຮຽກວ່າ ອະສຳປະຊັນຍະ (໑໖)

[໙໐໗] ສີລະວິບັດ ເປັນແນວໃດ?

ຄວາມລ່ວງລະເມີດທາງກາຍ ຄວາມລ່ວງລະເມີດທາງວາຈາ ຄວາມລ່ວງລະເມີດທາງກາຍແລະທາງວາຈາ ນີ້ຮຽກວ່າ ສີລະວິບັດ ຄວາມເປັນຜູ້ທຸສິນແມ່ນທັງໝົດຊື່ວ່າ ສີລະວິບັດ

ທິດຖິວິບັດ ເປັນແນວໃດ?

ຄວາມເຫັນວ່າ ທານທີ່ບຸກຄົນໃຫ້ແລ້ວບໍ່ມີຜົນ ການບູຊາບໍ່ມີຜົນ ຯລຯ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງດ້ວຍຕົນເອງແລ້ວສອນໃຫ້ຜູ້ອື່ນຮູ້ ບໍ່ມີໃນໂລກ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຄວາມຍຶດຖື ໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ທິດຖິວິບັດ ມິດສາທິດຖິແມ່ນທັງໝົດຮຽກວ່າ ທິດຖິວິບັດ (໑໗)

[໙໐໗] ອັດຊັດຕະສັນໂຍຊະນະ ເປັນແນວໃດ?

ສັງໂຍດເບື້ອງຕ່ຳ ໕ ຊື່ວ່າອັດຊັດຕະສັນໂຍຊະນະ

(ພະຫິດທະສັນໂຍຊະນະ ເປັນແນວໃດ?)

ສັງໂຍດເບື້ອງສູງ ໕ ຊື່ວ່າພະຫິດທະສັນໂຍຊະນະ໌ (໑໘)

**ທຸກກະນິດເທດ ຈົບ**

## ໓. ຕິກະນິດເທດ

[໙໐໙] ບັນດາມາຕິກາເຫຼົ່ານັ້ນ ອະກຸສົນມູນ ໓ ເປັນແນວໃດ?

ອະກຸສົນມູນ ໓ ຄື ໂລພະ ໂທສະ ແລະໂມຫະ

ບັນດາອະກຸສົນມູນ ໓ ນັ້ນ ໂລພະ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມໄປຕາມອາລົມ ຄວາມຍິນດີ ຄວາມເພີດເພີນ ຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ ຄວາມກຳໜັດແຮງແຫ່ງຈິດ ຄວາມຢາກ ຄວາມສະຍົບ ຄວາມມົກມຸ່ນ ຄວາມຕ້ອງການ ຄວາມຮັກແພງ ຄວາມຂ້ອງຢູ່ ຄວາມຈົມຢູ່ ຄວາມຫວັ່ນໄຫວ ຄວາມຫຼອກລວງ ທຳມະຊາດທີ່ຍັງສັດໃຫ້ເກີດ ທຳມະຊາດ ທີ່ຍັງສັດໃຫ້ເກີດພ້ອມ ທຳມະຊາດທີ່ຮ້ອຍຮັດ ທຳມະຊາດທີ່ມີຂ່າຍ ທຳມະຊາດທີ່ຊ່ານໄປ ທຳມະຊາດທີ່ຊ່ານໄປໃນອາລົມຕ່າງໆ ທຳມະຊາດທີ່ເປັນກະແສ ທຳມະຊາດທີ່ແຜ່ໄປ ທຳມະຊາດທີ່ປະມວນມາ ທຳມະຊາດທີ່ເປັນເພື່ອນໃຈ ທຳມະຊາດທີ່ຕັ້ງຄວາມປາຖະໜາ ທຳມະຊາດທີ່ນຳໄປສູ່ພົບ ຕັນຫາເໝືອນປ່າ ຕັນຫາເໝືອນໝູ່ໄມ້ທີ່ຕັ້ງຢູ່ໃນປ່າ ຄວາມເຊີຍຊິດ ຄວາມເຍື່ອໃຍ ຄວາມຫ່ວງໃຍ ຄວາມຜູກພັນ ຄວາມຫວັງ ກິຣິຍາທີ່ຫວັງ ພາວະທີ່ຫວັງ ຄວາມຫວັງຮູບ ຄວາມຫວັງສຽງ ຄວາມຫວັງກິ່ນ ຄວາມຫວັງຣົດ ຄວາມຫວັງໂຜດຖັບພະ ຄວາມຫວັງລາບ ຄວາມຫວັງຊັບ ຄວາມຫວັງບຸດ ຄວາມຫວັງຊີວິດ ທຳມະຊາດທີ່ຢາກໄດ້ ທຳມະຊາດທີ່ຢາກໄດ້ທົ່ວ ທຳມະຊາດທີ່ຢາກໄດ້ຍິ່ງ ກິຣິຍາທີ່ຢາກໄດ້ ພາວະທີ່ຢາກໄດ້ ຄວາມລະໂມບ ກິຣິຍາທີ່ລະໂມບ ພາວະທີ່ລະໂມບ ທຳມະຊາດທີ່ເປັນເຫດຊົມຊານໄປ ຄວາມຕ້ອງການໃນອາລົມທີ່ດີ ຄວາມກຳໜັດໃນຖານະທີ່ບໍ່ຄວນ ຄວາມໂລບເກີນຂະໜາດ ຄວາມຕິດໃຈ ກິຣິຍາທີ່ຕິດໃຈ ຄວາມປາຖະໜາ ຄວາມຍິນດີ ຄວາມປາຖະໜາແຮງ

ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາ ຕັນຫາໃນຮູບພົບ ຕັນຫາໃນອະຮູບພົບ ຕັນຫາໃນນິໂຣດ (ຄືຣາຄະທີ່ປະກອບດ້ວຍອຸດເສທະທິດຖິ) ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ໂອຄະ ໂຍຄະ ຄັນຖະ ອຸປາທານ ອາວອນ ນິວອນ ເຄື່ອງປິດບັງ ເຄື່ອງຜູກມັດ ອຸປະກິເລດ ອະນຸໄສ ປະຣິຍຸດຖານ ຕັນຫາເໝືອນເຄືອເຂົາ ຄວາມປາຖະໜາວັດຖຸມີຢ່າງຕ່າງ ໆ ຮາກເຫງົ້າແຫ່ງທຸກ ເຫດແຫ່ງທຸກ ແດນເກີດແຫ່ງທຸກ ບ່ວງແຫ່ງມານ ເບັດແຫ່ງມານ ແດນແຫ່ງມານ ຕັນຫາເໝືອນແມ່ນໍ້າ ຕັນຫາເໝືອນຂ່າຍ ຕັນຫາເໝືອນເຊືອກຜູກ ຕັນຫາເໝືອນມະຫາສະມຸດ ອະພິດຊາ ອະກຸສົນມູນຄືໂລພະ ນີ້ຮຽກວ່າ ໂລພະ

ໂທສະ ເປັນແນວໃດ?

ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍແກ່ເຮົາ ຜູ້ນີ້ກຳລັງທຳຄວາມເສື່ອມເສຍແກ່ເຮົາ ຜູ້ນີ້ຈັກທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍແກ່ຄົນຜູ້ເປັນທີ່ຮັກ ເປັນທີ່ຮັກແພງຂອງເຮົາ ຜູ້ນີ້ກຳລັງທຳຄວາມເສື່ອມເສຍແກ່ຄົນຜູ້ເປັນທີ່ຮັກ ເປັນທີ່ຮັກແພງຂອງເຮົາ ຜູ້ນີ້ຈັກທຳຄວາມເສື່ອມເສຍແກ່ຄົນຜູ້ເປັນທີ່ຮັກເປັນທີ່ຮັກແພງຂອງເຮົາ

ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍເຮັດປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກ ບໍ່ເປັນທີ່ຮັກແພງຂອງເຮົາ ຜູ້ນີ້ກຳລັງເຮັດປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກ ບໍ່ເປັນທີ່ຮັກແພງຂອງເຮົາ ຜູ້ນີ້ຈັກເຮັດປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກ ບໍ່ເປັນທີ່ຮັກແພງຂອງເຮົາ ຫຼື ຄວາມອາຄາດເກີດຂຶ້ນໃນຖານະທີ່ບໍ່ສົມຄວນ ຈິດອາຄາດ ຄວາມຂັດເຄືອງ ຄວາມກະທົບ ຄວາມແຄ້ນ ຄວາມເຄືອງ ຄວາມພຸ່ງພ່ານ ໂທສະ ຄວາມຄິດປະທຸດສະຮ້າຍ ຄວາມມຸ້ງຄິດປະທຸດສະຮ້າຍ ຄວາມຂຸ່ນຈິດ ທຳມະຊາດທີ່ປະທຸດສະຮ້າຍໃຈ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ໂທສະ

ໂມຫະ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມບໍ່ຮູ້ໃນສ່ວນອະດີດ ຄວາມບໍ່ຮູ້ໃນສ່ວນອະນາຄົດ ຄວາມບໍ່ຮູ້ທັງໃນສ່ວນອະດີດແລະສ່ວນອະນາຄົດ ຄວາມບໍ່ຮູ້ໃນສະພາວະທຳທີ່ເປັນປັດໄຈຂອງກັນແລະກັນ ແລະອີງອາໄສກັນເກີດຂຶ້ນ ຄວາມບໍ່ຮູ້ ຄວາມບໍ່ເຫັນ ຯລຯ ຫຼື້ມ ຄື ອະວິດຊາ ອະກຸສົນມູນ ຄື ໂມຫະມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າໂມຫະ

ເຫຼົ່ານີ້ຊື່ວ່າອະກຸສົນມູນ ໓ (໑)

[໙໑໐] ອະກຸສົນວິຕົກ ໓ ເປັນແນວໃດ?

ອະກຸສົນວິຕົກ ໓ ຄື

໑. ກາມວິຕົກ (ຄວາມນຶກກ່ຽວດ້ວຍກາມ)

໒. ພະຍາປາທະວິຕົກ (ຄວາມນຶກກ່ຽວດ້ວຍຄວາມພະຍາບາດ)

໓. ວິຫິງສາວິຕົກ (ຄວາມນຶກກ່ຽວດ້ວຍຄວາມບຽດບຽນ)

ບັນດາວິຕົກ ໓ ນັ້ນ ກາມວິຕົກ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດ ທີ່ກ່ຽວດ້ວຍກາມ ນີ້ຮຽກວ່າ ກາມວິຕົກ

ພະຍາປາທະວິຕົກ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດ ທີ່ກ່ຽວດ້ວຍຄວາມພະຍາບາດ ນີ້ຮຽກວ່າ ພະຍາປາທະວິຕົກ

ວິຫິງສາວິຕົກ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດ ທີ່ກ່ຽວດ້ວຍຄວາມບຽດບຽນ ນີ້ຮຽກວ່າ ວິຫິງສາວິຕົກ

ເຫຼົ່ານີ້ຊື່ວ່າ ອະກຸສົນວິຕົກ ໓ (໒)

[໙໑໑] ອະກຸສົນສັນຍາ ໓ ເປັນແນວໃດ?

ອະກຸສົນສັນຍາ ໓ ຄື

໑. ກາມສັນຍາ

໒. ພະຍາປາທະສັນຍາ

໓. ວິຫິງສາສັນຍາ

ບັນດາສັນຍາ ໓ ນັ້ນ ກາມສັນຍາ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ທີ່ກ່ຽວດ້ວຍກາມ ນີ້ຮຽກວ່າ ກາມສັນຍາ

ພະຍາປາທະສັນຍາ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ທີ່ກ່ຽວກັບຄວາມພະຍາບາດ ນີ້ຮຽກວ່າ ພະຍາປາທະສັນຍາ

ວິຫິງສາສັນຍາ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ທີ່ກ່ຽວດ້ວຍຄວາມບຽດບຽນ ນີ້ຮຽກວ່າ ວິຫິງສາສັນຍາ

ເຫຼົ່ານີ້ຊື່ວ່າອະກຸສົນສັນຍາ ໓ (໓)

[໙໑໔] ອະກຸສົນທາດ ໓ ເປັນແນວໃດ?

ອະກຸສົນທາດ ໓ ຄື

໑. ກາມທາດ

໔. ພະຍາປາທະທາດ

໓. ວິຫິງສາທາດ

ບັນດາອະກຸສົນທາດ ໓ ນັ້ນ ກາມທາດ ເປັນແນວໃດ?

ກາມວິຕົກຊື່ວ່າ ກາມທາດ ພະຍາປາທະວິຕົກຊື່ວ່າ ພະຍາປາທະທາດ ວິຫິງສາວິຕົກຊື່ວ່າ ວິຫິງສາທາດ

ບັນດາວິຕົກ ໓ ນັ້ນ ກາມວິຕົກ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດ ທີ່ກ່ຽວດ້ວຍກາມ ນີ້ຮຽກວ່າ ກາມວິຕົກ

ພະຍາປາທະວິຕົກ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດ ທີ່ກ່ຽວດ້ວຍຄວາມພະຍາບາດ ນີ້ຮຽກວ່າ ພະຍາປາທະວິຕົກ

ວິຫິງສາວິຕົກ ເປັນແນວໃດ?

ຄວາມນຶກ ຄວາມຄິດໂດຍອາການຕ່າງ ໆ ຄວາມດຳຣິຜິດ ທີ່ກ່ຽວດ້ວຍຄວາມບຽດບຽນ ນີ້ຮຽກວ່າ ວິຫິງສາວິຕົກ

ເຫຼົ່ານີ້ຊື່ວ່າ ອະກຸສົນທາດ ໓ (໔)

[໙໑໓] ທຸດຈະຣິດ ໓ ເປັນແນວໃດ?

ທຸດຈະຣິດ ໓ ຄື

໑. ກາຍທຸດຈະຣິດ

໔. ວະຈີທຸດຈະຣິດ

໓. ມະໂນທຸດຈະຣິດ

ບັນດາທຸດຈະຣິດ ໓ ນັ້ນ ກາຍທຸດຈະຣິດ ເປັນແນວໃດ?

ປານາຕິບາດ ອະທິນນາທານ ແລະກາເມສຸມິດສາຈານ ນີ້ຮຽກວ່າ ກາຍທຸດຈະຣິດ

ວະຈີທຸດຈະຣິດ ເປັນແນວໃດ?

ມຸສາວາທະ ປິສຸນະວາຈາ ຜະຣຸສະວາຈາ ສຳຜັບປະລາປະ ນີ້ຮຽກວ່າ ວະຈີທຸດຈະຣິດ

ມະໂນທຸດຈະຣິດ ເປັນແນວໃດ?

ອະພິດຊາ ພະຍາບາດ ມິດສາທິດຖິ ນີ້ຮຽກວ່າ ມະໂນທຸດຈະຣິດ

ກາຍທຸດຈະຣິດ ເປັນແນວໃດ?

ກາຍຍະກຳທີ່ເປັນອະກຸສົນຊື່ວ່າກາຍທຸດຈະຣິດ ວະຈີກຳທີ່ເປັນອະກຸສົນຊື່ວ່າ ວະຈີທຸດຈະຣິດ ມະໂນກຳທີ່ເປັນອະກຸສົນຊື່ວ່າ ມະໂນທຸດຈະຣິດ

ບັນດາທຸດຈະຣິດ ໓ ນັ້ນ ກາຍຍະກຳທີ່ເປັນອະກຸສົນ ເປັນແນວໃດ?

ກາຍສັນເຈຕະນາທີ່ເປັນອະກຸສົນຊື່ວ່າ ກາຍຍະກຳທີ່ເປັນອະກຸສົນ ວະຈີສັນເຈຕະນາທີ່ເປັນອະກຸສົນ ຊື່ວ່າວະຈີກຳທີ່ເປັນອະກຸສົນ ມະໂນສັນເຈຕະນາທີ່ເປັນອະກຸສົນຊື່ວ່າມະໂນກຳທີ່ເປັນອະກຸສົນ

ເຫຼົ່ານີ້ຊື່ວ່າ ທຸດຈະຣິດ ໓ (໔)

[໙໑໔] ອາສະວະ ໓ ເປັນແນວໃດ?

ອາສະວະ ໓ ຄື

໑. ກາມາສະວະ (ອາສະວະ ຄື ກາມ)
໔. ພະວາສະວະ (ອາສະວະ ຄື ພົບ)
໓. ອະວິດຊາສະວະ (ອາສະວະ ຄື ອະວິດຊາ)

ບັນດາອາສະວະ ໓ ນັ້ນ ກາມາສະວະ ເປັນແນວໃດ?

ຄວາມພໍໃຈໃນກາມ ຄວາມກຳໜັດໃນກາມ ຄວາມເພີດເພີນໃນກາມ ຄວາມຢາກໃນກາມ ຄວາມເຍື່ອໃຍໃນກາມ ຄວາມຮ້ອນຮົນຍ້ອນກາມ ຄວາມສະຍົບໃນກາມ ຄວາມມົກມຸ່ນໃນກາມ ນີ້ຮຽກວ່າ ກາມາສະວະ

ພະວາສະວະ ເປັນແນວໃດ?

ຄວາມພໍໃຈໃນພົບ ฯລฯ ຄວາມມົກມຸ່ນໃນພົບ ໃນພົບທັງຫຼາຍ ນີ້ຮຽກວ່າພະວາສະວະ

ອະວິດຊາສະວະ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ຯລຯ ຫຼື້ມ ຄື ອະວິດຊາ ອະກຸສົນມູນ ຄື ໂມຫະ ນີ້ຮຽກວ່າ ອະວິດຊາສະວະ

ເຫຼົ່ານີ້ຊື່ວ່າ ອາສະວະ ໓ (໙)

[໙໑໕] ສັງໂຍດ ໓ ເປັນແນວໃດ?

ສັງໂຍດ ໓ ຄື

໑. ສັກກາຍະທິດຖິ (ຄວາມເຫັນວ່າເປັນຕົວຂອງຕົນ)

໒. ວິຈິກິດສາ (ຄວາມສົງໄສ ລັງເລ ບໍ່ແນ່ໃຈ)

໓. ສີລັບພະຕະປະຣາມາດ (ຄວາມຖືໝັ້ນສີນພົດ)

ບັນດາສັງໂຍດ ໓ ນັ້ນ ສັກກາຍະທິດຖິ ເປັນແນວໃດ?

ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ຍ່ອມພິຈາລະນາເຫັນຮູບເປັນຕົນຫຼືເຫັນຕົນມີຮູບ ເຫັນຮູບໃນຕົນຫຼືເຫັນຕົນໃນຮູບ ຍ່ອມພິຈາລະນາເຫັນເວທະນາເປັນຕົນ ຯລຯ ເຫັນສັນຍາເປັນຕົນ ຯລຯ ເຫັນສັງຂານເປັນຕົນ ຯລຯ ເຫັນວິນຍານເປັນຕົນ ຫຼື ພິຈາລະນາເຫັນຕົນມີວິນຍານ ເຫັນວິນຍານໃນຕົນຫຼືເຫັນຕົນໃນວິນຍານ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສັກກາຍະທິດຖິ

ວິຈິກິດສາ ເປັນແນວໃດ?

ປຸຖຸຊົນເຄືອບແຄງສົງໄສໃນພຣະສາດສະດາ ຍ່ອມເຄືອບແຄງສົງໄສໃນພຣະທຳ ຍ່ອມເຄືອບແຄງສົງໄສໃນພຣະສົງ ຍ່ອມເຄືອບແຄງສົງໄສໃນສິກຂາ ຍ່ອມເຄືອບແຄງສົງໄສໃນສ່ວນອະດີດ ຍ່ອມເຄືອບແຄງສົງໄສໃນສ່ວນອະນາຄົດ ຍ່ອມເຄືອບແຄງສົງໄສໃນສ່ວນອະດີດແລະສ່ວນອະນາຄົດ ຍ່ອມເຄືອບແຄງສົງໄສໃນສະພາວະທຳທີ່ເປັນປັດໄຈຂອງກັນແລະກັນແລະອີງອາໄສກັນແລະກັນເກີດຂຶ້ນ ຄວາມເຄືອບແຄງ ກິຣິຍາທີ່ເຄືອບແຄງ ພາວະທີ່ເຄືອບແຄງ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃຈ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ວິຈິກິດສາ

ສີລັບພະຕະປະຣາມາດ ເປັນແນວໃດ?

ສະມະນະພາມພາຍນອກແຕ່ສາດສະໜານີ້ ມີຄວາມເຫັນວ່າ ຄວາມບໍລິສຸດມີໄດ້ດ້ວຍສີນດ້ວຍພົດ ດ້ວຍສີນແລະພົດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສີລັບພະຕະປະຣາມາດ

ເຫຼົ່ານີ້ຊື່ວ່າສັງໂຍດ ໓ (໗)

[໙໑໖] ຕັນຫາ ໓ ເປັນແນວໃດ?

ຕັນຫາ ໓ ຄື

໑. ກາມຕັນຫາ (ຄວາມທະຍານຢາກໃນກາມ)

໒. ພະວະຕັນຫາ (ຄວາມທະຍານຢາກໃນພົບ)

໓. ວິພະວະຕັນຫາ (ຄວາມທະຍານຢາກໃນວິພົບ)

ບັນດາຕັນຫາ ໓ ນັ້ນ ພະວະຕັນຫາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ປະກອບດ້ວຍພະວະທິດຖິ ນີ້ຮຽກວ່າ ພະວະຕັນຫາ

ວິພະວະຕັນຫາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ປະກອບດ້ວຍອຸດເສທະທິດຖິ ນີ້ຮຽກວ່າ ວິພະວະຕັນຫາ ຕັນຫາທີ່ເຫຼືອຊື່ວ່າ ກາມຕັນຫາ

ບັນດາຕັນຫາ ໓ ນັ້ນ ກາມຕັນຫາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ກ່ຽວດ້ວຍກາມທາດ ນີ້ຮຽກວ່າ ກາມຕັນຫາ

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ກ່ຽວກັບຮູບທາດແລະອະຮູບທາດ ນີ້ຮຽກວ່າ ພະວະຕັນຫາ

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ປະກອບດ້ວຍອຸດເສທະທິດຖິ ນີ້ຮຽກວ່າ ວິພະວະຕັນຫາ

ເຫຼົ່ານີ້ຊື່ວ່າຕັນຫາ ໓ (໗)

[໙໑໗] ຕັນຫາ ໓ ອີກໄນໜຶ່ງ ເປັນແນວໃດ?

ຕັນຫາ ໓ ຄື

໑. ກາມຕັນຫາ

໒. ຮູບຕັນຫາ

໓. ອະຮູບຕັນຫາ

ບັນດາຕັນຫາ ໓ ນັ້ນ ກາມຕັນຫາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ກ່ຽວດ້ວຍກາມທາດ ນີ້ຮຽກວ່າ ກາມຕັນຫາ

ຮູບຕັນຫາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ກ່ຽວດ້ວຍຮູບທາດນີ້ຮຽກວ່າ ຮູບຕັນຫາ

ອະຮູບຕັນຫາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ກ່ຽວດ້ວຍອະຮູບທາດນີ້ຮຽກວ່າ ອະຮູບຕັນຫາ

ເຫຼົ່ານີ້ຊື່ວ່າຕັນຫາ ໓ (໙)

[໙໑໗] ຕັນຫາ ໓ ອີກໄນໜຶ່ງ ເປັນແນວໃດ?

ຕັນຫາ ໓ ຄື

໑. ຮູບຕັນຫາ
໒. ອະຮູບຕັນຫາ
໓. ນິໂຣທະຕັນຫາ

ບັນດາຕັນຫາ ໓ ນັ້ນ ຮູບຕັນຫາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ກ່ຽວດ້ວຍຮູບທາດນີ້ຮຽກວ່າ ຮູບຕັນຫາ

ອະຮູບຕັນຫາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ກ່ຽວດ້ວຍອະຮູບທາດນີ້ຮຽກວ່າ ອະຮູບຕັນຫາ

ນິໂຣທະຕັນຫາ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ປະກອບດ້ວຍ ອຸດເສທະທິດຖິ ນີ້ຮຽກວ່າ ນິໂຣທະຕັນຫາ

ເຫຼົ່ານີ້ຊື່ວ່າຕັນຫາ ໓ (໑໐)

[໙໑໙] ເອສະນາ ໓ ເປັນແນວໃດ?

ເອສະນາ ໓ ຄື

໑. ກາເມສະນາ
໒. ພະເວສະນາ
໓. ພົມມະຈະຣິເຍສະນາ

ບັນດາເອສະນາ ໓ ນັ້ນ ກາເມສະນາ ເປັນແນວໃດ?
ຄວາມພໍໃຈໃນກາມ ຯລຯ ຄວາມມົກມຸ່ນໃນກາມ ນີ້ຮຽກວ່າ ກາເມສະນາ

ພະເວສະນາ ເປັນແນວໃດ?
ຄວາມພໍໃຈໃນພົບ ຯລຯ ຄວາມມົກມຸ່ນໃນພົບ ນີ້ຮຽກວ່າ ພະເວສະນາ

ພົມມະຈະຣິເຍສະນາ ເປັນແນວໃດ?
ຄວາມເຫັນວ່າ ໂລກທ່ຽງ ໂລກບໍ່ທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ພົມມະຈະຣິເຍສະນາ

ບັນດາເອສະນາ ໓ ນັ້ນ ກາເມສະນາ ເປັນແນວໃດ?
ຄວາມກຳໜັດໃນກາມ ກາຍຍະກຳ ວະຈີກຳ ມະໂນກຳທີ່ເປັນອະກຸສົນເຊິ່ງຕັ້ງຢູ່ ໃນຖານະດຽວກັນກັບຄວາມກຳໜັດໃນກາມນັ້ນ ນີ້ຮຽກວ່າ ກາເມສະນາ

ພະເວສະນາ ເປັນແນວໃດ?
ຄວາມກຳໜັດໃນພົບ ກາຍຍະກຳ ວະຈີກຳ ມະໂນກຳທີ່ເປັນອະກຸສົນເຊິ່ງຕັ້ງຢູ່ໃນຖານະດຽວກັນກັບຄວາມກຳໜັດໃນພົບນັ້ນ ນີ້ຮຽກວ່າ ພະເວສະນາ

ພົມມະຈະຣິເຍສະນາ ເປັນແນວໃດ?
ຄວາມເຫັນທີ່ຖືວ່າ ໂລກມີບ່ອນສຸດ ກາຍຍະກຳ ວະຈີກຳ ມະໂນກຳທີ່ເປັນອະກຸສົນ ເຊິ່ງຕັ້ງຢູ່ໃນຖານະດຽວກັນກັບຄວາມເຫັນທີ່ຖືວ່າໂລກມີບ່ອນສຸດນັ້ນ ນີ້ຮຽກວ່າ ພົມມະຈະຣິເຍສະນາ
ເຫຼົ່ານີ້ຊື່ວ່າ ເອສະນາ ໓ (໑໑)

[໗໔໐] ວິທາ ໓ ເປັນແນວໃດ?
ວິທາ ໓ ຄື ຄວາມຖືຕົວວ່າ

໑. ເປັນຜູ້ເລີດກວ່າເຂົາ
໒. ເປັນຜູ້ສະເໝີເຂົາ
໓. ເປັນຜູ້ດ້ອຍກວ່າເຂົາ

ເຫຼົ່ານີ້ຮຽກວ່າ ວິທາ ໓ (໑໒)

[໗໔໑] ໄພ ໓ ເປັນແນວໃດ?
ໄພ ໓ ຄື

໑. ຊາດໄພ (ໄພເກີດຍ້ອນອາໄສຊາດ)

໒. ຊະຣາໄພ (ໄພເກີດຍ້ອນອາໄສຊະຣາ)

໓. ມໍຣະນະໄພ (ໄພເກີດຍ້ອນອາໄສຄວາມຕາຍ)

ບັນດາໄພ ໓ ນັ້ນ ຊາດໄພ ເປັນແນວໃດ?

ຄວາມຢ້ານ ຄວາມເກງກົວຄວາມຫວາດສຽວ ຄວາມຂົນພອງສະຫຍອງເກົ້າ ຄວາມສະດຸ້ງແຫ່ງຈິດ ຍ້ອນອາໄສຄວາມເກີດ ນີ້ຮຽກວ່າ ຊາດໄພ

ຊະຣາໄພ ເປັນແນວໃດ?

ຄວາມຢ້ານ ຄວາມເກງກົວ ຄວາມຫວາດສຽວ ຄວາມຂົນພອງສະຫຍອງເກົ້າຄວາມສະດຸ້ງແຫ່ງຈິດ ຍ້ອນອາໄສຊະຣາ ນີ້ຮຽກວ່າ ຊະຣາໄພ

ມໍຣະນະໄພ ເປັນແນວໃດ?

ຄວາມຢ້ານ ຄວາມເກງກົວ ຄວາມຫວາດສຽວ ຄວາມຂົນພອງສະຫຍອງເກົ້າ ຄວາມສະດຸ້ງແຫ່ງຈິດ ຍ້ອນອາໄສຄວາມຕາຍ ນີ້ຮຽກວ່າ ມໍຣະນະໄພ

ເຫຼົ່ານີ້ຊື່ວ່າໄພ ໓ (໑໓)

[໙໒໒] ຕະມະ ໓ ເປັນແນວໃດ?

ຕະມະ ໓ ຄື

໑. ບຸກຄົນເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສຜາຣົບອະດີດຕະການ

໒. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສ ຜາຣົບອະນາຄົດຕະການ

໓. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສ ຜາຣົບປັດຈຸບັນການ

ເຫຼົ່ານີ້ຊື່ວ່າຕະມະ ໓ (໑໒)

[໙໒໓] ຕິດຖາຍະຕະນະ ໓ ເປັນແນວໃດ?

ຕິດຖາຍະຕະນະ ໓ ຄື

໑. ສະມະນະ ຫຼື ພາມບາງຄົນໃນໂລກນີ້ເປັນຜູ້ມີວາທະແນວນີ້ ມີຄວາມເຫັນແນວນີ້ວ່າ ຄົນເຮົານີ້ສະເຫວີຍສຸກແດ່ ທຸກແດ່ ບໍ່ທຸກບໍ່ສຸກແດ່ ແນວໃດແນວໜຶ່ງ ການສະເຫວີຍສຸກທຸກຫຼືບໍ່ສຸກບໍ່ທຸກທັງໝົດນັ້ນ ຍ້ອນການເຄີຍເຮັດເຫດມາກ່ອນ

໒. ສະມະນະ ຫຼື ພາມບາງຄົນໃນໂລກນີ້ເປັນຜູ້ມີວາທະແນວນີ້ ມີຄວາມເຫັນແນວນີ້ວ່າ ຄົນເຮົານີ້ສະເຫວີຍສຸກແດ່ ທຸກແດ່ ບໍ່ທຸກບໍ່ສຸກແດ່ ແນວໃດແນວໜຶ່ງ ການສະເຫວີຍສຸກທຸກຫຼືບໍ່ທຸກບໍ່ສຸກທັງໝົດນັ້ນ ຍ້ອນເຫດຄືຜູ້ເປັນໃຫຍ່ສ້າງໃຫ້

໓. ສະມະນະ ຫຼື ພາມບາງຄົນໃນໂລກນີ້ເປັນຜູ້ມີວາທະແນວນີ້ ມີຄວາມເຫັນແນວນີ້ ວ່າ ຄົນເຮົານີ້ສະເຫວີຍສຸກແດ່ ທຸກແດ່ ບໍ່ທຸກບໍ່ສຸກແດ່ ແນວໃດແນວໜຶ່ງ ການສະເຫວີຍສຸກທຸກຫຼືບໍ່ທຸກບໍ່ສຸກທັງໝົດນັ້ນ ຍ້ອນບໍ່ມີເຫດບໍ່ມີປັດໄຈ

ເຫຼົ່ານີ້ຊື່ວ່າຕິດຖາຍະຕະນະ ໓ (໑໕)

[໗໔] ກິນຈະນະ ໓ ເປັນແນວໃດ?

ກິນຈະນະ ໓ ຄື

໑. ກິນຈະນະຄືຣາຄະ
໒. ກິນຈະນະຄືໂທສະ
໓. ກິນຈະນະຄືໂມຫະ

ເຫຼົ່ານີ້ຊື່ວ່າກິນຈະນະ ໓ (໑໖)

ອັງຄະນະ ໓ ເປັນແນວໃດ?

ອັງຄະນະ ໓ ຄື

໑. ອັງຄະນະຄືຣາຄະ (ກິເລດພຽງດັ່ງເນີນຄືຣາຄະ)
໒. ອັງຄະນະຄືໂທສະ (ກິເລດພຽງດັ່ງເນີນຄືໂທສະ)
໓. ອັງຄະນະຄືໂມຫະ (ກິເລດພຽງດັ່ງເນີນຄືໂມຫະ)

ເຫຼົ່ານີ້ຊື່ວ່າອັງຄະນະ ໓ (໑໗)

ມະລະ ໓ ເປັນແນວໃດ?

ມະລະ ໓ ຄື

໑. ມະລະຄືຣາຄະ (ມົນທິນຄືອະຣາຄະ)
໒. ມະລະຄືໂທສະ (ມົນທິນຄືໂທສະ)
໓. ມະລະຄືໂມຫະ (ມົນທິນຄືໂມຫະ)

ເຫຼົ່ານີ້ຊື່ວ່າມະລະ ໓ (໑໘)

ວິສະມະ ໓ ເປັນແນວໃດ?

ວິສະມະ ໓ ຄື

໑. ວິສະມະຄືຣາຄະ (ຄວາມປະພຶດບໍ່ສະໝ່ຳສະເໝີຄືຣາຄະ)
໒. ວິສະມະຄືໂທສະ (ຄວາມປະພຶດບໍ່ສະໝ່ຳສະເໝີຄືໂທສະ)
໓. ວິສະມະຄືໂມຫະ (ຄວາມປະພຶດບໍ່ສະໝ່ຳສະເໝີຄືໂມຫະ)

ເຫຼົ່ານີ້ຊື່ວ່າວິສະມະ ໓ (໑໙)
ວິສະມະ ໓ ອີກໄນໜຶ່ງ ເປັນແນວໃດ?
ວິສະມະ ໓ ຄື

໑. ວິສະມະທາງກາຍ
໒. ວິສະມະທາງວາຈາ
໓. ວິສະມະທາງໃຈ

ເຫຼົ່ານີ້ຊື່ວ່າວິສະມະ ໓ (໒໐)
ອັກຄີ ໓ ເປັນແນວໃດ?
ອັກຄີ ໓ ຄື

໑. ອັກຄີຄືຣາຄະ (ໄຟຄືຣາຄະ)
໒. ອັກຄີຄືໂທສະ (ໄຟຄືໂທສະ)
໓. ອັກຄີຄືໂມຫະ (ໄຟຄືໂມຫະ)

ເຫຼົ່ານີ້ຊື່ວ່າອັກຄີ ໓ (໒໑)
ກະສາວະ ໓ ເປັນແນວໃດ?
ກະສາວະ ໓ ຄື

໑. ກະສາວະຄືຣາຄະ (ກິເລດພຽງດັ່ງນ້ຳຝາດຄືຣາຄະ)
໒. ກະສາວະຄືໂທສະ (ກິເລດພຽງດັ່ງນ້ຳຝາດຄືໂທສະ)
໓. ກະສາວະຄືໂມຫະ (ກິເລດພຽງດັ່ງນ້ຳຝາດຄືໂມຫະ)

ເຫຼົ່ານີ້ຊື່ວ່າກະສາວະ ໓ (໒໒)
ກະສາວະ ໓ ອີກໄນໜຶ່ງ ເປັນແນວໃດ?
ກະສາວະ ໓ ຄື

໑. ກະສາວະທາງກາຍ
໒. ກະສາວະທາງວາຈາ
໓. ກະສາວະທາງໃຈ

ເຫຼົ່ານີ້ຊື່ວ່າກະສາວະ ໓ (໒໓)
[໙໒໕] ອັດສາທະທິດຖິ ເປັນແນວໃດ?

ສະມະນະ ຫຼື ພາມບາງຄົນໃນໂລກນີ້ເປັນຜູ້ມີວາທະແນວນີ້ ເປັນຜູ້ມີຄວາມເຫັນແນວນີ້ວ່າ ກາມທັງຫຼາຍບໍ່ມີໂທດ ດັ່ງນີ້ ຈຶ່ງບໍຣິໂພກກາມ ນີ້ຮຽກວ່າ ອັດສາທະທິດຖິ

ອັດຕານຸທິດຖິ ເປັນແນວໃດ?

ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງ

ສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ຍ່ອມພິຈາລະນາເຫັນຮູບເປັນຕົນຫຼື ເຫັນຕົນມີຮູບ ເຫັນຮູບໃນຕົນ ຫຼືເຫັນຕົນໃນຮູບ ຍ່ອມພິຈາລະນາເຫັນເວທະນາເປັນຕົນ ຯລຯ ສັນຍາເປັນຕົນ ຯລຯ ສັງຂານເປັນຕົນ ຯລຯ ວິນຍານເປັນຕົນ ຫຼື ຍ່ອມພິຈາລະນາເຫັນຕົນມີວິນຍານ ເຫັນວິນຍານໃນຕົນ ຫຼື ເຫັນຕົນໃນວິນຍານ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອັດຕານຸທິດຖິ

ມິດສາທິດຖິ ເປັນແນວໃດ?

ຄວາມເຫັນວ່າ ທານທີ່ບຸກຄົນໃຫ້ແລ້ວບໍ່ມີຜົນ ການບູຊາບໍ່ມີຜົນ ຯລຯ ສະມະນະ ຫຼື ພາມຜູ້ຮູ້ຍິ່ງເຫັນຈິງປະຈັກແຈ້ງເຊິ່ງໂລກນີ້ ແລະໂລກໜ້າດ້ວຍຕົນເອງແລ້ວປະກາດໃຫ້ຜູ້ອື່ນຮູ້ໄດ້ບໍ່ມີໃນໂລກນີ້ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ມິດສາທິດຖິ ສັດສະຕະທິດຖິຊື່ວ່າ ອັດສາທະທິດຖິ ສັກກາຍະທິດຖິ ຊື່ວ່າອັດຕານຸທິດຖິ ອຸດເສທະທິດຖິຊື່ວ່າ ມິດສາທິດຖິ (໔໔)

[໙໔໖] ອະຣະຕິ ເປັນແນວໃດ?

ຄວາມບໍ່ຍິນດີ ກິຣິຍາທີ່ບໍ່ຍິນດີ ຄວາມບໍ່ຍິນດີຍິ່ງ ກິຣິຍາທີ່ບໍ່ຍິນດີຍິ່ງ ຄວາມກະສັນ ຄວາມດີ້ນຣົນໃນເສນາສະນະທີ່ສະຫງັດ ຫຼື ໃນສະພາວະທຳທັງຫຼາຍທີ່ເປັນອະທິກຸສົນແນວໃດແນວໜຶ່ງ ນີ້ຮຽກວ່າ ອະຣະຕິ

ວິເຫສາ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ບຽດບຽນສັດທັງຫຼາຍດ້ວຍຝ່າມື ດ້ວຍກ້ອນດິນ ດ້ວຍທ່ອນໄມ້ດ້ວຍອາວຸດ ດ້ວຍເຊືອກ ແນວໃດແນວໜຶ່ງ ຄວາມບີບຄັ້ນ ຄວາມລົບກວນ ຄວາມບຽດບຽນ ຄວາມບຽດບຽນໜັກຂຶ້ນ ການເຮັດໃຫ້ເດືອດຮ້ອນ ການເຮັດໃຫ້ເດືອດຮ້ອນຢ່າງໜັກ ການທຳຮ້າຍສັດອື່ນ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ວິເຫສາ

ອະທຳມະຈະຣິຍາ ເປັນແນວໃດ?

ຄວາມປະພຶດບໍ່ເປັນທຳທາງກາຍ ຄວາມປະພຶດບໍ່ສະໝ່ຳສະເໝີທາງກາຍ ຄວາມປະພຶດບໍ່ເປັນທຳທາງວາຈາ ຄວາມປະພຶດບໍ່ສະໝ່ຳສະເໝີທາງວາຈາ ຄວາມປະພຶດບໍ່ເປັນທຳທາງໃຈ ຄວາມປະພຶດບໍ່ສະໝ່ຳສະເໝີທາງໃຈ ນີ້ຮຽກວ່າ ອະທຳມະຈະຣິຍາ (໔໕)

[໗໔໗] ໂທວະຈັດສະຕາ ເປັນແນວໃດ?

ຄວາມເປັນຜູ້ວ່າຍາກ ກິຣິຍາທີ່ເປັນຜູ້ວ່າຍາກ ພາວະທີ່ເປັນຜູ້ວ່າຍາກ ຄວາມຍຶດຖືຂ້າງຂັດຂືນ ຄວາມພໍໃຈໃນການໂຕ້ແຍ້ງ ກິຣິຍາທີ່ບໍ່ເອື້ອເຟື້ອ ຄວາມບໍ່ເອື້ອເຟື້ອ ຄວາມບໍ່ເຄົາລົບ ຄວາມບໍ່ເຊື່ອຟັງໃນເມື່ອຖືກວ່າກ່າວໂດຍຊອບທຳ ນີ້ຮຽກວ່າ ໂທວະຈັດສະຕາ

ປາປະມິດຕະຕາ ເປັນແນວໃດ?

ບຸກຄົນເຫຼົ່າໃດບໍ່ມີສັດທາ ບໍ່ມີສີນ ເປັນຜູ້ມີສຸຕະໜ້ອຍ ມີຄວາມຂີ້ຖີ່ ມີປັນຍາຊາມ ການເສບ ການເສບເປັນນິດ ການເສບດ້ວຍດີ ການຄົບ ການຄົບດ້ວຍດີ ຄວາມພັກດີ ຄວາມຈົງຮັກພັກດີ ຄວາມເປັນຜູ້ເອນໄປຕາມບຸກຄົນເຫຼົ່ານັ້ນ ນີ້ຮຽກວ່າ ປາປະມິດຕະຕາ

ນານັດຕະສັນຍາ ເປັນແນວໃດ?

ສັນຍາທີ່ກ່ຽວດ້ວຍກາມ ສັນຍາທີ່ກ່ຽວດ້ວຍຄວາມພະຍາບາດ ສັນຍາທີ່ກ່ຽວດ້ວຍຄວາມບຽດບຽນ ນີ້ຮຽກວ່າ ນານັດຕະສັນຍາ ສັນຍາທີ່ເປັນອະກຸສົນແມ່ນທັງໝົດຊື່ວ່ານານັດຕະສັນຍາ (໔໙)

[໗໔໘] ອຸດທັດຈະ ເປັນແນວໃດ?

ຄວາມຟຸ້ງຊ່ານ ຄວາມບໍ່ສະງົບ ຄວາມຊັດສ່າຍ ຄວາມແລ່ນໄປແຫ່ງຈິດ ນີ້ຮຽກວ່າ ອຸດທັດຈະ

ໂກສັດຊະ ເປັນແນວໃດ?

ຄວາມປ່ອຍຈິດ ການເພີ່ມພູນຄວາມປ່ອຍຈິດໄປໃນກາຍທຸດຈະຣິດ ວະຈີທຸດຈະຣິດມະໂນທຸດຈະຣິດ ຫຼືໃນກາມມະຄຸນ ໕ ການເຮັດໂດຍບໍ່ເຄົາລົບ ການເຮັດໂດຍບໍ່ຕິດຕໍ່ ການເຮັດທີ່ບໍ່ໝັ້ນຄົງ ຄວາມປະພຶດທໍ້ຖອຍ ຄວາມປະຖິ້ມສັນທະ ຄວາມປະຖິ້ມທຸຣະ ຄວາມບໍ່ເສບ ຄວາມບໍ່ເຮັດໃຫ້ຈະເລີນ ຄວາມບໍ່ເຮັດໃຫ້ຫຼາຍ ຄວາມບໍ່ຕັ້ງໃຈໝັ້ນ ຄວາມບໍ່ໝັ່ນປະກອບ ຄວາມຜະໝາດໃນການຈະເລີນສະພາວະທຳທັງຫຼາຍທີ່ເປັນກຸສົນ ນີ້ຮຽກວ່າ ໂກສັດຊະ

ປະມາທະ ເປັນແນວໃດ?

ຄວາມປ່ອຍຈິດ ການເພີ່ມພູນຄວາມປ່ອຍຈິດໄປໃນກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼືໃນກາມມະຄຸນ ໕ ການເຮັດໂດຍບໍ່ເຄົາລົບ ການເຮັດໂດຍບໍ່ຕິດຕໍ່ ການເຮັດທີ່ບໍ່ໝັ້ນຄົງ

ຄວາມປະພຶດທໍ້ຖອຍ ຄວາມປະຖິ້ມສັນທະ ຄວາມປະຖິ້ມທຸຣະ ຄວາມບໍ່ເສບ ຄວາມບໍ່ເຮັດໃຫ້ຈະເລີນ ຄວາມບໍ່ເຮັດໃຫ້ຫຼາຍ ຄວາມບໍ່ຕັ້ງໃຈໝັ້ນ ຄວາມບໍ່ໝັ່ນປະກອບ ຄວາມຜະ

ໝາດໃນການຈະເລີນສະພາວະທຳທັງຫຼາຍທີ່ເປັນກຸສົນ ຄວາມຜະໝາດ ກິຣິຍາທີ່ຜະໝາດ ພາວະທີ່ຜະໝາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ປະມາທະ (໔໗)

[໙໔໙] ອະສັນຕຸດຖິຕາ ເປັນແນວໃດ?

ຄວາມຢາກໄດ້ຍິ່ງ ໆ ຂຶ້ນໄປຂອງບຸກຄົນຜູ້ບໍ່ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ຫຼື ດ້ວຍການມະຄຸນ ໕ ຄວາມຢາກ ຄວາມປາຖະໜາ ຄວາມບໍ່ສັນໂດດ ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອະສັນຕຸດຖິຕາ

ອະສຳປະຊັນຍະຕາ ເປັນແນວໃດ?

ຄວາມບໍ່ຮູ້ ຄວາມບໍ່ເຫັນ ຯລຯ ຫຼົ້ມ ຄື ອະວິດຊາ ອະກຸສົນມູນ ຄື ໂມຫະ ນີ້ຮຽກວ່າ ອະສຳປະຊັນຍະຕາ

ມະຫິດສະຕາ ເປັນແນວໃດ?

ຄວາມຢາກໄດ້ຍິ່ງ ໆ ຂຶ້ນໄປຂອງບຸກຄົນຜູ້ບໍ່ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຕາມມີຕາມໄດ້ ຫຼື ດ້ວຍການມະຄຸນ ໕ ຄວາມຢາກ ຄວາມປາຖະໜາ ຄວາມມັກຫຼາຍ ຄວາມກຳໜັດ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ມະຫິດສະຕາ (໔໘)

[໙໕໐] ອະຫິຣິກະ ເປັນແນວໃດ?

ຄວາມບໍ່ລະອາຍຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນລະອາຍ ຄວາມບໍ່ລະອາຍຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ອະຫິຣິກະ

ອະໂນດຕັບປະ ເປັນແນວໃດ?

ຄວາມບໍ່ເກງກົວການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນເກງກົວ ຄວາມບໍ່ເກງກົວ ຕໍ່ການປະກອບບາບອະກຸສົນທຳທັງຫຼາຍ ນີ້ຮຽກວ່າ ອະໂນດຕັບປະ

ປະມາທະ ເປັນແນວໃດ?

ຄວາມປ່ອຍຈິດ ການເພີ່ມພູນຄວາມປ່ອຍຈິດໄປໃນກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼື ໃນການມະຄຸນ ໕ ການເຮັດໂດຍບໍ່ເຄົາລົບ ການເຮັດໂດຍບໍ່ຕິດຕໍ່ ການເຮັດໂດຍບໍ່ໝັ້ນຄົງ ຄວາມປະພຶດທຍໍ້ຍ່ອນ ຄວາມປະຖິ້ມສັນທະ ຄວາມປະຖິ້ມທຸຣະ ຄວາມບໍ່ເສບ ຄວາມບໍ່ເຮັດໃຫ້ຈະເລີນ ຄວາມບໍ່ເຮັດໃຫ້ຫຼາຍ ຄວາມບໍ່ຕັ້ງໃຈໝັ້ນ ຄວາມບໍ່ໝັ່ນປະກອບ ຄວາມຜະໝາດ ໃນການຈະເລີນສະພາວະທຳທັງຫຼາຍທີ່ເປັນກຸສົນ ຄວາມຜະໝາດກິຣິຍາທີ່ຜະໝາດ ພາວະທີ່ຜະໝາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ປະມາທະ (໔໙)

[໙໓໑] ອະນາທະຣິຍະ ເປັນແນວໃດ?

ຄວາມບໍ່ເອື້ອເຟື້ອ ກິຣິຍາທີ່ບໍ່ເອື້ອເຟື້ອ ຄວາມບໍ່ເຄົາລົບ ຄວາມບໍ່ເຊື່ອຟັງ ຄວາມບໍ່ເຊື່ອຖື ກິຣິຍາທີ່ບໍ່ເຊື່ອຖື ພາວະທີ່ບໍ່ເຊື່ອຖື ຄວາມບໍ່ມີສິນ ຄວາມບໍ່ຢຳເກງ ນີ້ຮຽກວ່າ ອະນາທະຣິຍະ

ໂທວະຈັດສະຕາ ເປັນແນວໃດ?

ຄວາມທີ່ເປັນຜູ້ວ່າຍາກ ກິຣິຍາທີ່ເປັນຜູ້ວ່າຍາກ ພາວະທີ່ເປັນຜູ້ວ່າຍາກ ຄວາມດື້ດ້ານ ຄວາມພໍໃຈໃນການໂຕ້ແຍ້ງ ຄວາມບໍ່ເອື້ອເຟື້ອ ພາວະທີ່ບໍ່ເອື້ອເຟື້ອ ຄວາມບໍ່ເຄົາລົບ ຄວາມບໍ່ເຊື່ອຟັງໃນເມື່ອຖືກວ່າກ່າວໂດຍຊອບທຳ ນີ້ຮຽກວ່າ ໂທວະຈັດສະຕາ

ປາປະມິດຕະຕາ ເປັນແນວໃດ?

ບຸກຄົນເຫຼົ່າໃດບໍ່ມີສັດທາ ບໍ່ມີສິນ ເປັນຜູ້ມີສຸຕະໜ້ອຍ ມີຄວາມຂີ້ຖີ່ ມີປັນຍາຊາມ ການເສບ ການເສບເປັນນິດ ການເສບດ້ວຍດີ ການເສບສະເພາະ ການຄົບ ການຄົບດ້ວຍດີ ຄວາມພັກດີ ຄວາມຈົງຮັກພັກດີ ຄວາມເປັນຜູ້ເອນໄປຕາມບຸກຄົນເຫຼົ່ານັ້ນ ນີ້ຮຽກວ່າ ປາປະມິດຕະຕາ (໓໐)

[໙໓໔] ອັດສັດທິຍະ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ບໍ່ມີສັດທາ ບໍ່ເຊື່ອພຣະພຸດທະເຈົ້າ ພຣະທຳຫຼືພຣະສົງ ຄວາມບໍ່ເຊື່ອ ກິຣິຍາທີ່ບໍ່ເຊື່ອ ກິຣິຍາທີ່ບໍ່ປັກໃຈເຊື່ອ ຄວາມບໍ່ເຫຼື້ອມໃສຍິ່ງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອັດສັດທິຍະ

ອະວະທັນຍຸຕາ ເປັນແນວໃດ?

ຄວາມຂີ້ຖີ່ມີ ໕ ຢ່າງຄື

໑. ອາວາສະມັດສະຣິຍະ (ຂີ້ຖີ່ບ່ອນຢູ່)
໒. ກຸລະມັດສະຣິຍະ (ຂີ້ຖີ່ຕະກູນ)
໓. ລາພະມັດສະຣິຍະ (ຂີ້ຖີ່ລາບ)
໔. ວັນນະມັດສະຣິຍະ (ຂີ້ຖີ່ວັນນະ)
໕. ທຳມະມັດສະຣິຍະ (ຂີ້ຖີ່ທຳ)

ຄວາມຂີ້ຖີ່ ກິຣິຍາທີ່ຂີ້ຖີ່ ພາວະທີ່ຂີ້ຖີ່ ຄວາມຫວງແຫນ ຄວາມບໍ່ຍອມໃຫ້ ຄວາມປົກປິດພາວະທີ່ຈິດຫວງແຫນ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອະວະທັນຍຸຕາ

ໂກສັດຊະ ເປັນແນວໃດ?

ຄວາມປ່ອຍຈິດ ການເພີ່ມພູນຄວາມປ່ອຍຈິດໄປໃນກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຫຼື ໃນກາມມະຄຸນ ໕ ການບໍ່ກະທຳໂດຍເຄົາລົບ ການບໍ່ກະທຳໂດຍຕິດຕໍ່ ການ

ເຮັດໂດຍບໍ່ໝັ້ນຄົງ ຄວາມປະພຶດຫຍໍ້ຍ່ອນ ຄວາມປະຖິ້ມສັນທະ ຄວາມປະຖິ້ມທຸຣະ ຄວາມບໍ່ເສບ ຄວາມບໍ່ເຮັດໃຫ້ຈະເລີນ ຄວາມບໍ່ເຮັດໃຫ້ຫຼາຍ ຄວາມບໍ່ຕັ້ງໃຈໝັ້ນ ຄວາມບໍ່ໝັ້ນປະກອບ ຄວາມຜະໝາດໃນການຈະເລີນສະພາວະທຳທີ່ເປັນກຸສົນ ນີ້ຮຽກວ່າ ໂກສັດຊະ (໓໑)

[໙໓໓] ອຸດທັດຈະ ເປັນແນວໃດ?

ຄວາມຟຸ້ງຊ່ານ ຄວາມບໍ່ສະງົບແຫ່ງຈິດ ຄວາມຊັດສ່າຍ ຄວາມແລ່ນໄປແຫ່ງຈິດນີ້ຮຽກວ່າ ອຸດທັດຈະ

ອະສັງວອນ ເປັນແນວໃດ?

ບຸກຄົນບາງຄົນໃນໂລກນີ້ເຫັນຮູບດ້ວຍຕາແລ້ວລວມຖື ແຍກຖື ບໍ່ປະຕິບັດເພື່ອສັງລວມໃນຈັກຂຸນຊີ ເຊິ່ງເມື່ອບໍ່ປະຕິບັດແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດ ຄອບງຳໄດ້ ບໍ່ຮັກສາຈັກຂຸນຊີ ບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງດ້ວຍຫູ ฯລฯ ສູບກິ່ນດ້ວຍດັງ ฯລฯ ຊີມຣົດດ້ວຍລີ້ນ ฯລฯ ຖືກຕ້ອງໂຜດຖັບພະດ້ວຍກາຍ ฯລฯ ຮູ້ທຳມາຣົມດ້ວຍໃຈແລ້ວລວມຖື ແຍກຖື ບໍ່ປະຕິບັດເພື່ອສັງລວມໃນມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ບໍ່ຮັກສາມະນິນຊີ ບໍ່ເຖິງຄວາມສັງລວມໃນມະນິນຊີ ນີ້ຮຽກວ່າ ອະສັງວອນ

ທຸດສີລະຍະ ເປັນແນວໃດ?

ຄວາມລ່ວງລະເມີດທາງກາຍ ຄວາມລ່ວງລະເມີດທາງວາຈາ ຄວາມລ່ວງລະເມີດທາງກາຍແລະທາງວາຈາ ນີ້ຮຽກວ່າ ທຸດສີລະຍະ (໓໔)

[໙໓໔] ອະຣິຍານັງ ອະທັດສະນະກຳມະຍະຕາ ເປັນແນວໃດ?

ບັນດາບຸກຄົນເຫຼົ່ານັ້ນ ພຣະອະຣິຍະ ເປັນແນວໃດ?

ພຣະພຸດທະເຈົ້າແລະສາວົກຂອງພຣະພຸດທະເຈົ້າຮຽກວ່າ ພຣະອະຣິຍະ ຄວາມບໍ່ຕ້ອງການຈະພົບ ຄວາມບໍ່ຕ້ອງການຈະເຫັນ ຄວາມບໍ່ຕ້ອງການຈະເຂົ້າໃກ້ ຄວາມບໍ່ຕ້ອງການຈະສະມາຄົມ ກັບພຣະອະຣິຍະເຫຼົ່ານີ້ ນີ້ຮຽກວ່າ ອະຣິຍານັງ ອະທັດສະນະກຳມະຍະຕາ

ສັດທຳມັງ ອະໂສຕຸກຳມະຍະຕາ ເປັນແນວໃດ?

ບັນດາບົດເຫຼົ່ານັ້ນ ສັດທຳ ເປັນແນວໃດ?

ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ນີ້ຮຽກວ່າ ສັດທຳ

ຄວາມບໍ່ຕ້ອງການຈະຟັງ ຄວາມບໍ່ຕ້ອງການຈະສະດັບ ຄວາມບໍ່ຕ້ອງການຈະຮຽນ ຄວາມບໍ່ຕ້ອງການຈະຊົງຈຳສັດທຳນີ້ ນີ້ຮຽກວ່າ ສັດທຳມັງ ອະໂສຕຸກຳມະຍະຕາ

ອຸປາຣຳພະຈິດຕະຕາ ເປັນແນວໃດ?

ບັນດາບົດເຫຼົ່ານັ້ນ ອຸປາຣຳພະຈິດຕະຕາ ເປັນແນວໃດ?

ຄວາມຄິດແຂ່ງດີ ຄວາມຄິດແຂ່ງດີເນືອງ ໆ ກິຣິຍາທີ່ຄິດແຂ່ງດີ ກິຣິຍາທີ່ຄິດແຂ່ງດີເນືອງ ໆ ພາວະທີ່ຄິດແຂ່ງດີເນືອງ ໆ ຄວາມດູຖູກ ຄວາມດູໝິ່ນ ຄວາມດູແຄນ ຄວາມເປັນຜູ້ຄອຍສະແຫວງຫາໂທດ ນີ້ຮຽກວ່າ ອຸປາຣຳພະຈິດຕະຕາ (໓໓)

[໙໓໕] ມຸດຖັດສັດຈະ ເປັນແນວໃດ?

ຄວາມຣະລຶກບໍ່ໄດ້ ຄວາມທວນຣະລຶກບໍ່ໄດ້ ຄວາມຍ້ອນຣະລຶກບໍ່ໄດ້ ຄວາມຣະລຶກບໍ່ໄດ້ ພາວະທີ່ຣະລຶກບໍ່ໄດ້ ຄວາມຊົງຈຳບໍ່ໄດ້ ຄວາມເລື່ອນລອຍ ຄວາມຫຼົງລືມ ນີ້ຮຽກວ່າ ມຸດຖັດສັດຈະ

ອະສຳປະຊັນຍະ ເປັນແນວໃດ?

ຄວາມບໍ່ຮູ້ ຄວາມບໍ່ເຫັນ ຯລຯ ຫຼົ້ມ ຄື ອະວິດຊາ ອະກຸສົນມູນ ຄື ໂມຫະ ນີ້ຮຽກວ່າ ອະສຳປະຊັນຍະ

ເຈຕະໂສວິກເຂປະ ເປັນແນວໃດ?

ຄວາມຟຸ້ງຊ່ານແຫ່ງຈິດ ຄວາມບໍ່ສະງົບແຫ່ງຈິດ ຄວາມຊັດສ່າຍແຫ່ງຈິດ ຄວາມແລ່ນໄປແຫ່ງຈິດ ນີ້ຮຽກວ່າ ເຈຕະໂສວິກເຂປະ (໓໔)

[໙໓໖] ອະໂຍນິໂສມະນະສິການ ເປັນແນວໃດ?

ຄວາມບໍ່ໃສ່ໃຈໂດຍແຍບຄາຍໃນສິ່ງທີ່ບໍ່ທ່ຽງວ່າທ່ຽງ ຄວາມບໍ່ໃສ່ໃຈໂດຍແຍບຄາຍໃນສິ່ງທີ່ເປັນທຸກວ່າເປັນສຸກ ຄວາມບໍ່ໃສ່ໃຈໂດຍແຍບຄາຍໃນສິ່ງທີ່ບໍ່ແມ່ນຕົວຕົນວ່າເປັນຕົວຕົນ ຄວາມບໍ່ໃສ່ໃຈໂດຍແຍບຄາຍໃນສິ່ງທີ່ບໍ່ງາມວ່າງາມ ຫຼື ຄວາມນຶກ ຄວາມຄິດເນືອງ ໆ ຄວາມຄຳນຶງ ຄວາມພິຈາລະນາ ຄວາມພິຈາຣະນາແຫ່ງຈິດໂດຍຜິດຈາກຄວາມຈິງ ນີ້ຮຽກວ່າ ອະໂຍນິໂສມະນະສິການ

ກຸມມັກຄະເສວະນາ ເປັນແນວໃດ?

ບັນດາສະພາວະທຳເຫຼົ່ານັ້ນ ກຸມມັກຄະ ເປັນແນວໃດ?

ມິດສາທິດຖິ ມິດສາສັງກັບປະ ມິດສາວາຈາ ມິດສາກຳມັນຕະ ມິດສາອາຊີວະ ມິດສາວາຍາມະ ມິດສາສະຕິ ມິດສາສະມາທິ ນີ້ຮຽກວ່າ ກຸມມັກຄະ

ການເສບ ການເສບເປັນນິດ ການເສບດ້ວຍດີ ການຄົບ ການຄົບດ້ວຍດີ ຄວາມພັກດີ ຄວາມຈົງຮັກພັກດີ ຄວາມເປັນຜູ້ເອນອຽງໄປຕາມທາງຜິດ ນີ້ຮຽກວ່າ ກຸມມັກຄະເສວະນາ

ເຈຕະໂສລີນັດຕະ ເປັນແນວໃດ?

ຄວາມທີ່ຈິດບໍ່ຄ່ອງແຄ້ວ ບໍ່ຄວນແກ່ວຽກງານ ຄວາມທໍ້ແທ້ ຄວາມທໍ້ຖອຍ ຄວາມ

ຫຍໍ້ຍ່ອນ ກິຣິຍາທີ່ຫຍໍ້ຍ່ອນ ພາວະທີ່ຫຍໍ້ຍ່ອນ ຄວາມຊຶມເຊົາ ກິຣິຍາທີ່ຊຶມເຊົາ ພາວະທີ່ຈິດຊຶມເຊົາ ນີ້ຮຽກວ່າ ເຈຕະໂສລີນັດຕະ (໓໕)

**ຕິກະນິດເທດ ຈົບ**

## ໔. ຈະຕຸກກະນິດເທດ

[໙໓໗] ບັນດາຈະຕຸກກະມາຕິກາເຫຼົ່ານັ້ນ ອາສະວະ ໔ ເປັນແນວໃດ?

ອາສະວະ ໔ ຄື

໑. ກາມາສະວະ (ອາສະວະ ຄື ກາມ)
໒. ພະວາສະວະ (ອາສະວະ ຄື ພົບ)
໓. ທິດຖາສະວະ (ອາສະວະ ຄື ທິດຖິ)
໔. ອະວິດຊາສະວະ (ອາສະວະ ຄື ອະວິດຊາ)

ບັນດາອາສະວະ ໔ ນັ້ນ ກາມາສະວະ ເປັນແນວໃດ?

ຄວາມພໍໃຈໃນກາມ ຯລຯ ຄວາມມົກມຸ່ນໃນກາມ ນີ້ຮຽກວ່າ ກາມາສະວະ

ພະວາສະວະ ເປັນແນວໃດ?

ຄວາມພໍໃຈໃນພົບ ຯລຯ ຄວາມມົກມຸ່ນໃນພົບ ນີ້ຮຽກວ່າ ພະວາສະວະ

ທິດຖາສະວະ ເປັນແນວໃດ?

ຄວາມເຫັນວ່າ ໂລກທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ທິດຖິ ຄວາມເຫັນຜິດ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ທິດຖາສະວະ

ມິດສາທິດຖິແມ່ນທັງໝົດຊື່ວ່າທິດຖາສະວະ

ອະວິດຊາສະວະ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ຯລຯ ຫຼົ້ມ ຄື ອະວິດຊາ ອະກຸສົນມູນ ຄື ໂມຫະ ນີ້ຮຽກວ່າ ອະວິດຊາສະວະ

ເຫຼົ່ານີ້ຊື່ວ່າອາສະວະ ໔ (໑)

[໙໓໘] ຄັນຖະ ໔ ເປັນແນວໃດ?

ຄັນຖະ ໔ ຄື

໑. ອະພິດຊາກາຍະຄັນຖະ

໒. ພະຍາປາທະກາຍະຄັນຖະ

໓. ສີລັບພະຕະປະຣາມາສະກາຍະຄັນຖະ

໔. ອິທັງສັດຈາພິນິເວສະກາຍະຄັນຖະ

ບັນດາຄັນຖະ ໔ ນັ້ນ ອະພິດຊາກາຍະຄັນຖະ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັດແຮງ ຯລຯ ຄວາມເພ່ງເລັງ ອະກຸສົນມູນ ຄື ໂລພະ ນີ້ຮຽກວ່າ ອະພິດຊາກາຍະຄັນຖະ

ພະຍາປາທະກາຍະຄັນຖະ ເປັນແນວໃດ?

ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ໄດ້ທຳຄວາມເສື່ອມເສຍແກ່ເຮົາ ຯລຯ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມທີ່ຈິດບໍ່ເບີກບານ ນີ້ຮຽກວ່າ ພະຍາປາທະກາຍະຄັນຖະ

ສີລັບພະຕະປະຣາມາສະກາຍະຄັນຖະ ເປັນແນວໃດ?

ສະມະນະພາມພາຍນອກແຕ່ສາດສະໜານີ້ມີຄວາມເຫັນວ່າ ຄວາມບໍລິສຸດມີໄດ້ດ້ວຍສິນ ດ້ວຍພົດ ດ້ວຍສິນແລະພົດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສີລັບພະຕະປະຣາມາສະກາຍະຄັນຖະ

ອິທັງສັດຈາພິນິເວສະກາຍະຄັນຖະ ເປັນແນວໃດ?

ຄວາມເຫັນວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນບໍ່ມີ ຫຼື ໂລກບໍ່ທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນບໍ່ມີ ຯລຯ ຄວາມເຫັນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນບໍ່ມີ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອິທັງສັດຈາພິນິເວສະກາຍະຄັນຖະ

ເວັ້ນສີລັບພະຕະປະຣາມາສະກາຍະຄັນຖະແລ້ວ ມິດສາທິດຖິແມ່ນທັງໝົດຊື່ວ່າອິທັງສັດຈາພິນິເວສະກາຍະຄັນຖະ

ເຫຼົ່ານີ້ຊື່ວ່າຄັນຖະ ໔ (໘)

ໂອຄະ ໔ ຯລຯ ໂຍຄະ ໔ ຯລຯ ອຸປາທານ ໔ ເປັນແນວໃດ?

ອຸປາທານ ໔ ຄື

໑. ກາມຸປາທານ (ຄວາມຖືໝັ້ນກາມ)

໒. ທິດຖຸປາທານ (ຄວາມຖືໝັ້ນທິດຖິ)

໓. ສີລັບພະຕຸປາທານ (ຄວາມຖືໝັ້ນສິນພົດ)

໔. ອັດຕະວາທຸປາທານ (ຄວາມຖືໝັ້ນວາທະວ່າມີຕົວຕົນ)

ບັນດາອຸປາທານ ໔ ເຫຼົ່ານັ້ນ ກາມຸປາທານ ເປັນແນວໃດ?

ຄວາມພໍໃຈໃນກາມ ຯລຯ ຄວາມມົກມຸ່ນໃນກາມ ນີ້ຮຽກວ່າ ກາມຸປາທານ

ທິດຖຸປາທານ ເປັນແນວໃດ?

ຄວາມເຫັນວ່າ ທານທີ່ບຸກຄົນໃຫ້ແລ້ວບໍ່ມີຜົນ ການບູຊາບໍ່ມີຜົນ ຯລຯ ສະມະນະພາມຜູ້ປະຕິບັດດີປະຕິບັດຊອບຮູ້ຍິ່ງເຫັນຈິງແຈ້ງປະຈັກໂລກນີ້ ແລະໂລກໜ້າດ້ວຍຕົນເອງແລ້ວສອນໃຫ້ຜູ້ອື່ນຮູ້ບໍ່ມີຢູ່ໃນໂລກ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ທິດຖຸປາທານ

ເວັ້ນສີລັບພະຕຸປາທານ ແລະອັດຕະວາທຸປາທານແລ້ວ ມິດສາທິດຖິແມ່ນທັງໝົດຊື່ວ່າທິດຖຸປາທານ

ສີລັບພະຕຸປາທານ ເປັນແນວໃດ?

ສະມະນະພາມພາຍນອກແຕ່ສາດສະໜານີ້ ມີຄວາມເຫັນວ່າ ຄວາມບໍລິສຸດມີໄດ້ດ້ວຍສີນດ້ວຍພົດ ດ້ວຍສີນແລະພົດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສີລັບພະຕຸປາທານ

ອັດຕະວາທຸປາທານ ເປັນແນວໃດ?

ປຸຖຸຊົນໃນໂລກນີ້ຜູ້ມີສຸຕະໜ້ອຍ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ຍ່ອມພິຈາລະນາເຫັນຮູບເປັນຕົນ ຫຼືເຫັນຕົນມີຮູບ ເຫັນຮູບໃນຕົນ ຫຼືເຫັນຕົນໃນຮູບ ເຫັນເວທະນາເປັນຕົນ ຯລຯ ເຫັນສັນຍາເປັນຕົນ ຯລຯ ເຫັນສັງຂານເປັນຕົນ ຯລຯ ເຫັນວິນຍານເປັນຕົນ ຫຼື ຍ່ອມພິຈາລະນາເຫັນຕົນມີວິນຍານ ເຫັນວິນຍານໃນຕົນ ຫຼື ເຫັນຕົນໃນວິນຍານ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ອັດຕະວາທຸປາທານ

ເຫຼົ່ານີ້ຊື່ວ່າອຸປາທານ ໔ (໕)

[໙໓໙] ຕັນຫຸປາທານ ເປັນແນວໃດ?

ຕັນຫາເມື່ອເກີດແກ່ພິກຂຸ ຍ່ອມເກີດຍ້ອນຈີວອນເປັນເຫດ ຍ້ອນບິນທະບາດເປັນເຫດຍ້ອນເສນາສະນະເປັນເຫດ ຫຼື ຍ້ອນຄິລານະປັດໄຈອັນມີນ້ຳມັນ ນ້ຳເຜີ້ງ ແລະນ້ຳອ້ອຍເປັນຕົ້ນທີ່ປະນີດແລະປະນີດຍິ່ງດ້ວຍປະການດັ່ງນີ້ເປັນເຫດ

ເຫຼົ່ານີ້ຮຽກວ່າ ຕັນຫຸປາທານ (໖)

ອະຄະຕິຄະມະນະ ໔ ເປັນແນວໃດ?

ບຸກຄົນຍ່ອມເຖິງຄວາມລຳອຽງຍ້ອນຮັກແພງກັນ ຍ້ອນກຽດຊັງ ຍ້ອນຫຼົງ ຍ້ອນຢ້ານ

ຄວາມລຳອຽງ ການເຖິງຄວາມລຳອຽງ ການລຳອຽງຍ້ອນຮັກແພງກັນ ຄວາມລຳອຽງຍ້ອນເປັນໝູ່ກອງກັນ ຄວາມຫັນເຫໄປເໝືອນນ້ຳໄຫຼ ມີລັກສະນະເຊັ່ນວ່ານີ້ ເຫຼົ່ານີ້ຮຽກວ່າ ອະຄະຕິຄະມະນະ ໔ (ຖ)

ວິປະຣິເຍສະ ໔ ເປັນແນວໃດ?

ການສະແຫວງຫາຜິດດ້ວຍອຳນາດຄວາມເຂົ້າໃຈ ຄວາມຄິດ ແລະຄວາມເຫັນວ່າທ່ຽງໃນສິ່ງທີ່ບໍ່ທ່ຽງ ວ່າເປັນສຸກໃນສິ່ງທີ່ເປັນທຸກ ວ່າເປັນຕົວຕົນໃນສິ່ງທີ່ບໍ່ເປັນຕົວຕົນ ແລະວ່າງາມໃນສິ່ງທີ່ບໍ່ງາມ ນີ້ຊື່ວ່າວິປະຣິເຍສະ ໔ (ຓ)

ອະນະຣິຍະໂວຫານ ໔ ເປັນແນວໃດ?

ອະນະຣິຍະໂວຫານ ໔ ຄື

໑. ເລື້ອງທີ່ບໍ່ເຫັນເວົ້າວ່າເຫັນ
໒. ເລື້ອງທີ່ບໍ່ໄດ້ຍິນເວົ້າວ່າໄດ້ຍິນ
໓. ເລື້ອງທີ່ບໍ່ຮູ້ເວົ້າວ່າຮູ້
໔. ເລື້ອງທີ່ບໍ່ຮູ້ແຈ້ງເວົ້າວ່າຮູ້ແຈ້ງ

ເຫຼົ່ານີ້ຮຽກວ່າ ອະນະຣິຍະໂວຫານ ໔ (໙)

ອະນະຣິຍະໂວຫານ ໔ ອີກໄນໜຶ່ງ ເປັນແນວໃດ?

ອະນະຣິຍະໂວຫານ ໔ ອີກໄນໜຶ່ງ ຄື

໑. ເລື້ອງທີ່ເຫັນເວົ້າວ່າບໍ່ເຫັນ
໒. ເລື້ອງທີ່ໄດ້ຍິນເວົ້າວ່າບໍ່ໄດ້ຍິນ
໓. ເລື້ອງທີ່ຮູ້ເວົ້າວ່າບໍ່ຮູ້
໔. ເລື້ອງທີ່ຮູ້ແຈ້ງເວົ້າວ່າບໍ່ຮູ້ແຈ້ງ

ເຫຼົ່ານີ້ຮຽກວ່າ ອະນະຣິຍະໂວຫານ ໔ (໑໐)

ທຸດຈະຣິດ ໔ ເປັນແນວໃດ?

ທຸດຈະຣິດ ໔ ຄື

໑. ປານາຕິບາດ (ຂ້າສັດ)
໒. ອະທິນນາທານ (ລັກຊັບ)
໓. ກາເມສຸມິດສາຈານ (ປະພຶດຜິດໃນກາມ)
໔. ມຸສາວາດ (ເວົ້າຕົວະ)

ເຫຼົ່ານີ້ຮຽກວ່າ ທຸດຈະຣິດ ໔ (໑໑)

ທຸດຈະຣິດ ໔ ອີກໄນໜຶ່ງ ເປັນແນວໃດ?

ທຸດຈະຣິດ ໔ ອີກໄນໜຶ່ງ ຄື

໑. ມຸສາວາທະ (ເວົ້າຕົວະ) ໒. ປິສຸນະວາຈາ (ເວົ້າສັບສໍ່)
໓. ຜະຣຸສະວາຈາ (ເວົ້າຄຳຫຍາບ) ໔. ສຳຜັບປະລາປະ (ເວົ້າເພີ້ເຈີ້)

ເຫຼົ່ານີ້ຮຽກວ່າ ທຸດຈະຣິດ ໔ (໑໒)
ໄພ ໔ ເປັນແນວໃດ?
ໄພ ໔ ຄື

໑. ຊາຕິໄພ (ໄພທີ່ເກີດຍ້ອນອາໄສຊາດ)
໒. ຊະຣາໄພ (ໄພທີ່ເກີດຍ້ອນອາໄສຊະຣາ)
໓. ພະຍາທິໄພ (ໄພທີ່ເກີດຍ້ອນອາໄສພະຍາດ)
໔. ມະຣະນະໄພ (ໄພທີ່ເກີດຍ້ອນອາໄສຄວາມຕາຍ)

ເຫຼົ່ານີ້ຮຽກວ່າ ໄພ ໔ (໑໓)
ໄພ ໔ ອີກໄນໜຶ່ງ ເປັນແນວໃດ?
ໄພ ໔ ຄື

໑. ຣາຊະໄພ (ໄພເກີດຈາກພຣະຣາຊາ)
໒. ໂຈຣະໄພ (ໄພເກີດຈາກໂຈນ)
໓. ອັກຄີໄພ (ໄພເກີດຈາກໄຟ)
໔. ອຸທະກະໄພ (ໄພເກີດຈາກນ້ຳຖ້ວມ)

ເຫຼົ່ານີ້ຮຽກວ່າ ໄພ ໔ (໑໔)
ໄພ ໔ ອີກໄນໜຶ່ງ ເປັນແນວໃດ?
ໄພ ໔ ຄື

໑. ອູມິໄພ (ໄພເກີດຈາກຄື້ນ)
໒. ກຸມພີລະໄພ (ໄພເກີດຈາກແຂ້)
໓. ອາວັດຕະໄພ (ໄພເກີດຈາກນ້ຳວົນ)
໔. ສຸສຸກາໄພ (ໄພເກີດຈາກປາຮ້າຍ)

ເຫຼົ່ານີ້ຮຽກວ່າ ໄພ ໔ (໑໕)
ໄພ ໔ ອີກໄນໜຶ່ງ ເປັນແນວໃດ?
ໄພ ໔ ຄື

໑. ອັດຕານຸວາທະໄພ (ໄພເກີດຈາກການຕິຕຽນຕົນເອງ)

໒. ປະຣະນຸວາທະໄພ (ໄພເກີດຈາກການຖືກຜູ້ອື່ນຕິຕຽນ)
໓. ທັນທະໄພ (ໄພເກີດຈາກການຖືກລົງອາດຍາ)
໔. ທຸກຄະຕິໄພ (ໄພເກີດຈາກທຸກຄະຕິ)

ເຫຼົ່ານີ້ຮຽກວ່າ ໄພ ໔ (໑໖)

ທິດຖິ ໔ ເປັນແນວໃດ?

ຄວາມເຫັນເກີດຂຶ້ນໂດຍຈິງແທ້ໝັ້ນຄົງວ່າ ສຸກທຸກຕົນເຮັດຂຶ້ນເອງ ແລະສຸກທຸກຄົນອື່ນເຮັດໃຫ້

ຄວາມເຫັນເກີດຂຶ້ນໂດຍຈິງແທ້ໝັ້ນຄົງວ່າ ສຸກທຸກເປັນສິ່ງທີ່ຕົນເຮັດຂຶ້ນເອງແລະຜູ້ອື່ນເຮັດໃຫ້ ສຸກທຸກບໍ່ແມ່ນຕົນເອງແລະຜູ້ອື່ນເຮັດໃຫ້ ແຕ່ເກີດຂຶ້ນເອງໂດຍສະເພາະ

ເຫຼົ່ານີ້ຊື່ວ່າທິດຖິ ໔ (໑໗)

**ຈະຕຸກກະນິດເທດ ຈົບ**

# ໕. ປັນຈະກະນິດເທດ

[໙໔໐] ບັນດາປັນຈະກະມາຕິການັ້ນ ໂອຣໍາພາຄິຍະສັງໂຍດ ໕ ເປັນແນວໃດ?

ໂອຣໍາພາຄິຍະສັງໂຍດ ໕ ຄື

໑. ສັກກາຍະທິດຖິ (ຄວາມເຫັນວ່າເປັນຕົວຂອງຕົນ)
໒. ວິຈິກິດສາ (ຄວາມສົງໄສ ລັງເລ ບໍ່ແນ່ໃຈ)
໓. ສີລັບພະຕະປະຣາມາດ (ຄວາມຍຶດໝັ້ນສິນພິດ)
໔. ກາມສັນທະ (ຄວາມກໍາໜັດໃນກາມມະຄຸນ)
໕. ພະຍາບາດ (ຄວາມຂັດເຄືອງ ແຄ້ນໃຈ)

ເຫຼົ່ານີ້ຊື່ວ່າໂອຣໍາພາຄິຍະສັງໂຍດ ໕ (໑)

ອຸດທໍາພາຄິຍະສັງໂຍດ ໕ ເປັນແນວໃດ?

ອຸດທໍາພາຄິຍະສັງໂຍດ ໕ ຄື

໑. ຮູບປະຣາຄະ (ຄວາມກໍາໜັດໃນຮູບ)
໒. ອະຮູບປະຣາຄະ (ຄວາມກໍາໜັດໃນອະຮູບ)
໓. ມານະ (ຄວາມຈອງຫອງຖືຕົວ)
໔. ອຸດທັດຈະ (ຄວາມຟຸ້ງຊ່ານ)
໕. ອະວິດຊາ (ຄວາມບໍ່ຮູ້ຕາມຄວາມເປັນຈິງ)

ເຫຼົ່ານີ້ຊື່ວ່າ ອຸດທຳພາຄິຍະສັງໂຍດ ໕ (໔)

ມັດສະຣິຍະ ໕ ເປັນແນວໃດ?

ມັດສະຣິຍະ ໕ ຄື

໑. ອາວາສະມັດສະຣິຍະ (ຂີ້ຖີ່ທີ່ຢູ່)
໒. ກຸລະມັດສະຣິຍະ (ຂີ້ຖີ່ຕະກູນ)
໓. ລາພະມັດສະຣິຍະ (ຂີ້ຖີ່ລາບ)
໔. ວັນນະມັດສະຣິຍະ (ຂີ້ຖີ່ວັນນະ)
໕. ທຳມະມັດສະຣິຍະ (ຂີ້ຖີ່ທຳ)

ເຫຼົ່ານີ້ຮຽກວ່າ ມັດສະຣິຍະ ໕ (໓)

ສັງຄະ ໕ ເປັນແນວໃດ?

ສັງຄະ ໕ ຄື

໑. ສັງຄະ ຄື ຣາຄະ (ເຄື່ອງຂ້ອງ ຄື ຣາຄະ)
໒. ສັງຄະ ຄື ໂທສະ (ເຄື່ອງຂ້ອງ ຄື ໂທສະ)
໓. ສັງຄະ ຄື ໂມຫະ (ເຄື່ອງຂ້ອງ ຄື ໂມຫະ)
໔. ສັງຄະ ຄື ມານະ (ເຄື່ອງຂ້ອງ ຄື ມານະ)
໕. ສັງຄະທິດຖິ (ເຄື່ອງຂ້ອງ ຄື ທິດຖິ)

ເຫຼົ່ານີ້ຊື່ວ່າສັງຄະ ໕ (໔)

ສັນລະ ໕ ເປັນແນວໃດ?

ສັນລະ ໕ ຄື

໑. ສັນລະ ຄື ຣາຄະ (ລູກສອນ ຄື ຣາຄະ)
໒. ສັນລະ ຄື ໂທສະ (ລູກສອນ ຄື ໂທສະ)
໓. ສັນລະ ຄື ໂມຫະ (ລູກສອນ ຄື ໂມຫະ)
໔. ສັນລະ ຄື ມານະ (ລູກສອນ ຄື ມານະ)
໕. ສັນລະຄືທິດຖິ (ລູກສອນຄືທິດຖິ)

ເຫຼົ່ານີ້ຊື່ວ່າສັນລະ ໕ (໕)

[໙໔໑] ເຈໂຕຂີລະ ໕ ເປັນແນວໃດ?

ເຈໂຕຂີລະ ໕ ຄື

໑. ບຸກຄົນຍ່ອມເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນພຣະສາດສະດາ
໒. ບຸກຄົນຍ່ອມເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນພຣະທຳ
໓. ບຸກຄົນຍ່ອມເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນພຣະສົງ
໔. ບຸກຄົນຍ່ອມເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສິກຂາ
໕. ບຸກຄົນຍ່ອມມີຈິດຂຸ່ນເຄືອງ ບໍ່ພໍໃຈ ມີຈິດກະທົບກະທັ່ງ ມີຈິດກະດ້າງໃນເພື່ອນພົມມະຈັນທັງຫຼາຍ

ເຫຼົ່ານີ້ຊື່ວ່າເຈໂຕຂິລະ ໕ (໖)
ເຈຕະໂສວິນິພັນທະ ໕ ເປັນແນວໃດ?
ເຈຕະໂສວິນິພັນທະ ໕ ຄື

໑. ບຸກຄົນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ຍັງບໍ່ປາສະຈາກຄວາມພໍໃຈ ຍັງບໍ່ປາສະຈາກຄວາມຮັກ ຍັງບໍ່ປາສະຈາກຄວາມກະຫາຍ ຍັງບໍ່ປາສະຈາກຄວາມຮ້ອນຮົນ ຍັງບໍ່ປາສະຈາກຄວາມຢາກໃນກາມ
໒. ບຸກຄົນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ຍັງບໍ່ປາສະຈາກຄວາມພໍໃຈ ຍັງບໍ່ປາສະຈາກຄວາມຮັກ ຍັງບໍ່ປາສະຈາກຄວາມກະຫາຍ ຍັງບໍ່ປາສະຈາກຈາກຄວາມຮ້ອນຮົນ ຍັງບໍ່ປາສະຈາກຄວາມຢາກໃນກາຍ
໓. ບຸກຄົນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ຍັງບໍ່ປາສະຈາກຄວາມພໍໃຈ ຍັງບໍ່ປາສະຈາກຄວາມຮັກ ຍັງບໍ່ປາສະຈາກຄວາມກະຫາຍ ຍັງບໍ່ປາສະຈາກຄວາມຮ້ອນຮົນ ຍັງບໍ່ປາສະຈາກຄວາມຢາກໃນຮູບ
໔. ບຸກຄົນບໍຣິໂພກອາຫານເຕັມທ້ອງຕາມຄວາມຕ້ອງການແລ້ວ ປະກອບຂວນຂວາຍຫາສຸກໃນການນອນ ສຸກໃນການເອນກາຍ ສຸກໃນການຫຼັບຢູ່
໕. ບຸກຄົນປາຖະໜາຈະເກີດໃນໝູ່ເທບໝູ່ໜຶ່ງ ແລ້ວປະພຶດພົມມະຈັນດ້ວຍຜູກໃຈວ່າເຮົາຈັກເປັນເທວະດາຜູ້ມີສັກໃຫຍ່ ຫຼື ເທວະດາຜູ້ມີສັກນ້ອຍອົງໃດອົງໜຶ່ງດ້ວຍສິນນີ້ ດ້ວຍວັດນີ້ ດ້ວຍຕະບະນີ້ ຫຼື ດ້ວຍພົມມະຈັນນີ້

ເຫຼົ່ານີ້ຊື່ວ່າເຈຕະໂສວິນິພັນທະ ໕ (໗)
ນິວອນ ໕ ເປັນແນວໃດ?
ນິວອນ ໕ ຄື

໑. ກາມສັນທະນິວອນ (ທຳເປັນເຄື່ອງກັ້ນຄວາມດີຄືກາມສັນທະ)
໒. ພະຍາປາທະນິວອນ (ທຳເປັນເຄື່ອງກັ້ນຄວາມດີຄືພະຍາບາດ)
໓. ຖີນະມິດທະນິວອນ (ທຳເປັນເຄື່ອງກັ້ນຄວາມດີຄືຖີນະມິດທະ)

໔. ອຸດທັດຈະກຸກກຸດຈະນິວອນ (ທຳເປັນເຄື່ອງກັ້ນຄວາມດີຄືອຸດທັດຈະກຸກກຸດຈະ)

໕. ວິຈິກິດສານິວອນ (ທຳເປັນເຄື່ອງກັ້ນຄວາມດີຄືວິຈິກິດສາ)

ເຫຼົ່ານີ້ຊື່ວ່ານິວອນ ໕ (໘)

ອະນັນຕະຣິຍະກຳ ໕ ເປັນແນວໃດ?

ອະນັນຕະຣິຍະກຳ ໕ ຄື

໑. ມາຕຸຄາດ (ຂ້າມານດາ)

໒. ປິຕຸຄາດ (ຂ້າບິດາ)

໓. ອະຣະຫັນຕະຄາດ (ຂ້າພຣະອະຣະຫັນ)

໔. ໂລຫິຕຸບບາດ (ມີຈິດປະທຸດສະຮ້າຍທຳຮ້າຍພຣະພຸດທະເຈົ້າຈົນເຖິງຍັງພຣະໂລຫິດໃຫ້ຫໍ້ດ້ວຍຈິດຄິດຮ້າຍ)

໕. ສັງຄະເພດ (ທຳລາຍສົງໃຫ້ແຕກກັນ)

ເຫຼົ່ານີ້ຊື່ວ່າ ອະນັນຕະຣິຍະກຳ ໕ (໙)

ທິດຖິ ໕ ເປັນແນວໃດ?

ທິດຖິ ໕ ຄື

໑. ສະມະນະ ຫຼື ພາມພວກໜຶ່ງກ່າວຢືນຢັນດັ່ງນີ້ວ່າ ອັດຕາມີສັນຍາຫຼັງຈາກຕາຍແລ້ວເປັນສະພາວະທີ່ທ່ຽງ

໒. ສະມະນະ ຫຼື ພາມພວກໜຶ່ງກ່າວຢືນຢັນດັ່ງນີ້ວ່າ ອັດຕາບໍ່ມີສັນຍາ ຫຼັງຈາກຕາຍແລ້ວເປັນສະພາວະທີ່ທ່ຽງ

໓. ສະມະນະ ຫຼື ພາມພວກໜຶ່ງກ່າວຢືນຢັນດັ່ງນີ້ວ່າ ອັດຕາມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ຫຼັງຈາກຕາຍແລ້ວເປັນສະພາວະທີ່ທ່ຽງ

໔. ສະມະນະ ຫຼື ພາມພວກໜຶ່ງຍ່ອມບັນຍັດຄວາມຂາດສູນ ຄວາມບໍ່ຜາກົດ ຄວາມບໍ່ມີແຫ່ງສັດທີ່ຍັງຜາກົດມີຢູ່

໕. ສະມະນະ ຫຼື ພາມພວກໜຶ່ງກ່າວຢືນຢັນນິບພານໃນປັດຈຸບັນ

ເຫຼົ່ານີ້ຮຽກວ່າ ທິດຖິ ໕ (໑໐)

[໙໔໒] ເວນ ໕ ເປັນແນວໃດ?

ເວນ ໕ ຄື

໑. ປານາຕິບາດ (ຂ້າສັດ)

໒. ອະທິນນາທານ (ລັກຊັບ)
໓. ກາເມສຸມິດສາຈານ (ປະພຶດຜິດໃນກາມ)
໔. ມຸສາວາດ (ເວົ້າຕົວະ)
໕. ສຸຣາເມຣະຍະມັດຊະປະມາທັດຖານ (ດື່ມນໍ້າເມົາຄືສຸຣາແລະເມໄຣອັນເປັນ ທີ່ຕັ້ງແຫ່ງຄວາມຜະໝາດ)

ເຫຼົ່ານີ້ຊື່ວ່າເວນ ໕ (໑໑)
ພະຍະຕະນະ ໕ ເປັນແນວໃດ?
ພະຍະຕະນະ ໕ ຄື

໑. ຍາຕິພະຍະຕະນະ (ຄວາມພິນາດແຫ່ງຍາດພີ່ນ້ອງ)
໒. ໂພຄະພະຍະຕະນະ (ຄວາມພິນາດແຫ່ງໂພຄະຊັບ)
໓. ໂຣຄະພະຍະຕະນະ (ຄວາມພິນາດຍ້ອນໂຣກ)
໔. ສີລະພະຍະຕະນະ (ຄວາມພິນາດແຫ່ງສີນ)
໕. ທິດຖິພະຍະຕະນະ (ຄວາມພິນາດແຫ່ງທິດຖິ)

ເຫຼົ່ານີ້ຊື່ວ່າພະຍະຕະນະ ໕ (໑໒)
ໂທດແຫ່ງຄວາມບໍ່ອົດທົນ ໕ ເປັນແນວໃດ?
ໂທດແຫ່ງຄວາມບໍ່ອົດທົນ ໕ ຄື

໑. ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງຊົນທັງຫຼາຍ
໒. ມີເວນແກ່ຊົນທັງຫຼາຍ
໓. ມີໂທດແກ່ຊົນທັງຫຼາຍ
໔. ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍໄປ ຍ່ອມເຂົ້າເຖິງອະບາຍ ທຸກຄະຕິ ວິນິບາດນະຮົກ

ເຫຼົ່ານີ້ຊື່ວ່າໂທດແຫ່ງຄວາມບໍ່ອົດທົນ ໕ (໑໓)
ໄພ ໕ ເປັນແນວໃດ?
ໄພ ໕ ຄື

໑. ອາຊີວະກະໄພ (ໄພເກີດຈາກການລ້ຽງຊີບ)
໒. ອະສີໂລກະໄພ (ໄພເກີດຈາກການຕິຕຽນ)
໓. ປະຣິສະສາຣັດຊະໄພ (ໄພຄືຄວາມບໍ່ກ້າ ຢ້ານເມື່ອເຂົ້າສູ່ທີ່ປະຊຸມ)

໔. ມໍຣະນະໄພ (ໄພເກີດແຕ່ມໍຣະນະ)

໕. ທຸກຄະຕິໄພ (ໄພເກີດຈາກທຸຄະຕິ)

ເຫຼົ່ານີ້ຊື່ວ່າໄພ ໕ (໑໘)

[໗໔໓] ທິດຖະທຳມະນິບພານະວາທະ ໕ ເປັນແນວໃດ?
ທິດຖະທຳມະນິບພານະວາທະ ໕ ຄື

໑. ສະມະນະ ຫຼື ພາມບາງຄົນໃນໂລກນີ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ ທ່ານຜູ້ຈະເລີນ ຍ້ອນເຫດທີ່ອັດຕານີ້ເອີບອີ່ມເພີດເພີນຢູ່ດ້ວຍກາມມະຄຸນ ໕ ຈຶ່ງຊື່ວ່າບັນລຸນິບພານໃນປັດຈຸບັນອັນເປັນບໍຣົມທຳ ສະມະນະ ຫຼື ພາມພວກໜຶ່ງບັນຍັດນິບພານໃນປັດຈຸບັນວ່າເປັນບໍຣົມທຳຂອງສັດແນວນີ້

໒. ສະມະນະ ຫຼື ພາມອື່ນກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນບັນລຸນິບພານໃນປັດຈຸບັນອັນເປັນບໍຣົມທຳຍ້ອນເຫດພຽງເທົ່ານີ້ ຍ້ອນເຫດໃດ ຍ້ອນການທັງຫຼາຍບໍ່ທ່ຽງ ເປັນທຸກ ມີຄວາມແປຜັນໄປເປັນທຳມະດາ ຍ້ອນການເຫຼົ່ານັ້ນແປຜັນເປັນຢ່າງອື່ນ ຄວາມເສົ້າໂສກ ຄວາມຄ່ຳຄວນ ຄວາມທຸກ ຄວາມໂທມະນັດ ແລະຄວາມຄັບແຄ້ນໃຈຈຶ່ງເກີດຂຶ້ນ ຍ້ອນເຫດທີ່ອັດຕານີ້ສະຫງັດຈາກການ ຯລຯ ບັນລຸປະຖົມຊານຢູ່ ຈຶ່ງຊື່ວ່າບັນລຸນິບພານໃນປັດຈຸບັນອັນເປັນບໍຣົມທຳ ສະມະນະ ຫຼື ພາມພວກໜຶ່ງບັນຍັດນິບພານໃນປັດຈຸບັນວ່າເປັນບໍຣົມທຳຂອງສັດແນວນີ້

໓. ສະມະນະ ຫຼື ພາມອື່ນກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນບັນລຸນິບພານໃນປັດຈຸບັນອັນເປັນບໍຣົມທຳດ້ວຍເຫດພຽງເທົ່ານີ້ ຍ້ອນເຫດໃດ ຍ້ອນວິຕົກວິຈານທີ່ມີຢູ່ໃນປະຖົມຊານນັ້ນ ບັດດິດກ່າວວ່າຍັງເປັນຂອງຫຍາບຢູ່ ຍ້ອນວິຕົກແລະວິຈານສະງົບໄປແລ້ວ ອັດຕານີ້ຈຶ່ງບັນລຸທຸຕິຍະຊານທີ່ຜ່ອງໃສ ຯລຯ ຈຶ່ງຊື່ວ່າບັນລຸນິບພານໃນປັດຈຸບັນອັນເປັນບໍຣົມທຳ ສະມະນະ ຫຼື ພາມພວກໜຶ່ງບັນຍັດນິບພານໃນປັດຈຸບັນວ່າເປັນບໍຣົມທຳຂອງສັດແນວນີ້

໔. ສະມະນະ ຫຼື ພາມອື່ນກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນບັນລຸນິບພານໃນປັດຈຸບັນອັນເປັນບໍຣົມທຳດ້ວຍເຫດພຽງເທົ່ານີ້ ຍ້ອນເຫດໃດ ຍ້ອນປີຕິແລະ

ຄວາມລໍາພອງໃຈທີ່ມີຢູ່ໃນທຸຕິຍະຊານນັ້ນ ບັດດິດຈຶ່ງກ່າວວ່າຍັງຫຍາບຢູ່ ຍ້ອນປິຕິຈາງຄາຍອອກ ອັດຕານີ້ ໆລໆ ດ້ວຍເຫດພຽງເທົ່ານີ້ ອັດຕານີ້ຈຶ່ງຊື່ວ່າບັນລຸນິບພານໃນປັດຈຸບັນອັນເປັນບໍຣົມທໍາສະມະນະ ຫຼື ພາມພວກໜຶ່ງບັນຍັດນິບພານໃນປັດຈຸບັນວ່າເປັນບໍຣົມທໍາຂອງສັດແນວນີ້

໕. ສະມະນະ ຫຼື ພາມອື່ນກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນບັນລຸນິບພານໃນປັດຈຸບັນອັນເປັນບໍຣົມທໍາດ້ວຍເຫດພຽງເທົ່ານີ້ ຍ້ອນເຫດໃດ ຍ້ອນຈິດຍັງຄໍານຶງເຖິງສຸກມີຢູ່ໃນຕະຕິຍະຊານນັ້ນ ບັນດິດກ່າວວ່າຍັງຫຍາບຢູ່ ຍ້ອນເຫດທີ່ລະສຸກແລະທຸກໄດ້ ອັດຕານີ້ ໆລໆ ຈຶ່ງບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກຢູ່ ດ້ວຍເຫດພຽງເທົ່ານີ້ແລ ອັດຕານີ້ຈຶ່ງຊື່ວ່າບັນລຸນິບພານໃນປັດຈຸບັນເປັນບໍຣົມທໍາ ສະມະນະ ຫຼື ພາມພວກໜຶ່ງບັນຍັດນິບພານໃນປັດຈຸບັນວ່າເປັນບໍຣົມທໍາຂອງສັດແນວນີ້ ເຫຼົ່ານີ້ຮຽກວ່າ ທິດຖະທໍາມະນິບພານະວາທະ ໕ (໑໕)

**ປັນຈະກະນິດເທດ ຈົບ**

## ໖. ສັກກະນິດເທດ

[໙໔໔] ບັນດາສັກກະມາຕິກາເຫຼົ່ານັ້ນ ວິວາທະມູນ ໖ ເປັນແນວໃດ?
ວິວາທະມູນ ໖ ຄື

໑. ໂກທະ (ໂກດ)
໒. ມັກຂະ (ລົບຫຼູ່ຄຸນທ່ານ)
໓. ອິດສາ (ຣິດສະຫຍາ)
໔. ສາເຖັຍຍະ (ໂອ້ອວດ)
໕. ປາປິດສະຕາ (ປາຖະໜາລາມົກ)
໖. ສັນທິດຖິປະຣະມາສິຕາ (ຍຶດຖືແຕ່ຄວາມເຫັນຂອງຕົນ)

ເຫຼົ່ານີ້ຊື່ວ່າ ວິວາທະມູນ ໖ (໑)
ສັນທະຣາຄະເຄທະສິຕະທໍາ ໖ ເປັນແນວໃດ?
ສັນທະຣາຄະເຄທະສິຕະທໍາ ໖ ຄື

໑. ຄວາມກໍາໜັດ ຄວາມກໍາໜັດແຮງ ຄວາມກໍາໜັດແຮງແຫ່ງຈິດ ທີ່ອາໄສກາມມະຄຸນໃນຮູບທີ່ໜ້າພໍໃຈ

໒. ຄວາມກຳໜັດ ຯລຯ ໃນສຽງທີ່ໜ້າພໍໃຈ
໓. ຄວາມກຳໜັດ ຯລຯ ໃນກິ່ນທີ່ໜ້າພໍໃຈ
໔. ຄວາມກຳໜັດ ຯລຯ ໃນຣົດທີ່ໜ້າພໍໃຈ
໕. ຄວາມກຳໜັດ ຯລຯ ໃນໂຜດຖັບພະທີ່ໜ້າພໍໃຈ
໖. ຄວາມກຳໜັດ ຯລຯ ຄວາມກຳໜັດແຮງ ຄວາມກຳໜັດແຮງແຫ່ງຈິດທີ່ອາໄສ ການມະຄຸນໃນທຳມາຣົມທີ່ໜ້າພໍໃຈ

ເຫຼົ່ານີ້ຮຽກວ່າ ສັນທະຣາຄະເຄຫະສິຕະທຳ ໖ (໒)
ວິໂຣທະວັດຖຸ ໖ ເປັນແນວໃດ?
ວິໂຣທະວັດຖຸ ໖ ຄື

໑. ຄວາມອາຄາດ ຄວາມກະທົບແຫ່ງຈິດ ຯລຯ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມທີ່ຈິດບໍ່ເບີກບານໃນຮູບທີ່ບໍ່ໜ້າພໍໃຈ

໒. ຄວາມອາຄາດ ຯລຯ ໃນສຽງທີ່ບໍ່ໜ້າພໍໃຈ
໓. ຄວາມອາຄາດ ຯລຯ ໃນກິ່ນທີ່ບໍ່ໜ້າພໍໃຈ
໔. ຄວາມອາຄາດ ຯລຯ ໃນຣົດທີ່ບໍ່ໜ້າພໍໃຈ
໕. ຄວາມອາຄາດ ຯລຯ ໃນໂຜດຖັບພະທີ່ບໍ່ໜ້າພໍໃຈ
໖. ຄວາມອາຄາດ ຯລຯ ຄວາມກະທົບກະທັ່ງແຫ່ງຈິດ ຯລຯ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມທີ່ຈິດບໍ່ເບີກບານໃນທຳມາຣົມທີ່ບໍ່ໜ້າພໍໃຈ

ເຫຼົ່ານີ້ຮຽກວ່າ ວິໂຣທະວັດຖຸ ໖ (໓)
ຕັນຫາກາຍ ໖ ເປັນແນວໃດ?
ຕັນຫາກາຍ ໖ ຄື

໑. ຮູບຕັນຫາ (ຕັນຫາໃນຮູບ)
໒. ສັດທະຕັນຫາ (ຕັນຫາໃນສຽງ)
໓. ຄັນທະຕັນຫາ (ຕັນຫາໃນກິ່ນ)
໔. ຣະສະຕັນຫາ (ຕັນຫາໃນຣົດ)
໕. ໂຜດຖັບພະຕັນຫາ (ຕັນຫາໃນໂຜດຖັບພະ)
໖. ທຳມະຕັນຫາ (ຕັນຫາໃນທຳ)

ເຫຼົ່ານີ້ຊື່ວ່າຕັນຫາກາຍ ໖ (໔)

[໙໔໕] ອະຄາຣະວະ ໖ ເປັນແນວໃດ?
ອະຄາຣະວະ ໖ ຄື

໑. ບຸກຄົນບໍ່ເຄົາລົບ ບໍ່ຢຳເກງໃນພຣະສາດສະດາ
໒. ບຸກຄົນບໍ່ເຄົາລົບ ບໍ່ຢຳເກງໃນພຣະທຳ
໓. ບຸກຄົນບໍ່ເຄົາລົບ ບໍ່ຢຳເກງໃນພຣະສົງ
໔. ບຸກຄົນບໍ່ເຄົາລົບ ບໍ່ຢຳເກງໃນສິກຂາ
໕. ບຸກຄົນບໍ່ເຄົາລົບ ບໍ່ຢຳເກງໃນຄວາມບໍ່ຜະໝາດ
໖. ບຸກຄົນບໍ່ເຄົາລົບ ບໍ່ຢຳເກງໃນປະຕິສັນຖານ

ເຫຼົ່ານີ້ຊື່ວ່າອະຄາຣະວະ ໖ (໕)
ປະຣິຫານີຍະທຳ ໖ ເປັນແນວໃດ?
ປະຣິຫານີຍະທຳ ໖ ຄື

| | |
|---|---|
| ໑. ກຳມາຣາມະຕາ | (ຄວາມຍິນດີໃນວຽກງານ) |
| ໒. ພັດສາຣາມະຕາ | (ຄວາມຍິນດີໃນການສົນທະນາ) |
| ໓. ນິດທາຣາມະຕາ | (ຄວາມຍິນດີໃນການນອນຫຼັບ) |
| ໔. ສັງຄະນິກາຣາມະຕາ | (ຄວາມຍິນດີໃນການຄຸກຄີດ້ວຍໝູ່) |
| ໕. ສັງສັກຄາຣາມະຕາ | (ຄວາມຍິນດີໃນການຕິດຕໍ່ກ່ຽວຂ້ອງ) |
| ໖. ປະປັນຈາຣາມະຕາ | (ຄວາມຍິນດີໃນທຳເປັນເຫດໃຫ້ລ້າຊ້າ) |

ເຫຼົ່ານີ້ຊື່ວ່າປະຣິຫານີຍະທຳ ໖ (໖)

[໙໔໖] ປະຣິຫານີຍະທຳ ໖ ອີກໄນໜຶ່ງ ເປັນແນວໃດ?
ປະຣິຫານີຍະທຳ ໖ ອີກໄນໜຶ່ງ ຄື

| | |
|---|---|
| ໑. ກຳມາຣາມະຕາ | (ຄວາມຍິນດີໃນການເຮັດວຽກງານ) |
| ໒. ພັດສາຣາມະຕາ | (ຄວາມຍິນດີໃນການເວົ້າຄຸຍ) |
| ໓. ນິດທາຣາມະຕາ | (ຄວາມຍິນດີໃນການນອນຫຼັບ) |
| ໔. ສັງຄະນິກາຣາມະຕາ | (ຄວາມຍິນດີໃນການຄຸກຄີດ້ວຍໝູ່) |
| ໕. ໂທວະຈັດສະຕາ | (ຄວາມເປັນຜູ້ວ່າຍາກ) |
| ໖. ປາປະມິດຕະຕາ | (ຄວາມເປັນຜູ້ມີມິດຊົ່ວ) |

ເຫຼົ່ານີ້ຊື່ວ່າປະຣິຫານີຍະທຳ ໖ (໗)

ໂສມະນັດສຸປະວິຈານ[9] ໖ ເປັນແນວໃດ?
ໂສມະນັດສຸປະວິຈານ ໖ ຄື

໑. ບຸກຄົນເຫັນຮູບທາງຕາແລ້ວຄຸ່ນຄິດເຖິງຮູບອັນເປັນທີ່ຕັ້ງແຫ່ງໂສມະນັດ
໒. ບຸກຄົນຟັງສຽງທາງຫູ ฯລฯ
໓. ບຸກຄົນດົມກິ່ນທາງດັງ ฯລฯ
໔. ບຸກຄົນຊີມຣົດທາງລີ້ນ ฯລฯ
໕. ບຸກຄົນຖືກຕ້ອງໂຜດຖັບພະທາງກາຍ ฯລฯ
໖. ບຸກຄົນຮູ້ທຳມາຣົມທາງໃຈແລ້ວ ຄຸ່ນຄິດເຖິງທຳມາຣົມອັນເປັນທີ່ຕັ້ງແຫ່ງໂສມະນັດ

ເຫຼົ່ານີ້ຊື່ວ່າໂສມະນັດສຸປະວິຈານ ໖ (໗)
ໂທມະນັດສຸປະວິຈານ ໖ ເປັນແນວໃດ?
ໂທມະນັດສຸປະວິຈານ ໖ ຄື

໑. ບຸກຄົນເຫັນຮູບທາງຕາແລ້ວ ຄຸ່ນຄິດເຖິງຮູບອັນເປັນທີ່ຕັ້ງແຫ່ງໂທມະນັດ
໒. ບຸກຄົນຟັງສຽງທາງຫູ ฯລฯ
໓. ບຸກຄົນດົມກິ່ນທາງດັງ ฯລฯ
໔. ບຸກຄົນຊີມຣົດທາງລີ້ນ ฯລฯ
໕. ບຸກຄົນຖືກຕ້ອງໂຜດຖັບພະທາງກາຍ ฯລฯ
໖. ບຸກຄົນຮູ້ທຳມາຣົມທາງໃຈແລ້ວ ຄຸ່ນຄິດເຖິງທຳມາຣົມອັນເປັນທີ່ຕັ້ງແຫ່ງໂທມະນັດ

ເຫຼົ່ານີ້ຊື່ວ່າໂທມະນັດສຸປະວິຈານ ໖ (໘)
ອຸເປກຂູປະວິຈານ ໖ ເປັນແນວໃດ?
ອຸເປກຂູປະວິຈານ ໖ ຄື

໑. ບຸກຄົນເຫັນຮູບທາງຕາແລ້ວ ຄຸ່ນຄິດເຖິງຮູບອັນເປັນທີ່ຕັ້ງແຫ່ງອຸເປກຂາ
໒. ບຸກຄົນຟັງສຽງທາງຫູ ฯລฯ
໓. ບຸກຄົນດົມກິ່ນທາງດັງ ฯລฯ
໔. ບຸກຄົນຊີມຣົດທາງລີ້ນ ฯລฯ
໕. ບຸກຄົນຖືກຕ້ອງໂຜດຖັບພະທາງກາຍ ฯລฯ
໖. ບຸກຄົນຮູ້ທຳມາຣົມທາງໃຈແລ້ວຄຸ່ນຄິດເຖິງທຳມາຣົມອັນເປັນທີ່ຕັ້ງແຫ່ງອຸເປກຂາ

ເຫຼົ່ານີ້ຊື່ວ່າອຸເປກຂູປະວິຈານ ໖

[໙໕໗] ເຄຫະສິຕະໂສມະນັດ[໑] ໖ ເປັນແນວໃດ?
ເຄຫະສິຕະໂສມະນັດ ໖ ຄື

໑. ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສະບາຍເປັນສຸກອັນເກີດຈາກເຈໂຕສຳຜັດທີ່ອາໄສກາມມະຄຸນໃນຮູບອັນເປັນທີ່ພໍໃຈ
໒. ຄວາມສຳຣານທາງໃຈ ຯລຯ ໃນສຽງອັນເປັນທີ່ພໍໃຈ
໓. ຄວາມສຳຣານທາງໃຈ ຯລຯ ໃນກິ່ນອັນເປັນທີ່ພໍໃຈ
໔. ຄວາມສຳຣານທາງໃຈ ຯລຯ ໃນຣົດອັນເປັນທີ່ພໍໃຈ
໕. ຄວາມສຳຣານທາງໃຈ ຯລຯ ໃນໂຜດຖັບພະອັນເປັນທີ່ພໍໃຈ
໖. ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມ ທີ່ສຳຣານເປັນສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມ ທີ່ສຳຣານເປັນສຸກອັນເກີດຈາກເຈໂຕສຳຜັດທີ່ອາໄສກາມມະຄຸນໃນທຳມາຣົມ ອັນເປັນທີ່ພໍໃຈ

ເຫຼົ່ານີ້ຊື່ວ່າເຄຫະສິຕະໂສມະນັດ ໖ (໑໑)
ເຄຫະສິຕະໂທມະນັດ ໖ ເປັນແນວໃດ?
ເຄຫະສິຕະໂທມະນັດ ໖ ຄື

໑. ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາທີ່ສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດທີ່ອາໄສກາມມະຄຸນໃນຮູບອັນບໍ່ເປັນທີ່ພໍໃຈ
໒. ຄວາມບໍ່ສະບາຍທາງໃຈ ຯລຯ ໃນສຽງອັນບໍ່ເປັນທີ່ພໍໃຈ
໓. ຄວາມບໍ່ສະບາຍທາງໃຈ ຯລຯ ໃນກິ່ນອັນບໍ່ເປັນທີ່ພໍໃຈ
໔. ຄວາມບໍ່ສະບາຍທາງໃຈ ຯລຯ ໃນຣົດອັນບໍ່ເປັນທີ່ພໍໃຈ
໕. ຄວາມບໍ່ສະບາຍທາງໃຈ ຯລຯ ໃນໂຜດຖັບພະອັນບໍ່ເປັນທີ່ພໍໃຈ
໖. ຄວາມບໍ່ສະບາຍທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາທີ່ສະເຫວີຍອາລົມທີ່ບໍ່ສະບາຍເປັນທຸກ ອັນເກີດຈາກເຈໂຕສຳຜັດທີ່ອາໄສກາມມະຄຸນໃນທຳມາຣົມອັນບໍ່ເປັນທີ່ພໍໃຈ

ເຫຼົ່ານີ້ຊື່ວ່າເຄຫະສິຕະໂທມະນັດ ໖ (໑໒)
ເຄຫະສິຕຸເປກຂາ ໖ ເປັນແນວໃດ?
ເຄຫະສິຕຸເປກຂາ ໖ ຄື

໑. ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດທີ່ອາໄສການມະຄຸນ ໃນຮູບອັນເປັນທີ່ຕັ້ງແຫ່ງອຸເປກຂາ

໒. ຄວາມສຳຣານທາງໃຈກໍບໍ່ແມ່ນ ຯລຯ ໃນສຽງອັນເປັນທີ່ຕັ້ງແຫ່ງອຸເປກຂາ

໓. ຄວາມສຳຣານທາງໃຈກໍບໍ່ແມ່ນ ຯລຯ ໃນກິ່ນອັນເປັນທີ່ຕັ້ງແຫ່ງອຸເປກຂາ

໔. ຄວາມສຳຣານທາງໃຈກໍບໍ່ແມ່ນ ຯລຯ ໃນຣົດອັນເປັນທີ່ຕັ້ງແຫ່ງອຸເປກຂາ

໕. ຄວາມສຳຣານທາງໃຈກໍບໍ່ແມ່ນ ຯລຯ ໃນໂຜດຖັບພະອັນເປັນທີ່ຕັ້ງແຫ່ງ ອຸເປກຂາ

໖. ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສະບາຍທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດຈາກເຈໂຕສຳຜັດທີ່ອາໄສການມະຄຸນໃນທຳມາຣົມອັນເປັນທີ່ຕັ້ງແຫ່ງອຸເປກຂາ

ເຫຼົ່ານີ້ຊື່ວ່າ ເຄຫະສິຕຸເປກຂາ ໖ (໑໓)

[໗໔໗] ທິດຖິ ໖ ເປັນແນວໃດ?

ທິດຖິ ໖ ຄື

໑. ຄວາມເຫັນເກີດຂຶ້ນແກ່ຜູ້ນີ້ໂດຍແນ່ແທ້ໝັ້ນຄົງວ່າ ອັດຕາຂອງເຮົາມີຢູ່

໒. ຄວາມເຫັນເກີດຂຶ້ນແກ່ຜູ້ນີ້ໂດຍແນ່ແທ້ໝັ້ນຄົງວ່າ ອັດຕາຂອງເຮົາບໍ່ມີ

໓. ຄວາມເຫັນເກີດຂຶ້ນແກ່ຜູ້ນີ້ໂດຍແນ່ແທ້ໝັ້ນຄົງວ່າ ເຮົາຮູ້ຈັກອັດຕາໄດ້ດ້ວຍອັດຕາ (ຄວາມມີຕົວຕົນ)

໔. ຄວາມເຫັນເກີດຂຶ້ນແກ່ຜູ້ນີ້ໂດຍແນ່ແທ້ໝັ້ນຄົງວ່າ ເຮົາຮູ້ຈັກອະນັດຕາ (ຄວາມບໍ່ມີຕົວຕົນ) ໄດ້ດ້ວຍອັດຕາ (ຄວາມມີຕົວຕົນ)

໕. ຄວາມເຫັນເກີດຂຶ້ນແກ່ຜູ້ນີ້ໂດຍແນ່ແທ້ໝັ້ນຄົງວ່າ ເຮົາຮູ້ຈັກອັດຕາໄດ້ດ້ວຍອະນັດຕາ (ຄວາມບໍ່ມີຕົວຕົນ)

໖. ຄວາມເຫັນເກີດຂຶ້ນແກ່ຜູ້ນີ້ໂດຍແນ່ແທ້ໝັ້ນຄົງວ່າ ອັດຕາຂອງເຮົານີ້ນັ້ນ ເປັນຜູ້ກ່າວ ເປັນຜູ້ຮູ້ ສະເຫວີຍຜົນແຫ່ງກຳດີແລະກຳຊົ່ວໃນພົບ ນັ້ນ ໆ ສິ້ນການດົນນານ ອັດຕານັ້ນບໍ່ເກີດ ບໍ່ມີມາແລ້ວໃນອະດີດ ອັດຕານັ້ນບໍ່ເກີດ ຈັກບໍ່ມີໃນອະນາຄົດ ອັດຕາເປັນສະພາວະທີ່ທ່ຽງ ຍັ່ງຍືນ ໝັ້ນຄົງ ມີຄວາມບໍ່ແປຜັນໄປເປັນທຳມະດາ

ເຫຼົ່ານີ້ຊື່ວ່າທິດຖິ ໖ (໑໔)

**ສັກກະນິດເທດ ຈົບ**

# ໗. ສັດຕະກະນິດເທດ

[໙໕໙] ບັນດາສັດຕະກະມາຕິກາເຫຼົ່ານັ້ນ ອະນຸໄສ ໗ ເປັນແນວໃດ?

ອະນຸໄສ ໗ ຄື

| | |
|---|---|
| ໑. ກາມຣາຄານຸໄສ | (ກິເລດທີ່ນອນເນື່ອງໃນສັນດານຄືກາມຣາຄະ) |
| ໒. ປະຕິຄານຸໄສ | (ກິເລດທີ່ນອນເນື່ອງໃນສັນດານຄືປະຕິຄະ) |
| ໓. ມານານຸໄສ | (ກິເລດທີ່ນອນເນື່ອງໃນສັນດານຄືມານະ) |
| ໔. ທິດຖານຸໄສ | (ກິເລດທີ່ນອນເນື່ອງໃນສັນດານຄືທິດຖິ) |
| ໕. ວິຈິກິດສານຸໄສ | (ກິເລດທີ່ນອນເນື່ອງໃນສັນດານຄືວິຈິກິດສາ) |
| ໖. ພະວະຣາຄານຸໄສ | (ກິເລດທີ່ນອນເນື່ອງໃນສັນດານຄືພາວະຣາຄະ) |
| ໗. ອະວິດຊານຸໄສ | (ກິເລດທີ່ນອນເນື່ອງໃນສັນດານຄືອະວິດຊາ) |

ເຫຼົ່ານີ້ຊື່ວ່າອະນຸໄສ ໗ (໑)

ສັງໂຍດ ໗ ເປັນແນວໃດ?

ສັງໂຍດ ໗ ຄື

| | |
|---|---|
| ໑. ກາມຣາຄະສັງໂຍດ | (ກິເລດເຄື່ອງປະກອບສັດໄວ້ໃນພົບຄືກາມຣາຄະ) |
| ໒. ປະຕິຄະສັງໂຍດ | (ກິເລດເຄື່ອງປະກອບສັດໄວ້ໃນພົບຄືປະຕິຄະ) |
| ໓. ມານະສັງໂຍດ | (ກິເລດເຄື່ອງປະກອບສັດໄວ້ໃນພົບຄືມານະ) |
| ໔. ທິດຖິສັງໂຍດ | (ກິເລດເຄື່ອງປະກອບສັດໄວ້ໃນພົບຄືທິດຖິ) |
| ໕. ວິຈິກິດສາສັງໂຍດ | (ກິເລດເຄື່ອງປະກອບສັດໄວ້ໃນພົບຄືວິຈິກິດສາ) |
| ໖. ພະວະຣາຄະສັງໂຍດ | (ກິເລດເຄື່ອງປະກອບສັດໄວ້ໃນພົບຄືພະວະຣາຄະ) |
| ໗. ອະວິດຊາສັງໂຍດ | (ກິເລດເຄື່ອງປະກອບສັດໄວ້ໃນພົບຄືອະວິດຊາ) |

ເຫຼົ່ານີ້ຊື່ວ່າສັງໂຍດ ໗ (໒)

ປະຣິຍຸດຖານ ໗ ເປັນແນວໃດ?

ປະຣິຍຸດຖານ ໗ ຄື

| | |
|---|---|
| ໑. ກາມະປະຣິຍຸດຖານະ | (ກິເລດເປັນເຄື່ອງຄອບງຳຈິດຄືກາມ) |
| ໒. ປະຕິຄະປະຣິຍຸດຖານະ | (ກິເລດເປັນເຄື່ອງຄອບງຳຈິດຄືປະຕິຄະ) |
| ໓. ມານະປະຣິຍຸດຖານະ | (ກິເລດເປັນເຄື່ອງຄອບງຳຈິດຄືມານະ) |
| ໔. ທິດຖິປະຣິຍຸດຖານະ | (ກິເລດເປັນເຄື່ອງຄອບງຳຈິດຄືທິດຖິ) |
| ໕. ວິຈິກິດສາປະຣິຍຸດຖານະ | (ກິເລດເປັນເຄື່ອງຄອບງຳຈິດຄືວິຈິກິດສາ) |

໖. ພະວະຣາຄະປະຣິຍຸດຖານະ (ກິເລດເປັນເຄື່ອງຄອບງຳຈິດຄືພະວະຣາຄະ)
໗. ອະວິດຊາປະຣິຍຸດຖານະ (ກິເລດເປັນເຄື່ອງຄອບງຳຈິດຄືອະວິດຊາ)

ເຫຼົ່ານີ້ຊື່ວ່າປະຣິຍຸດຖານະ ໗ (໓)

[໙໕໐] ອະສັດທຳ ໗ ເປັນແນວໃດ?
ອະສັດທຳ ໗ ຄື

໑. ເປັນຜູ້ບໍ່ມີສັດທາ
໒. ບໍ່ມີຫິຣິ
໓. ບໍ່ມີໂອດຕັບປະ
໔. ມີສຸຕະໜ້ອຍ
໕. ຂີ້ຄ້ານ
໖. ຫຼົງລືມສະຕິ
໗. ມີປັນຍາຊາມ

ເຫຼົ່ານີ້ຊື່ວ່າອະສັດທຳ ໗ (໔)
ທຸດຈະຣິດ ໗ ເປັນແນວໃດ?
ທຸດຈະຣິດ ໗ ຄື

໑. ປານາຕິບາດ (ຂ້າສັດ)
໒. ອະທິນນາທານ (ລັກຊັບ)
໓. ກາເມສຸມິດສາຈານ (ປະພຶດຜິດໃນກາມ)
໔. ມຸສາວາດ (ເວົ້າຕົວະ)
໕. ປິສຸນະວາຈາ (ເວົ້າສັບສໍ່)
໖. ຜະຣຸສະວາຈາ (ເວົ້າຄຳຫຍາບ)
໗. ສຳຜັບປະລາປະ (ເວົ້າເພີ້ເຈີ້)

ເຫຼົ່ານີ້ຊື່ວ່າທຸດຈະຣິດ ໗ (໕)
ມານະ ໗ ເປັນແນວໃດ?
ມານະ ໗ ຄື

໑. ມານະ (ຄວາມຖືຕົວ)
໒. ອະຕິມານະ (ຄວາມຖືຕົວໂພດ)
໓. ມານາຕິມານະ (ຄວາມຈອງຫອງ)
໔. ໂອມານະ (ຄວາມດູຖູກຕົນເອງ)
໕. ອະທິມານະ (ຄວາມສຳຄັນວ່າໄດ້ບັນລຸ)

໖. ອັດສະມິມານະ (ຄວາມສຳຄັນວ່າມີຕົວຕົນ)
໗. ມິດສາມານະ (ຄວາມຖືຕົວຜິດ)

ເຫຼົ່ານີ້ຊື່ວ່າມານະ ໗ (໖)

[໗໕໑] ທິດຖິ ໗ ເປັນແນວໃດ?
ທິດຖິ ໗ ຄື

໑. ສະມະນະ ຫຼື ພາມບາງຄົນໃນໂລກນີ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ ທ່ານຜູ້ຈະເລີນ ຍ້ອນອັດຕານີ້ມີຮູບສຳເລັດມາຈາກມະຫາພູຕະຮູບ ໔ ເກີດຈາກບິດາມານດາຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດ ບໍ່ເກີດອີກ ຍ້ອນເຫດພຽງເທົ່ານີ້ ອັດຕານີ້ຈຶ່ງຂາດສູນໂດຍທັງ ໝົດ ສະມະນະ ຫຼື ພາມພວກໜຶ່ງບັນຍັດຄວາມຂາດສູນ ຄວາມພິນາດ ແລະຄວາມບໍ່ເກີດຂຶ້ນອີກຂອງສັດແນວນີ້

໒. ສະມະນະ ຫຼື ພາມອື່ນ ກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ຈະບໍ່ແມ່ນຂາດສູນໂດຍທັງໝົດ ຍ້ອນເຫດພຽງເທົ່ານີ້ ຍັງມີອັດຕາອື່ນທີ່ເປັນທິບມີຮູບເປັນກາມາວະຈອນ ບໍຣິໂພກເຂົ້າເປັນອາຫານ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຫັນ ຍ້ອນອັດຕານັ້ນ ຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດ ບໍ່ເກີດອີກ ຍ້ອນເຫດພຽງເທົ່ານີ້ແລ ອັດຕານີ້ຈຶ່ງຂາດສູນໂດຍທັງໝົດ ສະມະນະ ຫຼື ພາມພວກໜຶ່ງບັນຍັດຄວາມຂາດສູນ ຄວາມພິນາດ ແລະຄວາມບໍ່ເກີດອີກຂອງສັດແນວນີ້

໓. ສະມະນະ ຫຼື ພາມອື່ນກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຂາດສູນໂດຍທັງໝົດ ຍ້ອນເຫດພຽງເທົ່ານີ້ ຍັງມີອັດຕາອື່ນທີ່ເປັນທິບມີຮູບ ສຳເລັດດ້ວຍໃຈ ມີອະໄວຍະວະຄົບຖ້ວນ ມີອິນຊີບໍ່ບົກຜ່ອງມີຢູ່ຈິງ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຫັນ ຍ້ອນອັດຕານັ້ນແລ ຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດໄປບໍ່ເກີດອີກ ຍ້ອນເຫດພຽງເທົ່ານີ້ແລ ອັດຕານີ້ຈຶ່ງຂາດສູນໂດຍ ທັງໝົດ ສະມະນະ ຫຼື ພາມພວກໜຶ່ງບັນຍັດຄວາມຂາດສູນ ຄວາມພິນາດ ແລະຄວາມບໍ່ເກີດອີກຂອງສັດແນວນີ້

໔. ສະມະນະ ຫຼື ພາມອື່ນກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຂາດ

ສູນໂດຍທັງໝົດ ຍ້ອນເຫດພຽງເທົ່ານີ້ ຍັງມີອັດຕາອື່ນທີ່ເຂົ້າເຖິງອາກາສານັນຈາ ຍະຕະນະຊານ ໂດຍກຳນົດວ່າ ອາກາດຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ທ່ານຍັງບໍ່ຮູ້ ບໍ່ເຫັນ ແຕ່ເຮົາຮູ້ເຫັນ ຍ້ອນອັດຕານັ້ນແລ ຫຼັງຈາກຕາຍແລ້ວ ຍ່ອມຂາດສູນ ພິນາດ ບໍ່ເກີດອີກ ຍ້ອນເຫດພຽງເທົ່ານີ້ແລ ອັດຕານີ້ຈຶ່ງຂາດສູນໂດຍທັງໝົດ ສະມະນະ ຫຼື ພາມພວກໜຶ່ງບັນຍັດຄວາມຂາດສູນ ຄວາມພິນາດ ແລະຄວາມບໍ່ ເກີດອີກຂອງສັດແນວນີ້

໕. ສະມະນະ ຫຼື ພາມອື່ນກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ ບໍ່ແມ່ນຂາດ ສູນໂດຍ ໝົດສິ້ນ ຍ້ອນເຫດພຽງເທົ່ານີ້ ຍັງມີອັດຕາອື່ນທີ່ເຂົ້າເຖິງວິນຍານັນຈາ ຍະຕະນະຊານ ໂດຍກຳນົດວ່າ ວິນຍານຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງອາກາສາ ນັນຈາຍະຕະນະໄດ້ໂດຍປະການທັງປວງ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຮົາເຫັນ ຍ້ອນອັດຕານັ້ນແລ ຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດ ບໍ່ເກີດອີກ ຍ້ອນ ເຫດພຽງເທົ່ານີ້ແລ ອັດຕານີ້ຈຶ່ງຂາດສູນໂດຍທັງໝົດສະມະນະ ຫຼື ພາມພວກ ໜຶ່ງບັນຍັດຄວາມຂາດສູນ ຄວາມພິນາດ ແລະຄວາມບໍ່ເກີດອີກຂອງສັດແນວນີ້

໖. ສະມະນະ ຫຼື ພາມອື່ນກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ ບໍ່ແມ່ນຂາດ ສູນໂດຍທັງໝົດ ຍ້ອນເຫດພຽງເທົ່ານີ້ ຍັງອັດຕາອື່ນທີ່ເຂົ້າເຖິງ ອາກິນຈັນຍາຍະ ຕະນະຊານ ໂດຍກຳນົດວ່າ ອັນໃດ ໆ ກໍບໍ່ມີ ຍ້ອນລ່ວງວິນຍານັນຈາຍະຕະນະ ໄດ້ໂດຍປະການທັງປວງ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຫັນ ຍ້ອນອັດຕາ ນັ້ນແລ ຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດ ບໍ່ເກີດອີກ ຍ້ອນເຫດພຽງເທົ່ານີ້ແລ ອັດຕານີ້ຈຶ່ງຂາດສູນໂດຍທັງໝົດ ສະມະນະຫຼື ພາມພວກໜຶ່ງບັນຍັດຄວາມຂາດ ສູນ ຄວາມພິນາດ ແລະຄວາມບໍ່ເກີດອີກຂອງສັດແນວນີ້

໗. ສະມະນະ ຫຼື ພາມອື່ນກ່າວກັບສະມະນະ ຫຼື ພາມນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ອັດຕາທີ່ທ່ານກ່າວເຖິງນີ້ມີຢູ່ຈິງ ເຮົາບໍ່ປະຕິເສດວ່າບໍ່ມີ ແຕ່ອັດຕານີ້ບໍ່ແມ່ນຂາດ ສູນໂດຍ ໝົດສິ້ນ ຍ້ອນເຫດພຽງເທົ່ານີ້ ຍັງມີອັດຕາອື່ນທີ່ເຂົ້າເຖິງເນວະສັນຍາ ນາສັນຍາຍະຕະນະຊານ ຍ້ອນລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງ ປວງ ທ່ານຍັງບໍ່ຮູ້ບໍ່ເຫັນ ແຕ່ເຮົາຮູ້ເຫັນ ຍ້ອນອັດຕານັ້ນແລ ຫຼັງຈາກຕາຍແລ້ວ ຍ່ອມຂາດສູນ ພິນາດ ບໍ່ເກີດອີກ ຍ້ອນເຫດພຽງເທົ່ານີ້ແລ ອັດຕານີ້ຈຶ່ງຂາດສູນ

ໂດຍທັງໝົດ ສະມະນະ ຫຼື ພາມພວກໜຶ່ງບັນຍັດຄວາມຂາດສູນ ຄວາມພິນາດ ແລະຄວາມບໍ່ເກີດອີກຂອງສັດແນວນີ້

ເຫຼົ່ານີ້ຊື່ວ່າທິດຖິ ໗

**ສັດຕະກະນິດເທດ ຈົບ**

## ໑໐. ອັດຖະກະນິດເທດ

[໙໕໔] ບັນດາອັດຖະກະມາຕິກາເຫຼົ່ານັ້ນ ກິເລດວັດຖຸ ໑໐ ເປັນແນວໃດ?
ກິເລດວັດຖຸ ໑໐ ຄື

| | | | | | |
|---|---|---|---|---|---|
| ໑. | ໂລພະ | (ຄວາມໂລບ) | ໔. | ໂທສະ | (ຄວາມຄິດປະທຸດສະຮ້າຍ) |
| ໓. | ໂມຫະ | (ຄວາມຫຼົງ) | ໔. | ມານະ | (ຄວາມຖືຕົວ) |
| ໕. | ທິດຖິ | (ຄວາມເຫັນຜິດ) | ໖. | ວິຈິກິດສາ | (ຄວາມລັງເລສົງໄສ) |
| ໗. | ຖີນະ | (ຄວາມທໍ້ຖອຍທໍ້ແທ້) | ໑໐. | ອຸດທັດຈະ | (ຄວາມຟຸ້ງຊ່ານ) |

ເຫຼົ່ານີ້ຊື່ວ່າກິເລດວັດຖຸ ໑໐

[໙໕໓] ກຸສີຕະວັດຖຸ ໑໐ ເປັນແນວໃດ?
ກຸສີຕະວັດຖຸ ໑໐ ຄື

໑. ພິກຂຸໃນທຳວິໄນນີ້ມີວຽກງານທີ່ຕ້ອງເຮັດ ທ່ານມີຄວາມຄິດແນວນີ້ວ່າ ເຮົາຈັກຕ້ອງເຮັດວຽກ ແຕ່ເມື່ອເຮົາກຳລັງເຮັດວຽກຢູ່ຈັກລຳບາກກາຍ ເອົາລະ ເຮົານອນດີກວ່າ ທ່ານຈຶ່ງນອນ ບໍ່ເລີ່ມຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ຊື່ວ່າ ກຸສີຕະວັດຖຸຂໍ້ທີ ໑

໔. ພິກຂຸເຮັດວຽກແລ້ວ ທ່ານມີຄວາມຄິດແນວນີ້ວ່າ ເຮົາໄດ້ເຮັດວຽກແລ້ວ ເມື່ອເຮົາກຳລັງເຮັດວຽກຢູ່ກາຍກໍລຳບາກ ເອົາລະເຮົານອນດີກວ່າ ທ່ານຈຶ່ງນອນ ບໍ່ເລີ່ມທຳຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ຊື່ວ່າກຸສີຕະວັດຖຸຂໍ້ທີ ໔

໓. ພິກຂຸຕ້ອງເດີນທາງ ທ່ານມີຄວາມຄິດແນວນີ້ວ່າ ເຮົາຈັກຕ້ອງເດີນທາງ ແຕ່ເມື່ອເຮົາກຳລັງເດີນທາງກາຍຈັກລຳບາກ ເອົາລະເຮົານອນດີກວ່າ ທ່ານຈຶ່ງນອນ ບໍ່ເລີ່ມຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ຊື່ວ່າກຸສີຕະວັດຖຸຂໍ້ທີ ໓

໔. ພິກຂຸເດີນທາງແລ້ວ ທ່ານມີຄວາມຄິດແນວນີ້ວ່າ ເຮົາໄດ້ເດີນທາງແລ້ວ ເມື່ອເຮົາກຳລັງເດີນທາງຢູ່ກາຍກໍລຳບາກ ເອົາລະ ເຮົານອນດີກວ່າ ທ່ານຈຶ່ງນອນ ບໍ່ເລີ່ມຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງນີ້ຊື່ວ່າກຸສີຕະວັດຖຸຂໍ້ທີ ໔

໕. ພິກຂຸທ່ຽວໄປບິນທະບາດໃນບ້ານຫຼືນິຄົມ ບໍ່ໄດ້ໂພຊະນະຫຍາບຫຼືປະນີດພຽງພໍແກ່ຄວາມຕ້ອງການ ທ່ານມີຄວາມຄິດແນວນີ້ວ່າ ເຮົາທ່ຽວໄປບິນທະບາດ ໃນບ້ານຫຼືນິຄົມກໍບໍ່ໄດ້ໂພຊະນະຫຍາບຫຼືປະນີດພຽງພໍແກ່ຄວາມຕ້ອງການ ກາຍຂອງເຮົານັ້ນເມື່ອຍລ້າ ບໍ່ຄວນແກ່ວຽກງານ ເອົາລະ ເຮົານອນດີກວ່າ ທ່ານຈຶ່ງນອນ ບໍ່ເລີ່ມຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ຊື່ວ່າ ກຸສີຕະວັດຖຸ ຂໍ້ທີ ໕

໖. ພິກຂຸທ່ຽວໄປບິນທະບາດໃນບ້ານຫຼືນິຄົມ ໄດ້ໂພຊະນະຫຍາບຫຼືປະນີດພຽງພໍແກ່ຄວາມຕ້ອງການ ທ່ານມີຄວາມຄິດແນວນີ້ວ່າ ເຮົາຈະທ່ຽວໄປບິນທະບາດໃນບ້ານຫຼືນິຄົມໄດ້ໂພຊະນະຫຍາບ ຫຼື ປະນີດພຽງພໍແກ່ຄວາມຕ້ອງການແລ້ວ ກາຍຂອງເຮົາໜັກ ບໍ່ຄວນແກ່ວຽກງານ ຈະເປັນເໝືອນຖົ່ວໝັກດອງ ເອົາລະ ເຮົານອນດີກວ່າ ທ່ານຈຶ່ງນອນ ບໍ່ເລີ່ມຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງຄຸນທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ຊື່ວ່າ ກຸສີຕະວັດຖຸຂໍ້ທີ ໖

໗. ພິກຂຸເກີດອາພາດຂຶ້ນເລັກໜ້ອຍ ທ່ານມີຄວາມຄິດແນວນີ້ວ່າ ເຮົາເກີດອາພາດຂຶ້ນເລັກໜ້ອຍ ມີອ້າງທີ່ຈະນອນ ເອົາລະ ເຮົານອນດີກວ່າ ທ່ານຈຶ່ງນອນ ບໍ່ເລີ່ມຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ຊື່ວ່າກຸສີຕະວັດຖຸຂໍ້ທີ ໗

໘. ພິກຂຸຫາຍໄຂ້ແລ້ວແຕ່ຫາຍຍັງບໍ່ດົນ ທ່ານມີຄວາມຄິດແນວນີ້ວ່າ ເຮົາຫາຍໄຂ້ແລ້ວ ແຕ່ຫາຍຍັງບໍ່ດົນ ກາຍຂອງເຮົານັ້ນຍັງອ່ອນເພຍ ບໍ່ຄວນແກ່ວຽກງານ ເອົາລະ ເຮົານອນດີກວ່າ ທ່ານຈຶ່ງນອນ ບໍ່ເລີ່ມຄວາມພຽນເພື່ອເຖິງທຳທີ່ຍັງບໍ່ເຖິງ ເພື່ອບັນລຸທຳທີ່ຍັງບໍ່ບັນລຸ ເພື່ອເຮັດໃຫ້ແຈ້ງທຳທີ່ຍັງບໍ່ໄດ້ເຮັດໃຫ້ແຈ້ງ ນີ້ຊື່ວ່າກຸສີຕະວັດຖຸຂໍ້ທີ ໘

ເຫຼົ່ານີ້ຊື່ວ່າກຸສີຕະວັດຖຸ ໘

[໙໕໔] ຈິດກະທົບໃນໂລກກະທຳ ໘ ເປັນແນວໃດ?
ຈິດກະທົບໃນໂລກະທຳ ໘ ຄື

໑. ຄວາມຍິນດີໃນລາບ ໕. ຄວາມຍິນຮ້າຍໃນຄວາມເສື່ອມລາບ
໒. ຄວາມຍິນດີໃນຍົດ ໖. ຄວາມຍິນຮ້າຍໃນຄວາມເສື່ອມຍົດ
໓. ຄວາມຍິນດີໃນການສັນເສີນ ໗. ຄວາມຍິນຮ້າຍໃນການນິນທາ
໔. ຄວາມຍິນດີໃນສຸກ ໘. ຄວາມຍິນຮ້າຍໃນທຸກ

ເຫຼົ່ານີ້ຊື່ວ່າຈິດກະທົບໃນໂລກກະທຳ ໘ ເຫຼົ່ານີ້

[໙໕໕] ອະນະຣິຍະໂວຫານ ໘ ເປັນແນວໃດ?
ອະນະຣິຍະໂວຫານ ໘ ຄື

໑. ເມື່ອບໍ່ເຫັນເວົ້າວ່າເຫັນ ໕. ເມື່ອບໍ່ໄດ້ຍິນເວົ້າວ່າໄດ້ຍິນ
໒. ເມື່ອບໍ່ຮູ້ເວົ້າວ່າຮູ້ ໖. ເມື່ອບໍ່ເຂົ້າໃຈເວົ້າວ່າເຂົ້າໃຈ
໓. ເມື່ອເຫັນເວົ້າວ່າບໍ່ເຫັນ ໗. ເມື່ອໄດ້ຍິນເວົ້າວ່າບໍ່ໄດ້ຍິນ
໔. ເມື່ອຮູ້ເວົ້າວ່າບໍ່ຮູ້ ໘. ເມື່ອເຂົ້າໃຈເວົ້າວ່າບໍ່ເຂົ້າໃຈ

ເຫຼົ່ານີ້ຊື່ວ່າອະນະຣິຍະໂວຫານ ໘

[໙໕໖] ມິດສັດຕະ ໘ ເປັນແນວໃດ?
ມິດສັດຕະ ໘ ຄື

໑. ມິດສາທິດຖິ (ເຫັນຜິດ) ໕. ມິດສາສັງກັບປະ (ດຳຣິຜິດ)
໒. ມິດສາວາຈາ (ເຈຣະຈາຜິດ) ໖. ມິດສາກຳມັນຕະ (ການງານຜິດ)
໓. ມິດສາອາຊີວະ (ລ້ຽງຊີບຜິດ) ໗. ມິດສາວາຍາມະ (ພະຍາຍາມຜິດ)
໔. ມິດສາສະຕິ (ຣະລຶກຜິດ) ໘. ມິດສາສະມາທິ (ຕັ້ງຈິດໝັ້ນຜິດ)

ເຫຼົ່ານີ້ຊື່ວ່າມິດສັດຕະ ໘

[໙໕໗] ບູຣຸດໂທດ ໘ ເປັນແນວໃດ?
ບູຣຸດໂທດ ໘ ຄື

໑. ພິກຂຸໃນທຳວິໄນນີ້ໂຈດພິກຂຸດ້ວຍອາບັດ ພິກຂຸຜູ້ຖືກໂຈດດ້ວຍອາບັດນັ້ນແກ້ຕົວໂດຍການອ້າງວ່າບໍ່ມີສະຕິແນວນີ້ວ່າ ເຮົາຣະລຶກບໍ່ໄດ້ ເຮົາຣະລຶກບໍ່ໄດ້ ນີ້ຊື່ວ່າບູຣຸດໂທດຂໍ້ທີ ໑

໔. ພິກຂຸໂຈດພິກຂຸດ້ວຍອາບັດ ພິກຂຸຜູ້ຖືກໂຈດດ້ວຍອາບັດນັ້ນໂຕ້ຕອບຜູ້ໂຈດວ່າ ການເວົ້າກັບທ່ານຜູ້ໂງ່ຈ້າ ບໍ່ສະຫຼາດຈະມີປະໂຫຍດອັນໃດ ແມ່ນທ່ານກໍຍັງເຂົ້າໃຈຂ້ານ້ອຍວ່າຄວນວ່າກ່າວ ນີ້ຊື່ວ່າ ບູຣຸດໂທດຂໍ້ທີ ໔

໓. ພິກຂຸໂຈດພິກຂຸດ້ວຍອາບັດ ພິກຂຸຜູ້ຖືກໂຈດດ້ວຍອາບັດນັ້ນກັບປັບອາບັດແກ່ພິກຂຸ ຜູ້ໂຈດນັ້ນວ່າ ເຖິງທ່ານກໍຕ້ອງອາບັດຊື່ນີ້ ທ່ານຈົ່ງສະແດງອາບັດນັ້ນສາກ່ອນ ນີ້ຊື່ວ່າ ບູຣຸດໂທດຂໍ້ທີ ໓

໔. ພິກຂຸໂຈດພິກຂຸດ້ວຍອາບັດ ພິກຂຸຜູ້ຖືກໂຈດດ້ວຍອາບັດນັ້ນຍົກເຫດອື່ນ ໆ ມາເວົ້າປົກປິດ ເວົ້າດຶງໃຫ້ອອກໄປນອກເລື້ອງ ເຄືອງສະແດງຄວາມໂກດ ເຄືອງແລະອາການບໍ່ພໍໃຈ ນີ້ຊື່ວ່າ ບູຣຸດໂທດຂໍ້ທີ ໔

໕. ພິກຂຸໂຈດພິກຂຸດ້ວຍອາບັດ ພິກຂຸຜູ້ຖືກໂຈດດ້ວຍອາບັດນັ້ນໂບກມືປະຕິເສດໃນທ່າມກາງສົງ ນີ້ຊື່ວ່າ ບູຣຸດໂທດຂໍ້ທີ ໕

໖. ພິກຂຸໂຈດພິກຂຸດ້ວຍອາບັດ ພິກຂຸຜູ້ຖືກໂຈດດ້ວຍອາບັດນັ້ນນິ່ງເສີຍສາດ້ວຍຄິດວ່າ ເຮົາບໍ່ຕ້ອງອາບັດເລີຍ ແຕ່ຄວາມຈິງເຮົາຕ້ອງອາບັດ ແກ້ງສົງໃຫ້ລໍາບາກ ນີ້ຊື່ວ່າບູຣຸດໂທດຂໍ້ທີ ໖

໗. ພິກຂຸໂຈດພິກຂຸດ້ວຍອາບັດ ພິກຂຸຜູ້ຖືກໂຈດດ້ວຍອາບັດນັ້ນ ບໍ່ເອື້ອເຟື້ອສົງບໍ່ເອື້ອເຟື້ອໂຈດ ຫຼີກໄປຕາມພໍໃຈ ທັງທີ່ຍັງມີອາບັດຕິດຕົວຢູ່ ນີ້ຊື່ວ່າ ບູຣຸດໂທດຂໍ້ທີ ໗

໘. ພິກຂຸໂຈດພິກຂຸດ້ວຍອາບັດ ພິກຂຸຜູ້ຖືກໂຈດດ້ວຍອາບັດນັ້ນກ່າວແນວນີ້ວ່າ ເປັນຫຍັງນໍ ທ່ານຈຶ່ງວຸ້ນວາຍກັບຂ້ານ້ອຍຫຼາຍແທ້ ບັດນີ້ຂ້ານ້ອຍຈັກລາສິກຂາໄປເປັນຄະລືຫັດ ທ່ານກໍລາສິກຂາໄປເປັນຄະລືຫັດແລ້ວກ່າວແນວນີ້ວ່າ ທ່ານບັດນີ້ທ່ານຄົງພໍໃຈແລ້ວ ນີ້ຊື່ວ່າບູຣຸດໂທດຂໍ້ທີ ໘

ເຫຼົ່ານີ້ຊື່ວ່າບູຣຸດໂທດ ໘

[໙໕໘] ອະສັນຍີວາທະ ໘ ເປັນແນວໃດ?
ສະມະນະ ຫຼື ພາມພວກໜຶ່ງຍ່ອມບັນຍັດວ່າ

| | |
|---|---|
| ໑. ອັດຕາທີ່ມີຮູບ | ຍັ່ງຍືນ ຫຼັງຈາກຕາຍແລ້ວ ບໍ່ມີສັນຍາ |
| ໒. ອັດຕາທີ່ບໍ່ມີຮູບ | ຍັ່ງຍືນ ຫຼັງຈາກຕາຍແລ້ວ ບໍ່ມີສັນຍາ |

໓. ອັດຕາທັງທີ່ມີຮູບແລະບໍ່ມີຮູບ ຍັ່ງຍືນ ຫຼັງຈາກຕາຍແລ້ວ ບໍ່ມີສັນຍາ
໔. ອັດຕາມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນ ຍັ່ງຍືນ ຫຼັງຈາກຕາຍແລ້ວ ບໍ່ມີສັນຍາ
໕. ອັດຕາມີບ່ອນສຸດ ຍັ່ງຍືນ ຫຼັງຈາກຕາຍແລ້ວ ບໍ່ມີສັນຍາ
໖. ອັດຕາບໍ່ມີບ່ອນສຸດ ຍັ່ງຍືນ ຫຼັງຈາກຕາຍແລ້ວ ບໍ່ມີສັນຍາ
໗. ອັດຕາມີບ່ອນສຸດແລະບໍ່ມີບ່ອນສຸດ ຍັ່ງຍືນ ຫຼັງຈາກຕາຍແລ້ວ ບໍ່ມີສັນຍາ
໘. ອັດຕາມີບ່ອນສຸດກໍບໍ່ແມ່ນ ບໍ່ມີບ່ອນສຸດກໍບໍ່ແມ່ນ ຍັ່ງຍືນ ຫຼັງຈາກຕາຍແລ້ວ ບໍ່ມີສັນຍາ

ເຫຼົ່ານີ້ຊື່ວ່າ ອະສັນຍີວາທະ ໘

[໙໕໙] ເນວະສັນຍີນາສັນຍີວາທະ ໘ ເປັນແນວໃດ?
ສະມະນະ ຫຼື ພາມພວກໜຶ່ງຍ່ອມບັນຍັດວ່າ

໑. ອັດຕາມີຮູບ ຍັ່ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ
໒. ອັດຕາບໍ່ມີຮູບ ຍັ່ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ
໓. ອັດຕາທີ່ມີຮູບແລະບໍ່ມີຮູບ ຍັ່ງຍືນ ຫຼັງຈາຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ
໔. ອັດຕາມີຮູບກໍບໍ່ແມ່ນ ບໍ່ມີຮູບກໍບໍ່ແມ່ນ ຍັ່ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ
໕. ອັດຕາມີບ່ອນສຸດ ຍັ່ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ
໖. ອັດຕາບໍ່ມີບ່ອນສຸດ ຍັ່ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ
໗. ອັດຕາມີບ່ອນສຸດແລະບໍ່ມີບ່ອນສຸດ ຍັ່ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ
໘. ອັດຕາມີບ່ອນສຸດກໍບໍ່ແມ່ນ ບໍ່ມີບ່ອນສຸດກໍບໍ່ແມ່ນ ຍັ່ງຍືນ ຫຼັງຈາກຕາຍແລ້ວ ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

ເຫຼົ່ານີ້ຊື່ວ່າເນວະສັນຍີນາສັນຍີວາທະ ໘

**ອັດຖະກະນິດເທດ ຈົບ**

## ໙. ນະວະກະນິດເທດ

[໙໖໐] ບັນດານະວະກະມາຕິກາເຫຼົ່ານັ້ນ ອາຄາຕະວັດຖຸ ໙ ເປັນແນວໃດ?
ອາຄາຕະວັດຖຸ ໙ ຄື

໑. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ໄດ້ທຳຄວາມເສື່ອມເສຍແກ່ເຮົາ
໒. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງທຳຄວາມເສື່ອມເສຍແກ່ເຮົາ
໓. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກທຳຄວາມເສື່ອມເສຍແກ່ເຮົາ
໔. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ໄດ້ທຳຄວາມເສື່ອມເສຍແກ່ຄົນຜູ້ເປັນທີ່ຮັກທີ່ຮັກແພງຂອງເຮົາ
໕. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງທຳຄວາມເສື່ອມເສຍແກ່ຄົນຜູ້ເປັນທີ່ຮັກທີ່ຮັກແພງຂອງເຮົາ
໖. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກທຳຄວາມເສື່ອມເສຍແກ່ຄົນຜູ້ເປັນທີ່ຮັກທີ່ຮັກແພງຂອງເຮົາ
໗. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ໄດ້ເຮັດປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ຮັກແພງຂອງເຮົາ
໘. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງເຮັດປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ຮັກແພງຂອງເຮົາ
໙. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກເຮັດປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ຮັກແພງຂອງເຮົາ

ເຫຼົ່ານີ້ຊື່ວ່າອາຄາຕະວັດຖຸ ໙

[໙໖໑] ປຸຣິສະມະລະ ໙ ເປັນແນວໃດ?
ປຸຣິສະມະລະ ໙ ຄື

໑. ໂກທະ (ຄວາມໂກດ)
໒. ມັກຂະ (ຄວາມລົບຫຼູ່ຄຸນທ່ານ)
໓. ອິດສາ (ຄວາມຣິດສະຫຍາ)
໔. ມັດສະຣິຍະ (ຄວາມຂີ້ຖີ່)
໕. ມາຍາ (ຄວາມເຈົ້າເລ້)
໖. ສາເຖີຍຍະ (ຄວາມໂອ້ອວດ)
໗. ມຸສາວາທະ (ການເວົ້າຕົວະ)
໘. ປາປິດສະຕາ (ຄວາມປາຖະໜາລາມົກ)
໙. ມິດສາທິດຖິ (ຄວາມເຫັນຜິດ)

ເຫຼົ່ານີ້ຊື່ວ່າ ປຸຣິສະມະລະ ໙

[໙໖໘] ມານະ ໙ ເປັນແນວໃດ?
ມານະ ໙ ຄື

໑. ເປັນຜູ້ເລີດກວ່າເຂົາ ຖືຕົວວ່າເລີດກວ່າເຂົາ
໒. ເປັນຜູ້ເລີດກວ່າເຂົາ ຖືຕົວວ່າສະເໝີເຂົາ
໓. ເປັນຜູ້ເລີດກວ່າເຂົາ ຖືຕົວວ່າດ້ອຍກວ່າເຂົາ
໔. ເປັນຜູ້ສະເໝີເຂົາ ຖືຕົວວ່າເລີດກວ່າເຂົາ
໕. ເປັນຜູ້ສະເໝີເຂົາ ຖືຕົວວ່າສະເໝີເຂົາ
໖. ເປັນຜູ້ສະເໝີເຂົາ ຖືຕົວວ່າດ້ອຍກວ່າເຂົາ
໗. ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າເລີດກວ່າເຂົາ
໘. ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າສະເໝີເຂົາ
໙. ເປັນຜູ້ດ້ອຍກວ່າເຂົາ ຖືຕົວວ່າດ້ອຍກວ່າເຂົາ

ເຫຼົ່ານີ້ຊື່ວ່າມານະ ໙

[໙໖໓] ຕັນຫາມູລະກະທຳ ໙ ເປັນແນວໃດ?
ຕັນຫາມູລະກະທຳ ໙ ຄື

໑. ຍ້ອນອາໄສຕັນຫາ ການສະແຫວງຫາ ຈຶ່ງເກີດຂຶ້ນ
໒. ຍ້ອນອາໄສການສະແຫວງຫາ ການໄດ້ ຈຶ່ງເກີດຂຶ້ນ
໓. ຍ້ອນອາໄສການໄດ້ ການພິຈາລະນາ ຈຶ່ງເກີດຂຶ້ນ
໔. ຍ້ອນອາໄສການພິຈາລະນາ ສັນທະຣາຄະ ຈຶ່ງເກີດຂຶ້ນ
໕. ຍ້ອນອາໄສສັນທະຣາຄະ ຄວາມຫຼົງໃຫຼ ຈຶ່ງເກີດຂຶ້ນ
໖. ຍ້ອນອາໄສຄວາມຫຼົງໃຫຼ ຄວາມຫວງແຫນ ຈຶ່ງເກີດຂຶ້ນ
໗. ຍ້ອນອາໄສຄວາມຫວງແຫນ ຄວາມຂີ້ຖີ່ ຈຶ່ງເກີດຂຶ້ນ
໘. ຍ້ອນອາໄສຄວາມຂີ້ຖີ່ ການຮັກສາ ຈຶ່ງເກີດຂຶ້ນ
໙. ຍ້ອນອາໄສການຮັກສາ ສະພາວະທຳທີ່ເປັນບາບເປັນອະກຸສົນຫຼາຍປະການ ຄື ການຖືທ່ອນໄມ້ ການຖືອາວຸດ ການຜິດຖຽງ ການແກ່ງແຍ່ງ ການວິວາທະ ການເວົ້າຂຶ້ນດ້ວຍຄຳວ່າມຶງ ໆ ກູ ໆ ການເວົ້າສັບສໍ່ ການເວົ້າຕົວະຈຶ່ງເກີດຂຶ້ນ

ເຫຼົ່ານີ້ຊື່ວ່າ ຕັນຫາມູລະກະທຳ ໙

[໙໖໔] ອິນຊິຕະ ໙ ເປັນແນວໃດ?
ອິນຊິຕະ ໙ ຄື

໑. ຄວາມຫວັ່ນໄຫວວ່າ ເຮົາມີ
໒. ຄວາມຫວັ່ນໄຫວວ່າ ເຮົາເປັນ
໓. ຄວາມຫວັ່ນໄຫວວ່າ ເຮົາເປັນສິ່ງນີ້
໔. ຄວາມຫວັ່ນໄຫວວ່າ ເຮົາຈັກມີ
໕. ຄວາມຫວັ່ນໄຫວວ່າ ເຮົາຈັກເປັນສັດມີຮູບ
໖. ຄວາມຫວັ່ນໄຫວວ່າ ເຮົາຈັກເປັນສັດບໍ່ມີຮູບ
໗. ຄວາມຫວັ່ນໄຫວວ່າ ເຮົາຈັກເປັນສັດມີສັນຍາ
໘. ຄວາມຫວັ່ນໄຫວວ່າ ເຮົາຈັກເປັນສັດບໍ່ມີສັນຍາ
໙. ຄວາມຫວັ່ນໄຫວວ່າເຮົາຈັກເປັນສັດມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

ເຫຼົ່ານີ້ຊື່ວ່າ ອິນຊິຕະ ໙

[໙໖໕] ມັນຍິຕະ ໙ ຯລຯ ຜັນທິຕະ ໙ ຯລຯ ປະປັນຈິຕະ ໙ ຯລຯ ສັງຂະຕະ ໙ ເປັນແນວໃດ?

ສັງຂະຕະ ໙ ຄື

໑. ຄວາມປຸງແຕ່ງວ່າ ເຮົາມີ
໒. ຄວາມປຸງແຕ່ງວ່າ ເຮົາເປັນ
໓. ຄວາມປຸງແຕ່ງວ່າ ເຮົາເປັນສິ່ງນີ້
໔. ຄວາມປຸງແຕ່ງວ່າ ເຮົາຈັກມີ
໕. ຄວາມປຸງແຕ່ງວ່າ ເຮົາຈັກເປັນສັດມີຮູບ
໖. ຄວາມປຸງແຕ່ງວ່າ ເຮົາຈັກເປັນສັດບໍ່ມີຮູບ
໗. ຄວາມປຸງແຕ່ງວ່າ ເຮົາຈັກເປັນສັດມີສັນຍາ
໘. ຄວາມປຸງແຕ່ງວ່າ ເຮົາຈັກເປັນສັດບໍ່ມີສັນຍາ
໙. ຄວາມປຸງແຕ່ງວ່າ ເຮົາຈັກເປັນສັດມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

ເຫຼົ່ານີ້ຊື່ວ່າສັງຂະຕະ ໙

**ນະວະກະນິດເທດ ຈົບ**

## ໑໐. ທະສະກະນິດເທດ

[໙໖໖] ບັນດາທະສະກະມາຕິກາເຫຼົ່ານັ້ນ ກິເລດວັດຖຸ ໑໐ ເປັນແນວໃດ?
ກິເລດວັດຖຸ ໑໐ ຄື

| | | | |
|---|---|---|---|
| ໑. ໂລພະ | (ຄວາມໂລບ) | ໒. ໂທສະ | (ຄວາມຄິດປະທຸດສະຮ້າຍ) |
| ໓. ໂມຫະ | (ຄວາມຫຼົງ) | ໔. ມານະ | (ຄວາມຖືຕົວ) |
| ໕. ທິດຖິ | (ຄວາມເຫັນຜິດ) | ໖. ວິຈິກິດສາ | (ຄວາມສົງໄສ) |
| ໗. ຖີນະ | (ຄວາມທໍ້ດທູ່) | ໘. ອຸດທັດຈະ | (ຄວາມຟຸ້ງຊ່ານ) |
| ໙. ອະຫິຣິກະ | (ຄວາມບໍ່ລະອາຍບາບ) | ໑໐. ອະໂນດຕັບປະ | (ຄວາມບໍ່ເກງກົວບາບ) |

ເຫຼົ່ານີ້ຊື່ວ່າກິເລດວັດຖຸ ໑໐

[໙໗] ອາຄາຕະວັດຖຸ ໑໐ ເປັນແນວໃດ?
ອາຄາຕະວັດຖຸ ໑໐ ຄື

໑. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໒. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໓. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໔. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ຮັກແພງຂອງເຮົາ
໕. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ຮັກແພງຂອງເຮົາ
໖. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ຮັກແພງຂອງເຮົາ
໗. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ໄດ້ເຮັດປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ຮັກແພງຂອງເຮົາ
໘. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ຮັກແພງຂອງເຮົາ
໙. ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ຮັກແພງຂອງເຮົາ
໑໐. ຄວາມອາຄາດເກີດຂຶ້ນໃນຖານະອັນບໍ່ສົມຄວນ

ເຫຼົ່ານີ້ຊື່ວ່າອາຄາຕະວັດຖຸ ໑໐

[໙໘] ອະກຸສົນກຳມະບົດ ໑໐ ເປັນແນວໃດ?
ອະກຸສົນກຳມະບົດ ໑໐ ຄື

໑. ປານາຕິບາດ (ຂ້າສັດ)

໓. ອະທິນນາທານ (ລັກຊັບ)
໓. ກາເມສຸມິດສາຈານ (ປະພຶດຜິດໃນກາມ)
໔. ມຸສາວາທະ (ເວົ້າຕົວະ)
໕. ປິສຸນະວາຈາ (ເວົ້າສັບສໍ່)
໖. ຜະຣຸສະວາຈາ (ເວົ້າຄຳຫຍາບ)
໗. ສຳຜັບປະລາປະ (ເວົ້າເພີ້ເຈີ້)
໘. ອະພິດຊາ (ເພ່ງເລັງຢາກໄດ້ຂອງເຂົາ)
໙. ພະຍາບາດ (ປອງຮ້າຍເຂົາ)
໑໐. ມິດສາທິດຖິ (ເຫັນຜິດຈາກຄອງທຳ)

ເຫຼົ່ານີ້ຊື່ວ່າ ອະກຸສົນກຳມະບົດ ໑໐

[໙໖໙] ສັງໂຍດ ໑໐ ເປັນແນວໃດ?
ສັງໂຍດ ໑໐ ຄື
໑. ກາມຣາຄະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມພໍໃຈໃນກາມ)
໒. ປະຕິຄະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມຄັດເຄືອງ)
໓. ມານະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມຖືໂຕ)
໔. ທິດຖິສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມເຫັນ)
໕. ວິຈິກິດສາສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມສົງໄສ)
໖. ສີລັບພະຕະປະຣາມາສະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມຖືສິນພົດ)
໗. ພະວະຣາຄະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມພໍໃຈໃນພົບ)
໘. ອິດສາສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມຢ້ານລື່ນ)
໙. ມັດສະຣິຍະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມຂີ້ຖີ່ຫວງກັ້ນ)
໑໐. ອະວິດຊາສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືຄວາມບໍ່ຮູ້)

ເຫຼົ່ານີ້ຊື່ວ່າສັງໂຍດ ໑໐

[໙໗໐] ມິດສັດຕະ ໑໐ ເປັນແນວໃດ?
ມິດສັດຕະ ໑໐ ຄື

໑. ມິດສາທິດຖິ (ເຫັນຜິດ) ໒. ມິດສາສັງກັບປະ (ດຳຣິຜິດ)
໓. ມິດສາວາຈາ (ເຈຣະຈາຜິດ) ໔. ມິດສາກຳມັນຕະ (ເຮັດວຽກຜິດ)
໕. ມິດສາອາຊີວະ (ລ້ຽງຊີບຜິດ) ໖. ມິດສາວາຍາມະ (ພະຍາຍາມຜິດ)

໗. ມິດສາສະຕິ (ຣະລຶກຜິດ) ໘. ມິດສາສະມາທິ (ຕັ້ງຈິດໝັ້ນຜິດ)
໙. ມິດສາຍານະ (ຮູ້ຜິດ) ໑໐. ມິດສາວິມຸດຕິ (ລຸດພົ້ນຜິດ)

ເຫຼົ່ານີ້ຊື່ວ່າມິດສັດຕະ ໑໐

[໙໗໑] ມິດສາທິດຖິມີວັດຖຸ ໑໐ ເປັນແນວໃດ?
ມິດສາທິດຖິມີວັດຖຸ ໑໐ ຄື

໑. ຄວາມເຫັນວ່າ ທານທີ່ບຸກຄົນໃຫ້ແລ້ວບໍ່ມີຜົນ
໒. ຄວາມເຫັນວ່າ ການບູຊາບໍ່ມີຜົນ
໓. ຄວາມເຫັນວ່າ ການບວງສວງບໍ່ມີຜົນ
໔. ຄວາມເຫັນວ່າ ຜົນວິບາກຂອງກຳດີແລະກຳຊົ່ວບໍ່ມີ
໕. ຄວາມເຫັນວ່າ ໂລກນີ້ບໍ່ມີ
໖. ຄວາມເຫັນວ່າ ໂລກໜ້າບໍ່ມີ
໗. ຄວາມເຫັນວ່າ ມານດາບໍ່ມີຄຸນ
໘. ຄວາມເຫັນວ່າ ບິດາບໍ່ມີຄຸນ
໙. ຄວາມເຫັນວ່າ ສັດຜູ້ເປັນໂອປະປາຕິກະບໍ່ມີ
໑໐. ຄວາມເຫັນວ່າສະມະນະພາມຜູ້ປະຕິບັດດີ ປະຕິບັດຊອບ ຮູ້ຍິ່ງ ເຫັນຈິງ ປະຈັກ ເຊິ່ງໂລກນີ້ແລະໂລກໜ້າດ້ວຍຕົນເອງແລ້ວປະກາດໃຫ້ຜູ້ອື່ນຮູ້ບໍ່ມີໃນໂລກ

ນີ້ຊື່ວ່າ ມິດສາທິດຖິມີວັດຖຸ ໑໐

[໙໗໒] ອັນຕັກຄາຫິກະທິດຖິມີວັດຖຸ ໑໐ ເປັນແນວໃດ?
ອັນຕັກຄາຫິກະທິດຖິມີວັດຖຸ ໑໐ ຄື

໑. ຄວາມເຫັນວ່າ ໂລກທ່ຽງ
໒. ຄວາມເຫັນວ່າ ໂລກບໍ່ທ່ຽງ
໓. ຄວາມເຫັນວ່າ ໂລກມີບ່ອນສຸດ
໔. ຄວາມເຫັນວ່າ ໂລກບໍ່ມີບ່ອນສຸດ
໕. ຄວາມເຫັນວ່າ ຊີວະກັບສະຣີຣະເປັນຢ່າງດຽວກັນ
໖. ຄວາມເຫັນວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ
໗. ຄວາມເຫັນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ
໘. ຄວາມເຫັນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ
໙. ຄວາມເຫັນວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ

໑໐. ຄວາມເຫັນວ່າຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນຈະວ່າບໍ່ເກີດອີກກໍບໍ່ແມ່ນ

ນີ້ຊື່ວ່າອັນຕັກຄາຫິກະທິດຖິມີວັດຖຸ ໑໐

**ທະສະກະນິດເທດ ຈົບ**

## ຕັນຫາວິຈະຣິດນິດເທດ

[ໝາ໓] ບັນດາມາຕິການັ້ນ ຕັນຫາວິຈະຣິດ ໑໘ ອາໄສປັນຈະຂັນພາຍໃນເປັນແນວໃດ? ຕັນຫາວິຈະຣິດ ໑໘ ອາໄສປັນຈະຂັນພາຍໃນ ຄື

໑. ຕັນຫາວ່າ ເຮົາມີ
໒. ຕັນຫາວ່າ ເຮົາເປັນແນວນີ້
໓. ຕັນຫາວ່າ ເຮົາເປັນແນວນັ້ນ
໔. ຕັນຫາວ່າ ເຮົາເປັນໂດຍປະການອື່ນ
໕. ຕັນຫາວ່າ ເຮົາຈັກເປັນ
໖. ຕັນຫາວ່າ ເຮົາຈັກເປັນແນວນີ້
໗. ຕັນຫາວ່າ ເຮົາຈັກເປັນແນວນັ້ນ
໘. ຕັນຫາວ່າ ເຮົາຈັກເປັນໂດຍປະການອື່ນ
໙. ຕັນຫາວ່າ ເຮົາເປັນຜູ້ທ່ຽງ
໑໐. ຕັນຫາວ່າ ເຮົາເປັນຜູ້ບໍ່ທ່ຽງ
໑໑. ຕັນຫາວ່າ ເຮົາເພິ່ງເປັນ
໑໒. ຕັນຫາວ່າ ເຮົາເພິ່ງເປັນແນວນີ້
໑໓. ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນ
໑໔. ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນ
໑໕. ຕັນຫາວ່າ ເຮົາເພິ່ງເປັນແດ່
໑໖. ຕັນຫາວ່າ ເຮົາເພິ່ງເປັນແນວນີ້ແດ່
໑໗. ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນແດ່
໑໘. ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນແດ່

[ໝາ໒] ຕັນຫາວ່າ ເຮົາມີ ເປັນແນວໃດ?

ບຸກຄົນບໍ່ແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານອອກຈາກກັນແລ້ວ ໄດ້ສັນທະວ່າເຮົາມີ ໄດ້ມານະວ່າເຮົາມີ ໄດ້

ທິດຖືວ່າເຮົາມີ ເມື່ອສະພາວະທຳທັງ ໕ ນັ້ນມີຢູ່ ສະພາວະທຳເຄື່ອງລ້າຊ້າເຫຼົ່ານີ້ກໍມີ ວ່າເຮົາເປັນແນວນີ້ ເຮົາເປັນແນວນັ້ນ ຫຼື ເຮົາເປັນໂດຍປະການອື່ນ ກໍມີ (໑)

ຕັນຫາວ່າ ເຮົາເປັນແນວນີ້ ເປັນແນວໃດ?

ຕັນຫາວ່າ ເຮົາເປັນກະສັດຫຼືເປັນພາມ ເປັນແພດຫຼືເປັນສູດ ເປັນຄະລຶຫັດຫຼືເປັນບັນພະຊິດ ເປັນເທວະດາຫຼືເປັນມະນຸດ ເປັນພົມທີ່ມີຮູບຫຼືເປັນພົມທີ່ບໍ່ມີຮູບ ເປັນພົມທີ່ມີສັນຍາຫຼືເປັນພົມທີ່ບໍ່ມີສັນຍາ ຫຼື ເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແນວນີ້ຕັນຫາວ່າ ເຮົາເປັນແນວນີ້ກໍມີ (໔)

ຕັນຫາວ່າ ເຮົາເປັນແນວນັ້ນ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ເຮົາກໍເປັນກະສັດຄືກັນ ເຂົາເປັນພາມ ເຮົາກໍເປັນພາມຄືກັນ ເຂົາເປັນແພດ ເຮົາກໍເປັນແພດຄືກັນ ເຂົາເປັນສູດ ເຮົາກໍເປັນສູດຄືກັນ ເຂົາເປັນຄະລຶຫັດເຮົາກໍເປັນຄະລຶຫັດຄືກັນ ເຂົາເປັນບັນພະຊິດ ເຮົາກໍເປັນບັນພະຊິດຄືກັນ ເຂົາເປັນເທວະດາ ເຮົາກໍເປັນເທວະດາຄືກັນ ເຂົາເປັນມະນຸດ ເຮົາກໍເປັນມະນຸດຄືກັນ ເຂົາເປັນພົມມີຮູບ ເຮົາກໍເປັນພົມມີຮູບຄືກັນ ເຂົາເປັນພົມບໍ່ມີຮູບ ເຮົາກໍເປັນພົມບໍ່ມີຮູບຄືກັນ ເຂົາເປັນພົມມີສັນຍາ ເຮົາກໍເປັນພົມມີສັນຍາຄືກັນ ເຂົາເປັນພົມບໍ່ມີສັນຍາ ເຮົາກໍເປັນພົມບໍ່ມີສັນຍາຄືກັນ ຫຼືວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ເຮົາກໍເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນຄືກັນ ແນວນີ້ຕັນຫາວ່າ ເຮົາເປັນແນວນັ້ນກໍມີ (໕)

ຕັນຫາວ່າ ເຮົາເປັນໂດຍປະການອື່ນ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ແຕ່ເຮົາບໍ່ໄດ້ເປັນກະສັດເໝືອນເຂົາ ເຂົາເປັນພາມ ແຕ່ເຮົາບໍ່ໄດ້ເປັນພາມເໝືອນເຂົາ ເຂົາເປັນແພດ ແຕ່ເຮົາບໍ່ໄດ້ເປັນແພດເໝືອນເຂົາ ເຂົາເປັນສູດແຕ່ເຮົາບໍ່ໄດ້ເປັນສູດເໝືອນເຂົາ ເຂົາເປັນຄະລຶຫັດ ແຕ່ເຮົາບໍ່ໄດ້ເປັນຄະລຶຫັດເໝືອນເຂົາ ເຂົາເປັນບັນພະຊິດແຕ່ເຮົາບໍ່ໄດ້ເປັນບັນພະຊິດ ເໝືອນເຂົາ ເຂົາເປັນເທວະດາ ແຕ່ເຮົາບໍ່ໄດ້ເປັນເທວະດາເໝືອນເຂົາ ເຂົາເປັນມະນຸດ ແຕ່ເຮົາບໍ່ໄດ້ເປັນມະນຸດເໝືອນເຂົາ ເຂົາເປັນພົມມີຮູບ ແຕ່ເຮົາບໍ່ໄດ້ເປັນພົມມີຮູບເໝືອນເຂົາ ເຂົາເປັນພົມມີສັນຍາ ແຕ່ເຮົາບໍ່ໄດ້ເປັນພົມມີສັນຍາເໝືອນເຂົາ ຫຼື ວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແຕ່ເຮົາບໍ່ໄດ້ເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນເໝືອນເຂົາ ແນວນີ້ຕັນຫາວ່າ ເຮົາເປັນໂດຍປະການອື່ນກໍມີ (໔)

ຕັນຫາວ່າ ເຮົາຈັກເປັນ ເປັນແນວໃດ?

ບຸກຄົນບໍ່ແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານອອກຈາກກັນແລ້ວ ໄດ້ສັນທະວ່າເຮົາຈັກເປັນ ໄດ້ມານະວ່າເຮົາຈັກເປັນ

ໄດ້ທິດຖິວ່າເຮົາຈັກເປັນ ເມື່ອສະພາວະທຳທັງ ໕ ນັ້ນມີຢູ່ ສະພາວະທຳເຄື່ອງ ລ້າຊ້າເຫຼົ່ານີ້ກໍມີວ່າເຮົາຈັກເປັນແນວນີ້ ເຮົາຈັກເປັນແນວນັ້ນ ຫຼືວ່າເຮົາຈັກເປັນໂດຍປະການອື່ນກໍມີ (໕)

ຕັນຫາວ່າ ເຮົາຈັກເປັນແນວນີ້ ເປັນແນວໃດ?

ຕັນຫາວ່າ ເຮົາຈັກເປັນກະສັດຫຼືຈັກເປັນພາມ ຈັກເປັນແພດຫຼືຈັກເປັນສູດ ຈັກເປັນຄະລິຫັດຫຼືຈັກເປັນບັນພະຊິດ ຈັກເປັນເທວະດາຫຼືຈັກເປັນມະນຸດ ຈັກເປັນພົມມີຮູບຫຼືຈັກເປັນພົມບໍ່ມີຮູບ ຈັກເປັນພົມມີສັນຍາຫຼືຈັກເປັນພົມບໍ່ມີສັນຍາ ຈັກເປັນພົມມີສັນຍາກໍບໍ່ແມ່ນຫຼືຈັກເປັນພົມບໍ່ມີສັນຍາກໍບໍ່ແມ່ນ ແນວນີ້ຕັນຫາວ່າ ເຮົາຈັກເປັນແນວນີ້ກໍມີ (໖)

ຕັນຫາວ່າ ເຮົາຈັກເປັນແນວນັ້ນ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ເຮົາກໍຈັກເປັນກະສັດຄືກັນ ເຂົາເປັນພາມ ເຮົາກໍຈັກເປັນພາມຄືກັນ ຯລຯ ຫຼືວ່າ ເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ເຮົາກໍຈັກເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ຄືກັນ ແນວນີ້ຕັນຫາວ່າເຮົາຈັກເປັນແນວນັ້ນກໍມີ (໗)

ຕັນຫາວ່າ ເຮົາຈັກເປັນໂດຍປະການອື່ນ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ແຕ່ເຮົາຈັກບໍ່ເປັນກະສັດເໝືອນເຂົາ ເຂົາເປັນພາມ ແຕ່ເຮົາຈັກບໍ່ເປັນພາມເໝືອນເຂົາ ຯລຯ ຫຼືວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແຕ່ເຮົາຈັກບໍ່ເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນເໝືອນເຂົາ ແນວນີ້ຕັນຫາວ່າ ເຮົາຈັກເປັນໂດຍປະການອື່ນກໍມີ (໘)

ຕັນຫາວ່າ ເຮົາເປັນຜູ້ທ່ຽງ ເປັນແນວໃດ?

ບຸກຄົນບໍ່ແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານອອກຈາກກັນແລ້ວ ມີຕັນຫາວ່າ ເຮົາທ່ຽງ ເຮົາຍັ່ງຍືນ ເຮົາຄົງທົນ ເຮົາບໍ່ມີຄວາມປັ່ນປ່ວນໄປເປັນທຳມະດາ ແນວນີ້ຕັນຫາວ່າ ເຮົາເປັນຜູ້ທ່ຽງກໍມີ (໙)

ຕັນຫາວ່າ ເຮົາເປັນຜູ້ບໍ່ທ່ຽງ ເປັນແນວໃດ?

ບຸກຄົນບໍ່ຈຳແນກສະພາວະທຳແນວໃດແນວໜຶ່ງ ຄືຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານອອກຈາກກັນແລ້ວ ມີຕັນຫາວ່າ ເຮົາຈັກຂາດສູນ ຈັກພິນາດ ຈັກບໍ່ມີ ແນວນີ້ຕັນຫາວ່າ ເຮົາເປັນຜູ້ບໍ່ທ່ຽງກໍມີ (໑໐)

ຕັນຫາວ່າ ເຮົາເພິ່ງເປັນ ເປັນແນວໃດ?

ບຸກຄົນບໍ່ແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານອອກຈາກກັນແລ້ວ ໄດ້ສັນທະວ່າເຮົາເພິ່ງເປັນ ໄດ້ມານະ ວ່າເຮົາ

ເພິ່ງເປັນ ໄດ້ທິດຖິວ່າເຮົາເພິ່ງເປັນ ເມື່ອສະພາວະທຳທັງ ໖ ນັ້ນມີຢູ່ ສະພາວະທຳ ເຄື່ອງລ້າຊ້າເຫຼົ່ານີ້ກໍມີວ່າ ເຮົາເພິ່ງເປັນແນວນີ້ ເຮົາເພິ່ງເປັນແນວນັ້ນ ຫຼືວ່າເຮົາເພິ່ງເປັນໂດຍປະການອື່ນກໍມີ (໑໑)

ຕັນຫາວ່າ ເຮົາເພິ່ງເປັນແນວນີ້ ເປັນແນວໃດ?

ຕັນຫາວ່າ ເຮົາເພິ່ງເປັນກະສັດຫຼືເປັນພາມ ເພິ່ງເປັນແພດຫຼືເປັນສູດ ເພິ່ງເປັນຄະລືຫັດຫຼືເປັນບັນພະຊິດ ເພິ່ງເປັນເທວະດາຫຼືເປັນມະນຸດ ເພິ່ງເປັນພົມມີຮູບຫຼືເປັນພົມບໍ່ມີຮູບ ເພິ່ງເປັນພົມມີສັນຍາຫຼືເປັນພົມບໍ່ມີສັນຍາ ຫຼື ເພິ່ງເປັນຜູ້ມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແນວນີ້ຕັນຫາວ່າ ເຮົາເພິ່ງເປັນແນວນີ້ກໍມີ (໑໘)

ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ເຮົາກໍເພິ່ງເປັນກະສັດຄືກັນ ເຂົາເປັນພາມເຮົາກໍເພິ່ງເປັນພາມຄືກັນ ຯລຯ ຫຼືວ່າ ເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ເຮົາກໍເພິ່ງເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນຄືກັນແນວນີ້ຕັນຫາວ່າເຮົາເພິ່ງເປັນແນວນັ້ນກໍມີ (໑໖)

ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ແຕ່ເຮົາບໍ່ເພິ່ງເປັນກະສັດເໝືອນເຂົາ ເຂົາເປັນພາມແຕ່ເຮົາບໍ່ເພິ່ງເປັນພາມເໝືອນເຂົາ ຯລຯ ຫຼືວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແຕ່ເຮົາບໍ່ເພິ່ງເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນເໝືອນເຂົາແນວນີ້ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນກໍມີ (໑໔)

ຕັນຫາວ່າ ເຮົາເພິ່ງເປັນແດ່ ເປັນແນວໃດ?

ບຸກຄົນບໍ່ແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານອອກຈາກກັນແລ້ວ ໄດ້ສັນທະວ່າເຮົາເພິ່ງເປັນແດ່ ໄດ້ມານະວ່າເຮົາກໍເພິ່ງເປັນແດ່ ໄດ້ທິດຖິວ່າເຮົາກໍເພິ່ງເປັນແດ່ ເມື່ອສະພາວະທຳທັງ ໖ ນັ້ນມີຢູ່ ສະພາວະທຳເຄື່ອງລ້າຊ້າເຫຼົ່ານີ້ກໍມີວ່າ ເຮົາເພິ່ງເປັນແນວນີ້ແດ່ ເຮົາເພິ່ງເປັນແນວນັ້ນແດ່ ຫຼື ວ່າເຮົາເພິ່ງເປັນໂດຍປະການອື່ນແດ່ກໍມີ (໑໕)

ຕັນຫາວ່າ ເຮົາເພິ່ງເປັນແນວນີ້ແດ່ ເປັນແນວໃດ?

ຕັນຫາວ່າ ເຮົາເພິ່ງເປັນກະສັດ ຫຼືເປັນພາມແດ່ ເພິ່ງເປັນແພດຫຼືເປັນສູດແດ່ເພິ່ງເປັນຄະລືຫັດຫຼືເປັນບັນພະຊິດແດ່ ເພິ່ງເປັນເທວະດາຫຼືເປັນມະນຸດແດ່ ເພິ່ງເປັນພົມມີຮູບ ຫຼືເປັນພົມບໍ່ມີຮູບແດ່ ຫຼືເພິ່ງເປັນພົມມີສັນຍາ ຈະເພິ່ງເປັນພົມບໍ່ມີສັນຍາແດ່ ຫຼືເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນແດ່ ແນວນີ້ຕັນຫາວ່າ ເຮົາເພິ່ງເປັນແນວນີ້ແດ່ກໍມີ (໑໖)

ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນແດ່ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ເຮົາກໍເພິ່ງເປັນກະສັດເໝືອນເຂົາແດ່ ເຂົາເປັນພາມ ເຮົາກໍເພິ່ງເປັນພາມເໝືອນເຂົາແດ່ ຯລຯ ຫຼືວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ເຮົາກໍເພິ່ງເປັນພົມມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນເໝືອນເຂົາແດ່ ແນວນີ້ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນແດ່ກໍມີ (໑໗)

ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນແດ່ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ແຕ່ເຮົາບໍ່ເພິ່ງເປັນກະສັດເໝືອນເຂົາແດ່ ເຂົາເປັນພາມ ແຕ່ເຮົາບໍ່ເພິ່ງເປັນພາມເໝືອນເຂົາແດ່ ຯລຯ ຫຼືວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແຕ່ເຮົາບໍ່ເພິ່ງເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນເໝືອນເຂົາແດ່ ແນວນີ້ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນແດ່ກໍມີ (໑໘)

ເຫຼົ່ານີ້ຮຽກວ່າ ຕັນຫາວິຈະຣິດ ໑໘ ອາໄສປັນຈະຂັນພາຍໃນ

[໓໗໕] ຕັນຫາວິຈະຣິດ ໑໘ ອາໄສປັນຈະຂັນພາຍນອກ ເປັນແນວໃດ?

ຕັນຫາວິຈະຣິດ ໑໘ ອາໄສປັນຈະຂັນພາຍນອກ ຄື

໑. ຕັນຫາວ່າ ເຮົາເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໒. ຕັນຫາວ່າ ເຮົາເປັນແນວນີ້ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໓. ຕັນຫາວ່າ ເຮົາເປັນແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໔. ຕັນຫາວ່າ ເຮົາເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໕. ຕັນຫາວ່າ ເຮົາຈັກເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໖. ຕັນຫາວ່າ ເຮົາຈັກເປັນແນວນີ້ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໗. ຕັນຫາວ່າ ເຮົາຈັກເປັນແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໘. ຕັນຫາວ່າ ເຮົາຈັກເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໙. ຕັນຫາວ່າ ເຮົາເປັນຜູ້ທ່ຽງດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໑໐. ຕັນຫາວ່າ ເຮົາເປັນຜູ້ບໍ່ທ່ຽງດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໑໑. ຕັນຫາວ່າ ເຮົາເພິ່ງເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໑໒. ຕັນຫາວ່າ ເຮົາເພິ່ງເປັນແນວນີ້ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໑໓. ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໑໔. ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້
໑໕. ຕັນຫາວ່າ ເຮົາເພິ່ງເປັນດ້ວຍຮູບນີ້ແດ່ ຯລຯ ຫຼື ວິນຍານນີ້ແດ່
໑໖. ຕັນຫາວ່າ ເຮົາເພິ່ງເປັນແນວນີ້ດ້ວຍຮູບນີ້ແດ່ ຯລຯ ຫຼື ວິນຍານນີ້ແດ່
໑໗. ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນດ້ວຍຮູບນີ້ແດ່ ຯລຯ ຫຼື ວິນຍານນີ້ແດ່
໑໘. ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນດ້ວຍຮູບນີ້ແດ່ ຯລຯ ຫຼື ວິນຍານນີ້ແດ່

[໙໗໓] ຕັນຫາວ່າ ເຮົາເປັນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແນວໃດ?

ບຸກຄົນແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ໆລໆ ເວທະນາ ໆລໆ ສັນຍາ ໆລໆ ສັງຂານ ໆລໆ ວິນຍານອອກຈາກກັນແລ້ວ ໄດ້ສັນທະວ່າເຮົາເປັນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ໄດ້ມານະວ່າເຮົາເປັນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ໄດ້ທິດຖິວ່າເຮົາ ເປັນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເມື່ອສະພາວະທຳທັງ ໓ ນັ້ນມີຢູ່ ສະພາວະທຳເຄື່ອງລ້າຊ້າເຫຼົ່ານີ້ວ່າ ເຮົາເປັນແນວນີ້ດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເຮົາເປັນແນວນັ້ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ຫຼືວ່າເຮົາເປັນໂດຍປະການອື່ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ກໍມີ (໑)

ຕັນຫາວ່າ ເຮົາເປັນແນວນີ້ດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແນວໃດ?

ຕັນຫາວ່າ ເຮົາເປັນກະສັດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນພາມດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແພດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນສູດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນຄະລິຫັດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນບັນພະຊິດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນເທວະດາດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນມະນຸດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນພົມມີຮູບດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນພົມບໍ່ມີຮູບດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ເປັນພົມມີສັນຍາດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນພົມບໍ່ມີສັນຍາດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ຫຼື ເປັນພົມມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ແນວນີ້ຕັນຫາວ່າ ເຮົາເປັນແນວນີ້ດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ກໍມີ (໒)

ຕັນຫາວ່າ ເຮົາເປັນແນວນັ້ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ເຮົາກໍເປັນກະສັດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ຄືກັນ ເຂົາເປັນພາມເຮົາກໍເປັນພາມດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ຄືກັນ ໆລໆ ຫຼືວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ເຮົາກໍເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ຄືກັນ ແນວນີ້ຕັນຫາວ່າ ເຮົາເປັນແນວນັ້ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ (໓)

ຕັນຫາວ່າ ເຮົາເປັນໂດຍປະການອື່ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ແຕ່ເຮົາບໍ່ໄດ້ເປັນກະສັດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ເໝືອນເຂົາ ເຂົາເປັນພາມແຕ່ເຮົາບໍ່ໄດ້ເປັນພາມດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ເໝືອນເຂົາ ໆລໆ ຫຼືວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແຕ່ເຮົາບໍ່ໄດ້ເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ເໝືອນເຂົາ ແນວນີ້ຕັນຫາວ່າ ເຮົາເປັນໂດຍປະການອື່ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ກໍມີ (໔)

ຕັນຫາວ່າ ເຮົາຈັກເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ເປັນແນວໃດ?

ບຸກຄົນແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານອອກຈາກກັນແລ້ວ ໄດ້ສັນທະວ່າເຮົາຈັກເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ໄດ້ມານະວ່າເຮົາຈັກເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ໄດ້ທິດຖິວ່າເຮົາ ຈັກເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ເມື່ອສະພາວະທຳທັງ ໓ ນັ້ນມີຢູ່ ສະພາວະທຳ ເຄື່ອງລ້າຊ້າເຫຼົ່ານີ້ວ່າ ເຮົາຈັກເປັນແນວນີ້ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ເຮົາຈັກເປັນ ແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຫຼື ວ່າເຮົາຈັກເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ກໍມີ (໕)

ຕັນຫາວ່າ ເຮົາຈັກເປັນແນວນີ້ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ເປັນແນວໃດ?

ຕັນຫາວ່າ ເຮົາຈັກເປັນກະສັດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຈັກເປັນພາມ ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຈັກເປັນແພດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຈັກເປັນສູດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຈັກເປັນຄະລືຫັດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຈັກເປັນບັນພະຊິດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ຈັກເປັນເທວະດາດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຈັກເປັນມະນຸດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຈັກເປັນພົມມີຮູບດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ຈັກເປັນພົມບໍ່ມີຮູບດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຈັກເປັນພົມມີສັນຍາດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຈັກເປັນພົມບໍ່ມີສັນຍາດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ຫຼືວ່າຈັກເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ແນວນີ້ຕັນຫາວ່າ ເຮົາຈັກເປັນແນວນີ້ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ກໍມີ (໖)

ຕັນຫາວ່າ ເຮົາຈັກເປັນແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ເຮົາກໍຈັກເປັນກະສັດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ຄືກັນ ເຂົາເປັນພາມ ເຮົາກໍຈັກເປັນພາມດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ຄືກັນ ຯລຯ ຫຼື ວ່າ ເຂົາເປັນພົມ ມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ເຮົາກໍຈັກເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ຄືກັນ ແນວນີ້ຕັນຫາວ່າເຮົາຈັກເປັນແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ກໍມີ (໗)

ຕັນຫາວ່າ ເຮົາຈັກເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ເປັນແນວໃດ?

ຕັນຫາເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ແຕ່ເຮົາຈັກບໍ່ເປັນກະສັດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ເໝືອນເຂົາ ເຂົາເປັນພາມ ແຕ່ເຮົາຈັກບໍ່ເປັນພາມດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ເໝືອນເຂົາ ຯລຯ ຫຼື ວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແຕ່ເຮົາຈັກບໍ່ເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ເໝືອນເຂົາ ແນວນີ້ຕັນຫາວ່າ ເຮົາຈັກເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ກໍມີ (໘)

ຕັນຫາວ່າ ເຮົາເປັນຜູ້ທ່ຽງດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແນວໃດ?

ບຸກຄົນແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ໆລໆ ເວທະນາ ໆລໆ ສັນຍາ ໆລໆ ສັງຂານ ໆລໆ ວິນຍານອອກຈາກກັນແລ້ວ ມີຕັນຫາວ່າ ເຮົາເປັນຜູ້ທ່ຽງ ເຮົາເປັນຜູ້ຍັ່ງຍືນ ເຮົາຄົງທົນຢູ່ບໍ່ມີຄວາມປັ່ນປ່ວນໄປເປັນທຳມະດາດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ແນວນີ້ຕັນຫາວ່າ ເຮົາເປັນຜູ້ທ່ຽງດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ກໍມີ (໙)

ຕັນຫາວ່າ ເຮົາເປັນຜູ້ບໍ່ທ່ຽງດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແນວໃດ?

ບຸກຄົນແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ໆລໆ ເວທະນາ ໆລໆ ສັນຍາ ໆລໆ ສັງຂານ ໆລໆ ວິນຍານອອກຈາກກັນແລ້ວ ມີຕັນຫາວ່າ ເຮົາຈັກຂາດສູນ ຈັກພິນາດ ຈັກບໍ່ມີດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ແນວນີ້ຕັນຫາວ່າ ເຮົາເປັນຜູ້ບໍ່ທ່ຽງດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ກໍມີ (໑໐)

ຕັນຫາວ່າ ເຮົາເພິ່ງເປັນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແນວໃດ?

ບຸກຄົນແຍກສະພາວະທຳແນວໃດແນວໜຶ່ງ ຄືຮູບ ໆລໆ ເວທະນາ ໆລໆ ສັນຍາ ໆລໆ ສັງຂານ ໆລໆ ວິນຍານອອກຈາກກັນແລ້ວ ໄດ້ສັນທະວ່າເຮົາເພິ່ງເປັນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ໄດ້ມານະວ່າເຮົາເພິ່ງເປັນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ໄດ້ທິດຖິວ່າເຮົາເພິ່ງເປັນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ (໑໑)

ຕັນຫາວ່າ ເຮົາເພິ່ງເປັນແນວນີ້ດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແນວໃດ?

ຕັນຫາວ່າ ເຮົາເພິ່ງເປັນກະສັດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນພາມ ດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນແພດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນສູດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນຄະລິຫັດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນບັນພະຊິດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນເທວະດາດ້ວຍ ຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນມະນຸດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນພົມມີຮູບດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນພົມບໍ່ມີຮູບດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເພິ່ງເປັນພົມມີສັນຍາດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ຫຼືວ່າເພິ່ງເປັນພົມມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ແນວນີ້ຕັນຫາວ່າ ເຮົາເພິ່ງເປັນແນວນີ້ດ້ວຍຮູນີ້ ໆລໆ ຫຼື ວິນຍານນີ້ກໍມີ (໑໘)

ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບບຸກຄົນອື່ນວ່າ ເຂົາເປັນກະສັດ ເຮົາກໍເພິ່ງເປັນກະສັດດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ຄືກັນ ເຂົາເປັນພາມ ເຮົາກໍເພິ່ງເປັນພາມດ້ວຍຮູບນີ້ ໆລໆ ຫຼື ວິນຍານນີ້ຄືກັນ ໆລໆ ຫຼືວ່າ ເຂົາເປັນພົມ ມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ເຮົາກໍເພິ່ງເປັນ

ພົນມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ຄືກັນ ແນວນີ້ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ກໍມີ (໑໑)

ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ແຕ່ເຮົາບໍ່ເພິ່ງເປັນກະສັດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ເໝືອນເຂົາ ເຂົາເປັນພາມ ແຕ່ເຮົາບໍ່ເພິ່ງເປັນພາມດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ເໝືອນເຂົາ ຯລຯ ຫຼື ວ່າ ເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແຕ່ເຮົາບໍ່ເພິ່ງເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ເໝືອນເຂົາ ແນວນີ້ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນດ້ວຍຮູບ ຯລຯ ຫຼື ວິນຍານນີ້ກໍມີ (໑໔)

ຕັນຫາວ່າ ເຮົາເພິ່ງເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເປັນແນວໃດ?

ບຸກຄົນແຍກສະພາວະທຳແນວໃດແນວໜຶ່ງ ຄື ຮູບ ຯລຯ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານອອກຈາກກັນແລ້ວ ໄດ້ສັນທະວ່າເຮົາເພິ່ງເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ໄດ້ມານະວ່າເຮົາເພິ່ງເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ໄດ້ທິດຖິວ່າເຮົາເພິ່ງເປັນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເມື່ອສະພາວະທຳທັງ ໓ ນັ້ນ ມີຢູ່ ສະພາວະທຳເຄື່ອງລ້າຊ້າເຫຼົ່ານີ້ວ່າ ເຮົາເພິ່ງເປັນແນວນີ້ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ວ່າ ເຮົາເພິ່ງເປັນແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ຫຼືວ່າ ເຮົາເພິ່ງເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ກໍມີ (໑໕)

ຕັນຫາວ່າ ເຮົາເພິ່ງເປັນແນວນີ້ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ເປັນແນວໃດ?

ຕັນຫາວ່າ ເຮົາເພິ່ງເປັນກະສັດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນພາມດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນແພດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນສູດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນຄະລຶຫັດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນບັນພະຊິດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນເທວະດາດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນມະນຸດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນພົມມີຮູບດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນພົມມີຮູບດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນພົມບໍ່ມີສັນຍາດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນພົມບໍ່ມີສັນຍາດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເພິ່ງເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ແນວນີ້ຊື່ວ່າຕັນຫາວ່າ ເພິ່ງເປັນແນວນີ້ດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ກໍມີ (໑໖)

ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ເຮົາກໍເພິ່ງເປັນກະສັດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ຄືກັນແດ່ ເຂົາເປັນພາມເຮົາກໍເພິ່ງເປັນພາມດ້ວຍຮູບນີ້ ຯລຯ ຫຼື

ວິນຍານນີ້ຄືກັນແດ່ ຯລຯ ຫຼືວ່າເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ເຮົາກໍເພິ່ງເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ຄືກັນແດ່ ແນວນີ້ຕັນຫາວ່າ ເຮົາເພິ່ງເປັນແນວນັ້ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ກໍມີ (໑໗)

ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ ເປັນແນວໃດ?

ຕັນຫາທີ່ເກີດຂຶ້ນຍ້ອນປຽບທຽບກັບຄົນອື່ນວ່າ ເຂົາເປັນກະສັດ ແຕ່ເຮົາບໍ່ເພິ່ງເປັນກະສັດດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ເໝືອນເຂົາແດ່ ເຂົາເປັນພາມ ແຕ່ເຮົາບໍ່ເພິ່ງເປັນພາມດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ເໝືອນເຂົາແດ່ ຯລຯ ຫຼືວ່າ ເຂົາເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ ແຕ່ເຮົາບໍ່ເພິ່ງເປັນພົມມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ເໝືອນເຂົາແດ່ ແນວນີ້ຕັນຫາວ່າ ເຮົາເພິ່ງເປັນໂດຍປະການອື່ນດ້ວຍຮູບນີ້ ຯລຯ ຫຼື ວິນຍານນີ້ແດ່ກໍມີ (໑໘)

ເຫຼົ່ານີ້ຊື່ວ່າ ຕັນຫາວິຈະຣິດ ໑໘ ອາໄສປັນຈະຂັນພາຍນອກ

ຕັນຫາວິຈະຣິດ ໑໘ ເຫຼົ່ານີ້ອາໄສປັນຈະຂັນພາຍໃນ ຕັນຫາວິຈະຣິດ ໑໘ ເຫຼົ່ານີ້ອາໄສປັນຈະຂັນພາຍນອກ ດ້ວຍປະການດັ່ງນີ້

ປະມວນຫຍໍ້ເຂົ້າເປັນອັນດຽວກັນ ເປັນຕັນຫາວິຈະຣິດ ໓໖

ຕັນຫາວິຈະຣິດຕາມທີ່ກ່າວມານີ້ເປັນອະດີດ ໓໖ ເປັນອະນາຄົດ ໓໖ ເປັນປັດຈຸບັນ ໓໖

ປະມວນຫຍໍ້ເຂົ້າເປັນອັນດຽວກັນ ເປັນຕັນຫາວິຈະຣິດ ໑໐໘

[໙໗໗] ບັນດາມາຕິການັ້ນ ທິດຖິ ໖໒ ທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນພົມຊາລະສູດເປັນແນວໃດ?

ທິດຖິ ໖໒ ຄື

໑. ສັດສະຕະວາທະ (ວາທະວ່າອັດຕາແລະໂລກທ່ຽງ) ໔

໒. ເອກັດຈະສັດສະຕິກະວາທະ (ວາທະວ່າອັດຕາແລະໂລກທ່ຽງບາງຢ່າງ) ໔

໓. ອັນຕານັນຕິກະວາທະ (ວາທະວ່າອັດຕາແລະໂລກບໍ່ມີບ່ອນສຸດ) ໔

໔. ອະມະຣາວິກເຂປິກະວາທະ (ວາທະທີ່ລີ້ຫຼີບລ່ຽງບໍ່ແນ່ນອນ) ໔

໕. ອະທິດຈະນະສະມຸບປັນນິກະວາທະ (ວາທະວ່າອັດຕາແລະໂລກເກີດຂຶ້ນເອງບໍ່ມີເຫດປັດໄຈ) ໒

໖. ສັນຍີວາທະ (ວາທະວ່າອັດຕາຫຼັງຈາກຕາຍແລ້ວມີສັນຍາ) ໑໖

໗. ອະສັນຍີວາທະ (ວາທະວ່າອັດຕາຫຼັງຈາກຕາຍແລ້ວບໍ່ມີສັນຍາ) ໘

໘. ເນວະສັນຍີນາສັນຍີວາທະ (ວາທະວ່າອັດຕາຫຼັງຈາກຕາຍແລ້ວມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ) ໘

໙. ອຸດເສທະວາທະ (ວາທະວ່າອັດຕາຫຼັງຈາກຕາຍແລ້ວຂາດສູນ) ໗
໑໐. ທິດຖະທຳມະນິບພານະວາທະ (ວາທະວ່າມີສະພາບບາງຢ່າງເປັນນິບພານປັດຈຸບັນ) ໕
ທິດຖິ ໖໒ ເຫຼົ່ານີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນພົມຊາລະສູດ

**ຂຸດທະກະວັດຖຸວິພັງ ຈົບບໍລິບູນ**

# ໑໘. ທຳມະຫະທະຍະວິພັງ

## ໑. ສັບພະສັງຄາຫິກະວາຣະ

### (ວາຣະວ່າດ້ວຍການລວບລວມສະພາວະທຳທັງໝົດ)

[໙໗໘] ຂັນມີເທົ່າໃດ? ອາຍະຕະນະມີເທົ່າໃດ? ທາດມີເທົ່າໃດ? ສັດຈະມີເທົ່າໃດ? ອິນຊີມີເທົ່າໃດ? ເຫດມີເທົ່າໃດ? ອາຫານມີເທົ່າໃດ? ຜັດສະມີເທົ່າໃດ? ເວທະນາມີເທົ່າໃດ? ສັນຍາມີເທົ່າໃດ? ເຈຕະນາມີເທົ່າໃດ? ຈິດມີເທົ່າໃດ?

ຂັນມີ ໕ ອາຍະຕະນະມີ ໑໒ ທາດມີ ໑໘ ສັດຈະມີ ໔ ອິນຊີມີ ໒໒ ເຫດມີ ໙ ອາຫານມີ ໔ ຜັດສະມີ ໗ ເວທະນາມີ ໗ ສັນຍາມີ ໗ ເຈຕະນາມີ ໗ ຈິດມີ ໗

[໙໗໙] ບັນດາສະພາວະທຳເຫຼົ່ານັ້ນ ຂັນ ໕ ເປັນແນວໃດ?
ຂັນມີ ໕ ຄື

໑. ຣູບຂັນ
໒. ເວທະນາຂັນ
໓. ສັນຍາຂັນທະ
໔. ສັງຂານຂັນ
໕. ວິນຍານຂັນ

ເຫຼົ່ານີ້ຮຽກວ່າ ຂັນ ໕ (໑)

[໙໘໐] ອາຍະຕະນະ ໑໒ ເປັນແນວໃດ?
ອາຍະຕະນະ ໑໒ ຄື

໑. ຈັກຂາຍະຕະນະ
໒. ຣູປາຍະຕະນະ
໓. ໂສຕາຍະຕະນະ
໔. ສັດທາຍະຕະນະ
໕. ຄານາຍະຕະນະ
໖. ຄັນທາຍະຕະນະ
໗. ຊິວຫາຍະຕະນະ
໘. ຣະສາຍະຕະນະ

໙. ກາຍາຍະຕະນະ ໑໐. ໂຜດຖັບພາຍະຕະນະ
໑໑. ມະນາຍະຕະນະ ໑໒. ທຳມາຍະຕະນະ

ເຫຼົ່ານີ້ຮຽກວ່າ ອາຍະຕະນະ ໑໒ (໒)

[໙໗໑] ທາດ ໑໘ ເປັນແນວໃດ?
ທາດ ໑໘ ຄື

໑. ຈັກຂຸທາດ ໒. ຮູບທາດ ໓. ຈັກຂຸວິນຍານທາດ
໔. ໂສຕະທາດ ໕. ສັດທະທາດ ໖. ໂສຕະວິນຍານທາດ
໗. ຄານະທາດ ໘. ຄັນທະທາດ ໙. ຄານະວິນຍານທາດ
໑໐. ຊິວຫາທາດ ໑໑. ຣະສະທາດ ໑໒. ຊິວຫາວິນຍານທາດ
໑໓. ກາຍທາດ ໑໔. ໂຜດຖັບພະທາດ ໑໕. ກາຍະວິນຍານທາດ
໑໖. ມະໂນທາດ ໑໗. ທຳມະທາດ ໑໘. ມະໂນວິນຍານທາດ

ເຫຼົ່ານີ້ຮຽກວ່າ ທາດ ໑໘ (໓)

[໙໗໒] ສັດຈະ ໔ ເປັນແນວໃດ?
ສັດຈະ ໔ ຄື

໑. ທຸກຂະສັດ ໒. ສະມຸທະຍະສັດ
໓. ມັກຄະສັດ ໔. ນິໂຣທະສັດ

ເຫຼົ່ານີ້ຮຽກວ່າ ສັດຈະ ໔ (໔)

[໙໗໓] ອິນຊີ ໒໒ ເປັນແນວໃດ?
ອິນຊີ ໒໒ ຄື

໑. ຈັກຂຸນຊີ ໒. ໂສຕິນຊີ
໓. ຄານິນຊີ ໔. ຊິວຫິນຊີ
໕. ກາຍິນຊີ ໖. ມະນິນຊີ
໗. ອິດຖິນຊີ ໘. ປຸຣິສິນຊີ
໙. ຊີວິຕິນຊີ ໑໐. ສຸຂິນຊີ
໑໑. ທຸກຂິນຊີ ໑໒. ໂສມະນັດສິນຊີ
໑໓. ໂທມະນັດສິນຊີ ໑໔. ອຸເປກຂິນຊີ

| | |
|---|---|
| ໑໕. ສັດທິນຊີ | ໑໖. ວິຣິຍິນຊີ |
| ໑໗. ສະຕິນຊີ | ໑໘. ສະມາທິນຊີ |
| ໑໙. ປັນຍິນຊີ | ໒໐. ອະນັນຍາຕັນຍັດສາມີຕິນຊີ |
| ໒໑. ອັນຍິນຊີ | ໒໒. ອັນຍາຕາວິນຊີ |

ເຫຼົ່ານີ້ຮຽກວ່າ ອິນຊີ ໒໒ (໕)

[໙໘໔] ເຫດ ໙ ເປັນແນວໃດ?

ເຫດ ໙ ຄື

ກຸສົນເຫດ ໓ ອະກຸສົນເຫດ ໓ ແລະອັບພະຍາກະຕະເຫດ ໓

ບັນດາເຫດ ໙ ເຫຼົ່ານັ້ນ ກຸສົນເຫດ ໓ ເປັນແນວໃດ?

ກຸສົນເຫດ ໓ ຄື ກຸສົນເຫດ ຄື ອະໂລພະ ກຸສົນເຫດ ຄື ອະໂທສະ ແລະ ກຸສົນເຫດ ຄື ອະໂມຫະ ເຫຼົ່ານີ້ຊື່ວ່າ ກຸສົນເຫດ ໓

ອະກຸສົນເຫດ ໓ ເປັນແນວໃດ?

ອະກຸສົນເຫດ ໓ ຄື ອະກຸສົນເຫດ ຄື ໂລພະ ອະກຸສົນເຫດ ຄື ໂທສະ ແລະອະກຸສົນເຫດ ຄື ໂມຫະ ເຫຼົ່ານີ້ຊື່ວ່າ ອະກຸສົນເຫດ ໓

ອັບພະຍາກະຕະເຫດ ໓ ເປັນແນວໃດ?

ອັບພະຍາກະຕະເຫດ ໓ ຄື ອະໂລພະ ອະໂທສະ ແລະ ອະໂມຫະ ຝ່າຍວິບາກແຫ່ງສະພາວະທຳທີ່ເປັນກຸສົນ ຫຼື ໃນສະພາວະທຳທີ່ເປັນອັບພະຍາກະຕະກິຣິຍາ ເຫຼົ່ານີ້ຊື່ວ່າ ອັບພະຍາກະຕະເຫດ ໓

ເຫຼົ່ານີ້ຮຽກວ່າ ເຫດ ໙ (໖)

[໙໘໕] ອາຫານ ໔ ເປັນແນວໃດ?

ອາຫານ ໔ ຄື

| | |
|---|---|
| ໑. ກະວະລິງກາຣາຫານ | (ອາຫານຄືຄຳເຂົ້າ) |
| ໒. ຜັດສາຫານ | (ອາຫານຄືຜັດສະ) |
| ໓. ມະໂນສັນເຈຕະນາຫານ | (ອາຫານຄືມະໂນສັນເຈຕະນາ) |
| ໔. ວິນຍານາຫານ | (ອາຫານຄືວິນຍານ) |

ເຫຼົ່ານີ້ຮຽກວ່າ ອາຫານ ໔ (໗)

[໙໗໖] ຜັດສະ ໗ ເປັນແນວໃດ?
ຜັດສະ ໗ ຄື

໑. ຈັກຂຸສຳຜັດ ໒. ໂສຕະສຳຜັດ
໓. ຄານະສຳຜັດ ໔. ຊິວຫາສຳຜັດ
໕. ກາຍສຳຜັດ ໖. ມະໂນທາດສຳຜັດ
໗. ມະໂນວິນຍານທາດສຳຜັດ

ເຫຼົ່ານີ້ຮຽກວ່າ ຜັດສະ ໗ (໘)

[໙໗໗] ເວທະນາ ໗ ເປັນແນວໃດ?
ເວທະນາ ໗ ຄື

໑. ເວທະນາທີ່ເກີດຈາກຈັກຂຸສຳຜັດ ໒. ເວທະນາທີ່ເກີດຈາກໂສຕະສຳຜັດ
໓. ເວທະນາທີ່ເກີດຈາກຄານະສຳຜັດ ໔. ເວທະນາທີ່ເກີດຈາກຊິວຫາສຳຜັດ
໕. ເວທະນາທີ່ເກີດຈາກກາຍສຳຜັດ ໖. ເວທະນາທີ່ເກີດຈາກມະໂນທາດສຳຜັດ
໗. ເວທະນາທີ່ເກີດຈາກມະໂນວິນຍານທາດສຳຜັດ

ເຫຼົ່ານີ້ຮຽກວ່າ ເວທະນາ ໗ (໙)

[໙໗໘] ສັນຍາ ໗ ເປັນແນວໃດ?
ສັນຍາ ໗ ຄື

໑. ສັນຍາທີ່ເກີດຈາກຈັກຂຸສຳຜັດ ໒. ສັນຍາທີ່ເກີດຈາກໂສຕະສຳຜັດ
໓. ສັນຍາທີ່ເກີດຈາກຄານະສຳຜັດ ໔. ສັນຍາທີ່ເກີດຈາກຊິວຫາສຳຜັດ
໕. ສັນຍາທີ່ເກີດຈາກກາຍສຳຜັດ ໖. ສັນຍາທີ່ເກີດຈາກມະໂນທາດສຳຜັດ
໗. ສັນຍາທີ່ເກີດຈາກມະໂນວິນຍານທາດສຳຜັດ

ເຫຼົ່ານີ້ຮຽກວ່າ ສັນຍາ ໗ (໑໐)

[໙໗໙] ເຈຕະນາ ໗ ເປັນແນວໃດ?
ເຈຕະນາ ໗ ຄື

໑. ເຈຕະນາທີ່ເກີດຈາກຈັກຂຸສຳຜັດ ໒. ເຈຕະນາທີ່ເກີດຈາກໂສຕະສຳຜັດ
໓. ເຈຕະນາທີ່ເກີດຈາກຄານະສຳຜັດ ໔. ເຈຕະນາທີ່ເກີດຈາກຊິວຫາສຳຜັດ
໕. ເຈຕະນາທີ່ເກີດຈາກກາຍສຳຜັດ ໖. ເຈຕະນາທີ່ເກີດຈາກມະໂນທາດສຳຜັດ

໗. ເຈຕະນາທີ່ເກີດຈາກມະໂນວິນຍານທາດສຳຜັດ

ເຫຼົ່ານີ້ຮຽກວ່າ ເຈຕະນາ ໗ (໑໑)

[໙໙໐] ຈິດ ໗ ເປັນແນວໃດ?
ຈິດ ໗ ຄື

໑. ຈັກຂຸວິນຍານ
໒. ໂສຕະວິນຍານ
໓. ຄານະວິນຍານ
໔. ຊິວຫາວິນຍານ
໕. ກາຍະວິນຍານ
໖. ມະໂນທາດ
໗. ມະໂນວິນຍານທາດ

ເຫຼົ່ານີ້ຮຽກວ່າ ຈິດ ໗ (໑໒)

# ໒. ອຸປະປັດຕານຸບປັດຕິວາຣະ

## (ວາຣະວ່າດ້ວຍການສະແດງສະພາວະທຳທີ່ເກີດໄດ້ແລະບໍ່ໄດ້)

## ໑. ກາມທາດ

## (ທາດໃນກາມະພູມ)

[໙໙໑] ໃນກາມທາດ ຂັນມີເທົ່າໃດ? ອາຍະຕະນະມີເທົ່າໃດ? ທາດມີເທົ່າໃດ? ສັດຈະມີເທົ່າໃດ? ອິນຊີມີເທົ່າໃດ? ເຫດມີເທົ່າໃດ? ອາຫານມີເທົ່າໃດ? ຜັດສະມີເທົ່າໃດ? ເວທະນາ ມີເທົ່າໃດ? ສັນຍາມີເທົ່າໃດ? ເຈຕະນາມີເທົ່າໃດ? ຈິດມີເທົ່າໃດ?

ໃນກາມທາດ ຂັນມີ ໕ ອາຍະຕະນະມີ ໑໒ ທາດມີ ໑໘ ສັດຈະມີ ໓ ອິນຊີມີ ໒໒ ເຫດມີ ໙ ອາຫານມີ ໔ ຜັດສະມີ ໗ ເວທະນາມີ ໗ ສັນຍາມີ ໗ ເຈຕະນາມີ ໗ ຈິດມີ ໗

[໙໙໒] ບັນດາສະພາວະທຳເຫຼົ່ານັ້ນ ຂັນ ໕ ໃນກາມທາດ ເປັນແນວໃດ?
ຂັນ ໕ ໃນກາມທາດ ຄື

໑. ຮູບຂັນ
໒. ເວທະນາຂັນ
໓. ສັນຍາຂັນ
໔. ສັງຂານຂັນ
໕. ວິນຍານຂັນ

ເຫຼົ່ານີ້ຮຽກວ່າ ຂັນ ໕ ໃນການທາດ (໑)
ອາຍະຕະນະ ໑໒ ໃນການທາດ ເປັນແນວໃດ?
ອາຍະຕະນະ ໑໒ ໃນການທາດ ຄື

໑. ຈັກຂາຍະຕະນະ ໒. ຣູປາຍະຕະນະ
ຯລຯ
໑໑. ມະນາຍະຕະນະ ໑໒. ທຳມາຍະຕະນະ

ເຫຼົ່ານີ້ຮຽກວ່າ ອາຍະຕະນະ ໑໒ ໃນການທາດ (໒)
ທາດ ໑໘ ໃນການທາດ ເປັນແນວໃດ?
ທາດ ໑໘ ໃນການທາດ ຄື

໑. ຈັກຂຸທາດ ໒. ຣູບທາດ ໓. ຈັກຂຸວິນຍານທາດ
ຯລຯ
໑໖. ມະໂນທາດ ໑໗. ທຳມະທາດ ໑໘. ມະໂນວິນຍານທາດ

ເຫຼົ່ານີ້ຮຽກວ່າ ທາດ ໑໘ ໃນການທາດ (໓)
ສັດຈະ ໓ ໃນການທາດ ເປັນແນວໃດ?
ສັດຈະ ໓ ໃນການທາດ ຄື

໑. ທຸກຂະສັດ
໒. ສະມຸທະຍະສັດ
໓. ມັກຄະສັດ

ເຫຼົ່ານີ້ຮຽກວ່າ ສັດຈະ ໓ ໃນການທາດ (໔)
ອິນຊີ ໒໒ ໃນການທາດ ເປັນແນວໃດ?
ອິນຊີ ໒໒ ໃນການທາດ ຄື

໑. ຈັກຂຸນຊີ ໒. ໂສຕິນຊີ
ຯລຯ
໒໒. ອັນຍາຕາວິນຊີ

ເຫຼົ່ານີ້ຮຽກວ່າ ອິນຊີ ໒໒ ໃນການທາດ (໕)
ເຫດ ໙ ໃນການທາດ ເປັນແນວໃດ?

ເຫດ ໗ ໃນການທາດ ຄື ກຸສົນເຫດ ໓ ອະກຸສົນເຫດ ໓ ແລະອັບພະຍາກະຕະເຫດ ໓

ຯລຯ

ເຫຼົ່ານີ້ຮຽກວ່າ ເຫດ ໗ ໃນການທາດ (໖)

ອາຫານ ໔ ໃນການທາດ ເປັນແນວໃດ?

ອາຫານ ໔ ໃນການທາດ ຄື

໑. ກະວະລິງກາຣາຫານ (ອາຫານຄືຄຳເຂົ້າ)

໒. ຜັດສາຫານ (ອາຫານຄືຜັດສະ)

໓. ມະໂນສັນເຈຕະນາຫານ (ອາຫານຄືມະໂນສັນເຈຕະນາ)

໔. ວິນຍານາຫານ (ອາຫານຄືວິນຍານ)

ເຫຼົ່ານີ້ຮຽກວ່າ ອາຫານ ໔ ໃນການທາດ (໗)

ຜັດສະ ໗ ໃນການທາດ ເປັນແນວໃດ?

ຜັດສະ ໗ ໃນການທາດ ຄື

໑. ຈັກຂຸສຳຜັດ

ຯລຯ

໗. ມະໂນວິນຍານທາດສຳຜັດ

ເຫຼົ່ານີ້ຮຽກວ່າ ຜັດສະ ໗ ໃນການທາດ (໘)

ເວທະນາ ໗ ໃນການທາດ ເປັນແນວໃດ?

ເວທະນາ ໗ ໃນການທາດ ຄື

໑. ເວທະນາທີ່ເກີດຈາກຈັກຂຸສຳຜັດ

ຯລຯ

໗. ເຈຕະນາທີ່ເກີດຈາກມະໂນວິນຍານທາດສຳຜັດ

ເຫຼົ່ານີ້ຮຽກວ່າ ເວທະນາ ໗ ໃນການທາດ (໙)

ສັນຍາ ໗ ໃນການທາດ ເປັນແນວໃດ?

ສັນຍາ ໗ ໃນການທາດ ຄື

໑. ສັນຍາທີ່ເກີດຈາກຈັກຂຸສຳຜັດ

ຯລຯ

໗. ສັນຍາທີ່ເກີດຈາກມະໂນວິນຍານທາດສຳຜັດ

ເຫຼົ່ານີ້ຮຽກວ່າ ສັນຍາ ໗ ໃນການທາດ (໑໐)
ເຈຕະນາ ໗ ໃນການທາດ ເປັນແນວໃດ?
ເຈຕະນາ ໗ ໃນການທາດ ຄື

໑. ເຈຕະນາທີ່ເກີດຈາກຈັກຂຸສຳຜັດ
ຯລຯ
໗. ເຈຕະນາທີ່ເກີດຈາກມະໂນວິນຍານທາດສຳຜັດ

ເຫຼົ່ານີ້ຮຽກວ່າ ເຈຕະນາ ໗ ໃນການທາດ (໑໑)
ຈິດ ໗ ໃນການທາດ ເປັນແນວໃດ?
ຈິດ ໗ ໃນການທາດ ຄື

໑. ຈັກຂຸວິນຍານ ໒. ໂສຕະວິນຍານ
໓. ຄານະວິນຍານ ໔. ຊິວຫາວິນຍານ
໕. ກາຍະວິນຍານ ໖. ມະໂນທາດ
໗. ມະໂນວິນຍານທາດ

ເຫຼົ່ານີ້ຮຽກວ່າ ຈິດ ໗ ໃນການທາດ (໑໒)

# ໒. ຮູບທາດ

## (ທາດໃນຮູບພູມ)

[໙໙໓] ໃນຮູບທາດ ຂັນມີເທົ່າໃດ? ຯລຯ ຈິດມີເທົ່າໃດ?

ໃນຮູບທາດ ຂັນມີ ໕ ອາຍະຕະນະມີ ໖ ທາດມີ ໙ ສັດຈະມີ ໓ ອິນຊີມີ ໑໔ ເຫດ ມີ ໘ ອາຫານມີ ໓ ຜັດສະມີ ໔ ເວທະນາມີ ໔ ສັນຍາມີ ໔ ເຈຕະນາມີ ໔ ຈິດມີ ໔

[໙໙໔] ບັນດາສະພາວະທຳເຫຼົ່ານັ້ນ ຂັນ ໕ ໃນຮູບທາດ ເປັນແນວໃດ?
ຂັນ ໕ ໃນຮູບທາດ ຄື

໑. ຮູບຂັນ
ຯລຯ
໕. ວິນຍານຂັນ

ເຫຼົ່ານີ້ຮຽກວ່າ ຂັນ ໕ ໃນຮູບທາດ (໑)

ອາຍະຕະນະ ໖ ໃນຮູບທາດ ເປັນແນວໃດ?
ອາຍະຕະນະ ໖ ໃນຮູບທາດ ຄື

໑. ຈັກຂາຍະຕະນະ
໒. ຮູປາຍະຕະນະ
໓. ໂສຕາຍະຕະນະ
໔. ສັດທາຍະຕະນະ
໕. ມະນາຍະຕະນະ
໖. ທຳມາຍະຕະນະ

ເຫຼົ່ານີ້ຮຽກວ່າ ອາຍະຕະນະ ໖ ໃນຮູບທາດ (໒)
ທາດ ໙ ໃນຮູບທາດ ເປັນແນວໃດ?
ທາດ ໙ ໃນຮູບທາດ ຄື

໑. ຈັກຂຸທາດ
໒. ຮູບທາດ
໓. ຈັກຂຸວິນຍານທາດ
໔. ໂສຕະທາດ
໕. ສັດທະທາດ
໖. ໂສຕະວິນຍານທາດ
໗. ມະໂນທາດ
໘. ທຳມະທາດ
໙. ມະໂນວິນຍານທາດ

ເຫຼົ່ານີ້ຮຽກວ່າ ທາດ ໙ ໃນຮູບທາດ (໓)
ສັດຈະ ໓ ໃນຮູບທາດ ເປັນແນວໃດ?
ສັດຈະ ໓ ໃນຮູບທາດ ຄື

໑. ທຸກຂະສັດ
໒. ສະມຸທະຍະສັດ
໓. ມັກຄະສັດ

ເຫຼົ່ານີ້ຮຽກວ່າ ສັດຈະ ໓ ໃນຮູບທາດ (໔)
ອິນຊີ ໑໔ ໃນຮູບທາດ ເປັນແນວໃດ?
ອິນຊີ ໑໔ ໃນຮູບທາດ ຄື

໑. ຈັກຂຸນຊີ
໒. ໂສຕິນຊີ
໓. ມະນິນຊີ
໔. ຊີວິຕິນຊີ
໕. ໂສມະນັດສິນຊີ
໖. ອຸເປກຂິນຊີ
໗. ສັດທິນຊີ
໘. ວິຣິຍິນຊີ
໙. ສະຕິນຊີ
໑໐. ສະມາທິນຊີ
໑໑. ປັນຍິນຊີ
໑໒. ອະນັນຍາຕັນຍັດສາມີຕິນຊີ
໑໓. ອັນຍິນຊີ
໑໔. ອັນຍາຕາວິນຊີ

ເຫຼົ່ານີ້ຮຽກວ່າ ອິນຊີ ໑໔ ໃນຮູບທາດ (໕)

ເຫດ ๙ ໃນຮູບທາດ ເປັນແນວໃດ?

ເຫດ ๙ ໃນຮູບທາດ ຄື ກຸສົນເຫດ ໓ ອະກຸສົນເຫດ ໒ ແລະອັບພະຍາກະຕະເຫດ ໓ ບັນດາເຫດ ๙ ນັ້ນ ກຸສົນເຫດ ໓ ໃນຮູບທາດ ເປັນແນວໃດ?

ກຸສົນເຫດ ໓ ໃນຮູບທາດ ຄື ກຸສົນເຫດ ຄື ອະໂລພະ ກຸສົນເຫດ ຄື ອະໂທສະ ແລະ ກຸສົນເຫດ ຄື ອະໂມຫະ

ເຫຼົ່ານີ້ຊື່ວ່າກຸສົນເຫດ ໓

ອະກຸສົນເຫດ ໒ ເປັນແນວໃດ?

ອະກຸສົນເຫດ ໒ ຄື ອະກຸສົນເຫດ ຄື ໂລພະ ແລະ ອະກຸສົນເຫດ ຄື ໂມຫະ

ເຫຼົ່ານີ້ຊື່ວ່າອະກຸສົນເຫດ ໒

ອັບພະຍາກະຕະເຫດ ໓ ເປັນແນວໃດ?

ອັບພະຍາກະຕະເຫດ ໓ ຄື ອະໂລພະ ອະໂທສະ ແລະອະໂມຫະ ຝ່າຍວິບາກແຫ່ງສະພາວະທຳ ທີ່ເປັນກຸສົນ ຫຼື ໃນສະພາວະທຳທີ່ເປັນອັບພະຍາກະຕະກິຣິຍາ ເຫຼົ່ານີ້ຊື່ວ່າອັບພະຍາກະຕະເຫດ ໓

ເຫຼົ່ານີ້ຮຽກວ່າ ເຫດ ๙ ໃນຮູບທາດ (ຝ)

ອາຫານ ໓ ໃນຮູບທາດ ເປັນແນວໃດ?

ອາຫານ ໓ ໃນຮູບທາດ ຄື

໑. ຜັດສາຫານ
໒. ມະໂນສັນເຈຕະນາຫານ
໓. ວິນຍານາຫານ

ເຫຼົ່ານີ້ຮຽກວ່າ ອາຫານ ໓ ໃນຮູບທາດ (ກ)

ຜັດສະ ໔ ໃນຮູບທາດ ເປັນແນວໃດ?

ຜັດສະ ໔ ໃນຮູບທາດ ຄື

໑. ຈັກຂຸສຳຜັດ
໒. ໂສຕະສຳຜັດ
໓. ມະໂນທາດສຳຜັດ
໔. ມະໂນວິນຍານທາດສຳຜັດ

ເຫຼົ່ານີ້ຮຽກວ່າ ຜັດສະ ໔ ໃນຮູບທາດ (ຕ)

ເວທະນາ ໔ ຯລຯ ສັນຍາ ໔ ຯລຯ ເຈຕະນາ ໔ ຯລຯ ຈິດ ໔ ໃນຮູບທາດ ເປັນແນວໃດ

ຈິດ ໔ ໃນຮູບທາດ ຄື

໑. ຈັກຂຸວິນຍານ

໒. ໂສຕະວິນຍານ

໓. ມະໂນທາດ

໔. ມະໂນວິນຍານທາດ

ເຫຼົ່ານີ້ຮຽກວ່າ ຈິດ ໔ ໃນຮູບທາດ (໙-໑໘)

## ໓. ອະຮູບທາດ

## (ທາດໃນອະຮູບພູມ)

[໙໙໕] ໃນອະຮູບທາດ ຂັນມີເທົ່າໃດ? ຯລຯ ຈິດມີເທົ່າໃດ?

ໃນອະຮູບທາດ ຂັນມີ ໔ ອາຍະຕະນະມີ ໒ ທາດມີ ໒ ສັດຈະມີ ໓ ອິນຊີມີ ໑໑ ເຫດມີ ໗ ອາຫານມີ ໓ ຜັດສະມີ ໑ ເວທະນາມີ ໑ ສັນຍາມີ ໑ ເຈຕະນາມີ ໑ ຈິດ ມີ ໑

[໙໙໖] ບັນດາສະພາວະທຳເຫຼົ່ານັ້ນ ຂັນ ໔ ໃນອະຮູບທາດ ເປັນແນວໃດ?

ຂັນ ໔ ໃນອະຮູບທາດ ຄື

໑. ເວທະນາຂັນ

໒. ສັນຍາຂັນ

໓. ສັງຂານຂັນ

໔. ວິນຍານຂັນ

ເຫຼົ່ານີ້ຮຽກວ່າ ຂັນ ໔ ໃນອະຮູບທາດ (໑)

ອາຍະຕະນະ ໒ ໃນອະຮູບທາດ ເປັນແນວໃດ?

ອາຍະຕະນະ ໒ ໃນອະຮູບທາດ ຄື ມະນາຍະຕະນະ ແລະທຳມາຍະຕະນະ

ເຫຼົ່ານີ້ຮຽກວ່າ ອາຍະຕະນະ ໒ ໃນອະຮູບທາດ (໒)

ທາດ ໒ ໃນອະຮູບທາດ ເປັນແນວໃດ?

ທາດ ໒ ໃນອະຮູບທາດ ຄື ມະໂນວິນຍານທາດ ແລະທຳມະທາດ

ເຫຼົ່ານີ້ຮຽກວ່າ ທາດ ໒ ໃນອະຮູບທາດ (໓)

ສັດຈະ ໓ ໃນອະຮູບທາດ ເປັນແນວໃດ?

ສັດຈະ ໓ ໃນອະຮູບທາດ ຄື

໑. ທຸກຂະສັດ

໒. ສະມຸທະຍະສັດ

໓. ມັກຄະສັດ

ເຫຼົ່ານີ້ຮຽກວ່າ ສັດຈະ ໓ ໃນອະຮູບທາດ (໔)

ອິນຊີ ໑໑ ໃນອະຣູບທາດ ເປັນແນວໃດ?
ອິນຊີ ໑໑ ໃນອະຣູບທາດ ຄື

໑. ມະນິນຊີ
໒. ໂສມະນັດສິນຊີ
໓. ສັດທິນຊີ
໔. ສະຕິນຊີ
໕. ປັນຍິນຊີ
໖. ຊີວິຕິນຊີ
໗. ອຸເປກຂິນຊີ
໘. ວິຣິຍິນຊີ
໙. ສະມາທິນຊີ
໑໐. ອັນຍິນຊີ
໑໑. ອັນຍາຕາວິນຊີ

ເຫຼົ່ານີ້ຮຽກວ່າ ອິນຊີ ໑໑ ໃນອະຣູບທາດ (໕)

ເຫດ ໙ ໃນອະຣູບທາດ ເປັນແນວໃດ?
ເຫດ ໙ ໃນອະຣູບທາດ ຄື ກຸສົນເຫດ ໓ ອະກຸສົນເຫດ ໒ ອັບພະຍາກະຕະເຫດ ໓ ຯລຯ
ເຫຼົ່ານີ້ຮຽກວ່າ ເຫດ ໙ ໃນອະຣູບທາດ (໖)

ອາຫານ ໓ ໃນອະຣູບທາດ ເປັນແນວໃດ?
ອາຫານ ໓ ໃນອະຣູບທາດ ຄື

໑. ຜັດສາຫານ
໒. ມະໂນສັນເຈຕະນາຫານ
໓. ວິນຍານາຫານ

ເຫຼົ່ານີ້ຮຽກວ່າ ອາຫານ ໓ ໃນອະຣູບທາດ (໗)

ຜັດສະ ໑ ໃນອະຣູບທາດ ເປັນແນວໃດ?
ຜັດສະ ໑ ໃນອະຣູບທາດ ຄື ມະໂນວິນຍານທາດສຳຜັດ
ນີ້ຮຽກວ່າ ຜັດສະ ໑ ໃນອະຣູບທາດ (໙)

ເວທະນາ ໑ ຯລຯ ສັນຍາ ໑ ຯລຯ ເຈຕະນາ ໑ ຯລຯ ຈິດ ໑ ໃນອະຣູບທາດ ເປັນເຫດໃດ?
ຈິດ ໑ ໃນອະຣູບທາດ ຄື ມະໂນວິນຍານທາດ
ນີ້ຮຽກວ່າ ຈິດ ໑ ໃນອະຣູບທາດ (໕-໑໒)

# ໔. ອະປະຣິຍາປັນນະ

## (ທຳທີ່ບໍ່ນັບເນື່ອງໃນວັດຕະທຸກ)

[໙໗] ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ຂັນມີເທົ່າໃດ? ຯລຯ ຈິດມີເທົ່າໃດ?

ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ຂັນມີ ໔ ອາຍະຕະນະມີ ໒ ທາດມີ ໒ ສັດຈະມີ ໒ ອິນຊີມີ ໑໒ ເຫດມີ ໖ ອາຫານມີ ໓ ຜັດສະມີ ໑ ເວທະນາມີ ໑ ສັນຍາມີ ໑ ເຈຕະນາມີ ໑ ຈິດມີ ໑

[໙໘] ບັນດາສະພາວະທຳເຫຼົ່ານັ້ນ ຂັນ ໔ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ເປັນແນວໃດ?

ຂັນ ໔ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ຄື

໑. ເວທະນາຂັນ ໒. ສັນຍາຂັນ
໓. ສັງຂານຂັນ ໔. ວິນຍານຂັນ

ເຫຼົ່ານີ້ຮຽກວ່າ ຂັນ ໔ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ (໑)

ອາຍະຕະນະ ໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ເປັນແນວໃດ?

ອາຍະຕະນະ ໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ຄື ມະນາຍະຕະນະ ແລະທຳມາຍະຕະນະເຫຼົ່ານີ້ຮຽກວ່າ ອາຍະຕະນະ ໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ (໒)

ທາດ ໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ເປັນແນວໃດ?

ທາດ ໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ຄື ມະໂນວິນຍານທາດ ແລະທຳມະທາດເຫຼົ່ານີ້ຮຽກວ່າ ທາດ ໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ (໓)

ສັດຈະ ໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ເປັນແນວໃດ?

ສັດຈະ ໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ຄື ມັກຄະສັດ ແລະນິໂຣທະສັດ

ເຫຼົ່ານີ້ຮຽກວ່າ ສັດຈະ ໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ (໔)

ອິນຊີ ໑໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ເປັນແນວໃດ?

ອິນຊີ ໑໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ຄື

໑. ມະນິນຊີ ໒. ຊີວິທິນຊີ
໓. ໂສມະນັດສິນຊີ ໔. ອຸເປກຂິນຊີ
໕. ສັດທິນຊີ ໖. ວິຣິຍິນຊີ

໗. ສະຕິນຊີ
໘. ປັນຍິນຊີ
໑໑. ອັນຍິນຊີ

໙. ສະມາທິນຊີ
໑໐. ອະນັນຍາຕັນຍັດສາມີຕິນຊີ
໑໒. ອັນຍາຕາວິນຊີ

ເຫຼົ່ານີ້ຮຽກວ່າ ອິນຊີ ໑໒ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ (໕)

ເຫດ ໖ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ ເປັນແນວໃດ?

ເຫດ ໖ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ ຄື ກຸສົນເຫດ ໓ ແລະອັບພະຍາກະຕະເຫດ ໓ ບັນດາເຫດ ໖ ເຫຼົ່ານັ້ນ ກຸສົນເຫດ ໓ ເປັນແນວໃດ?

ກຸສົນເຫດ ໓ ຄື

໑. ກຸສົນເຫດ ຄື ອະໂລພະ
໒. ກຸສົນເຫດ ຄື ອະໂທສະ
໓. ກຸສົນເຫດ ຄື ອະໂມຫະ

ເຫຼົ່ານີ້ຊື່ວ່າກຸສົນເຫດ ໓

ອັບພະຍາກະຕະເຫດ ໓ ເປັນແນວໃດ?

ອັບພະຍາກະຕະເຫດ ໓ ຄື ອະໂລພະ ອະໂທສະ ແລະ ອະໂມຫະ ຝ່າຍວິບາກແຫ່ງສະພາວະທຳ ທີ່ເປັນກຸສົນ ເຫຼົ່ານີ້ຊື່ວ່າອັບພະຍາກະຕະເຫດ ໓

ເຫຼົ່ານີ້ຮຽກວ່າ ເຫດ ໖ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ (໖)

ອາຫານ ໓ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ ເປັນແນວໃດ?

ອາຫານ ໓ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ ຄື

໑. ຜັດສາຫານ
໒. ມະໂນສັນເຈຕະນາຫານ
໓. ວິນຍານາຫານ

ເຫຼົ່ານີ້ຮຽກວ່າ ອາຫານ ໓ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ (໗)

ຜັດສະ ໑ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ ເປັນແນວໃດ?

ຜັດສະ ໑ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ ຄື ມະໂນວິນຍານທາດສຳຜັດ

ນີ້ຮຽກວ່າ ຜັດສະ ໑ ໃນທຳທີ່ບໍ່ນັບເນື່ອງໃນວັດຕະທຸກາ (໘)

ເວທະນາ ໑ ຯລຯ ສັນຍາ ໑ ຯລຯ ເຈຕະນາ ໑ ຯລຯ ຈິດ ໑ ໃນທຳທີ່ບໍ່ນັບເນື່ອງໃນອັດຕະທຸກ ເປັນແນວໃດ?

ຈິດ ໑ ໃນທຳທີ່ບໍ່ນັບເນື່ອງໃນອັດຕະທຸກ ຄື ມະໂນວິນຍານທາດ

ນີ້ຮຽກວ່າ ຈິດ ໑ ໃນທຳທີ່ບໍ່ນັບເນື່ອງໃນອັດຕະທຸກ (໙-໑໘)

# ໓. ປະຣິຍາປັນນາປະຣິຍາປັນນະວາຣະ

## (ວາຣະວ່າດ້ວຍທຳທີ່ນັບເນື່ອງແລະບໍ່ນັບເນື່ອງໃນອັດຕະທຸກ)

## ໑. ກາມທາດ

### (ທາດໃນກາມະພູມ)

[໙໙໙] ບັນດາຂັນ ໕ ຂັນເທົ່າໃດ?ເປັນໂລກິຍະ ເທົ່າໃດເປັນໂລກຸດຕະຣະ ຯລຯ ບັນດາຈິດ ໆ ຈິດເທົ່າໃດ?ນັບເນື່ອງໃນກາມທາດ ເທົ່າໃດບໍ່ນັບເນື່ອງໃນກາມທາດ

[໑໐໐໐] ຮູບຂັນເປັນໂລກິຍະ ຂັນ ໔ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ ອາຍະຕະນະ ໑໐ ນັບເນື່ອງໃນກາມທາດ ອາຍະຕະນະ ໒ ທີ່ນັບເນື່ອງໃນກາມທາດກໍມີ ທີ່ບໍ່ນັບເນື່ອງໃນກາມທາດກໍມີ

ທາດ ໑໖ ນັບເນື່ອງໃນກາມທາດ ທາດ ໒ ທີ່ນັບເນື່ອງໃນກາມທາດກໍມີ ທີ່ບໍ່ນັບເນື່ອງໃນກາມທາດກໍມີ

ສະມຸທະຍະສັດນັບເນື່ອງໃນກາມທາດ ສັດຈະ ໒ ບໍ່ນັບເນື່ອງໃນກາມທາດ ທຸກຂະສັດທີ່ນັບເນື່ອງໃນກາມທາດກໍມີ ທີ່ບໍ່ນັບເນື່ອງໃນກາມທາດກໍມີ

ອິນຊີ ໑໐ ນັບເນື່ອງໃນກາມທາດ ອິນຊີ ໓ ບໍ່ນັບເນື່ອງໃນກາມທາດ ອິນຊີ ໙ ທີ່ນັບເນື່ອງໃນກາມທາດກໍມີ ທີ່ບໍ່ນັບເນື່ອງໃນກາມທາດກໍມີ

ອະກຸສົນເຫດ ໓ ນັບເນື່ອງໃນກາມທາດ ເຫດ ໖ ທີ່ນັບເນື່ອງໃນກາມທາດກໍມີ ທີ່ບໍ່ນັບເນື່ອງໃນກາມທາດກໍມີ

ກະວະລິງກາຣາຫານນັບເນື່ອງໃນກາມທາດ ອາຫານ ໓ ທີ່ນັບເນື່ອງໃນກາມທາດກໍມີ ທີ່ບໍ່ນັບເນື່ອງໃນກາມທາດກໍມີ

ຜັດສະ ໖ ນັບເນື່ອງໃນກາມທາດ ມະໂນວິນຍານທາດສຳຜັດ ທີ່ນັບເນື່ອງໃນກາມທາດກໍມີ ທີ່ບໍ່ນັບເນື່ອງໃນກາມທາດກໍມີ

ເວທະນາ ໖ ຯລຯ ສັນຍາ ໖ ຯລຯ ເຈຕະນາ ໖ ຯລຯ ຈິດ ໖ ນັບເນື່ອງໃນກາມທາດ ມະໂນວິນຍານທາດ ທີ່ນັບເນື່ອງໃນກາມທາດກໍມີ ທີ່ບໍ່ນັບເນື່ອງໃນກາມທາດກໍມີ

# ໔. ຮູບທາດ

## (ທາດໃນຮູບພູມ)

[໑໐໐໑] ບັນດາຂັນ ໕ ຂັນເທົ່າໃດ?ນັບເນື່ອງໃນຮູບທາດ ເທົ່າໃດບໍ່ນັບເນື່ອງໃນຮູບທາດ ຯລຯ ບັນດາຈິດ ໆ ຈິດເທົ່າໃດ?ນັບເນື່ອງໃນຮູບທາດ ເທົ່າໃດບໍ່ນັບເນື່ອງໃນ ຮູບທາດ

[໑໐໐໔] ຮູບຂັນບໍ່ນັບເນື່ອງໃນຮູບທາດ ຂັນ ໔ ທີ່ນັບເນື່ອງໃນຮູບທາດກໍມີ ທີ່ບໍ່ນັບເນື່ອງໃນຮູບທາດກໍມີ

ອາຍະຕະນະ ໑໐ ນັບເນື່ອງໃນຮູບທາດ ອາຍະຕະນະ ໔ ທີ່ນັບເນື່ອງໃນຮູບທາດກໍມີ ທີ່ບໍ່ນັບເນື່ອງໃນຮູບທາດກໍມີ

ທາດ ໑໖ ບໍ່ນັບເນື່ອງໃນຮູບທາດ ທາດ ໔ ທີ່ນັບເນື່ອງໃນຮູບທາດກໍມີ ທີ່ບໍ່ນັບເນື່ອງໃນຮູບທາດກໍມີ

ສັດຈະ ໓ ບໍ່ນັບເນື່ອງໃນຮູບທາດ ທຸກຂະສັດທີ່ນັບເນື່ອງໃນຮູບທາດກໍມີ ທີ່ບໍ່ນັບເນື່ອງໃນຮູບທາດກໍມີ

ອິນຊີ ໑໓ ບໍ່ນັບເນື່ອງໃນຮູບທາດ ອິນຊີ ໙ ທີ່ນັບເນື່ອງໃນຮູບທາດກໍມີ ທີ່ບໍ່ນັບເນື່ອງໃນຮູບທາດກໍມີ

ອະກຸສົນເຫດ ໓ ບໍ່ນັບເນື່ອງໃນຮູບທາດ ເຫດ ໖ ທີ່ນັບເນື່ອງໃນຮູບທາດກໍມີ ທີ່ບໍ່ນັບເນື່ອງໃນຮູບທາດກໍມີ

ກະວະລິງກາຣາຫານບໍ່ນັບເນື່ອງໃນຮູບທາດ ອາຫານ ໓ ທີ່ນັບເນື່ອງໃນຮູບທາດກໍມີ ທີ່ບໍ່ນັບເນື່ອງໃນຮູບທາດກໍມີ

ຜັດສະ ໖ ບໍ່ນັບເນື່ອງໃນຮູບທາດ ມະໂນວິນຍານທາດສຳຜັດທີ່ນັບເນື່ອງໃນຮູບທາດກໍມີ ທີ່ບໍ່ນັບເນື່ອງໃນຮູບທາດກໍມີ

ເວທະນາ ໖ ຯລຯ ສັນຍາ ໖ ຯລຯ ເຈຕະນາ ໖ ຯລຯ ຈິດ ໖ ບໍ່ນັບເນື່ອງໃນຮູບທາດ ມະໂນວິນຍານທາດທີ່ນັບເນື່ອງໃນຮູບທາດກໍມີ ທີ່ບໍ່ນັບເນື່ອງໃນຮູບທາດກໍມີ

# ໓. ອະຮູບທາດ

## (ທາດໃນອະຮູບພູມ)

[໑໐໐໓] ບັນດາຂັນ ໕ ຂັນເທົ່າໃດ?ນັບເນື່ອງໃນອະຮູບທາດ ເທົ່າໃດບໍ່ນັບເນື່ອງໃນອະຮູບທາດ ຯລຯ ບັນດາຈິດ ໆ ຈິດເທົ່າໃດ?ນັບເນື່ອງໃນອະຮູບທາດ ເທົ່າໃດບໍ່ນັບເນື່ອງໃນ ອະຮູບທາດ

[໑໐໐໔] ຮູບຂັນບໍ່ນັບເນື່ອງໃນອະຣູບທາດ ຂັນ ໔ ທີ່ນັບເນື່ອງໃນອະຣູບທາດ ກໍມີ ທີ່ບໍ່ນັບເນື່ອງໃນອະຣູບທາດກໍມີ

ອາຍະຕະນະ ໑໐ ບໍ່ນັບເນື່ອງໃນອະຣູບທາດ ອາຍະຕະນະ ໒ ທີ່ນັບເນື່ອງໃນອະຣູບທາດກໍມີ ທີ່ບໍ່ນັບເນື່ອງໃນອະຣູບທາດກໍມີ

ທາດ ໑໖ ບໍ່ນັບເນື່ອງໃນອະຣູບທາດ ທາດ ໒ ທີ່ນັບເນື່ອງໃນອະຣູບທາດກໍມີ ທີ່ບໍ່ນັບເນື່ອງໃນອະຣູບທາດກໍມີ

ສັດຈະ ໓ ບໍ່ນັບເນື່ອງໃນອະຣູບທາດ ທຸກຂະສັດທີ່ນັບເນື່ອງໃນອະຣູບທາດກໍມີ ທີ່ບໍ່ນັບເນື່ອງໃນອະຣູບທາດກໍມີ

ອິນຊີ ໑໔ ບໍ່ນັບເນື່ອງໃນອະຣູບທາດ ອິນຊີ ๘ ທີ່ນັບເນື່ອງໃນອະຣູບທາດກໍມີ ທີ່ບໍ່ນັບເນື່ອງໃນອະຣູບທາດກໍມີ

ອະກຸສົນເຫດ ໓ ບໍ່ນັບເນື່ອງໃນອະຣູບທາດ ເຫດ ໖ ທີ່ນັບເນື່ອງໃນອະຣູບທາດກໍມີ ທີ່ບໍ່ນັບເນື່ອງໃນອະຣູບທາດກໍມີ

ກະວະລິງກາຣາຫານບໍ່ນັບເນື່ອງໃນອະຣູບທາດ ອາຫານ ໓ ທີ່ນັບເນື່ອງໃນອະຣູບທາດກໍມີ ທີ່ບໍ່ນັບເນື່ອງໃນອະຣູບທາດກໍມີ

ຜັດສະ ໖ ບໍ່ນັບເນື່ອງໃນອະຣູບທາດ ມະໂນວິນຍານທາດສຳຜັດທີ່ນັບເນື່ອງໃນອະຣູບທາດກໍມີ ທີ່ບໍ່ນັບເນື່ອງໃນອະຣູບທາດກໍມີ

ເວທະນາ ໖ ຯລຯ ສັນຍາ ໖ ຯລຯ ເຈຕະນາ ໖ ຯລຯ ຈິດ ໖ ບໍ່ນັບເນື່ອງໃນອະຣູບທາດ ມະໂນວິນຍານທາດທີ່ນັບເນື່ອງໃນອະຣູບທາດກໍມີ ທີ່ບໍ່ນັບເນື່ອງໃນອະຣູບທາດກໍມີ

## ໔. ປະຣິຍາປັນນາປະຣິຍາປັນນະ

## (ທຳທີ່ນັບເນື່ອງແລະບໍ່ນັບເນື່ອງໃນວັດຕະທຸກ)

[໑໐໐໕] ບັນດາຂັນ ໕ ຂັນເທົ່າໃດ?ເປັນໂລກິຍະ ເທົ່າໃດເປັນໂລກຸດຕະຣະ ຯລຯ ບັນດາຈິດ ៗ ຈິດເທົ່າໃດ?ເປັນໂລກິຍະ ເທົ່າໃດເປັນໂລກຸດຕະຣະ

[໑໐໐໖] ຮູບຂັນເປັນໂລກິຍະ ຂັນ ໔ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ອາຍະຕະນະ ໑໐ ເປັນໂລກິຍະ ອາຍະຕະນະ ໒ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ທາດ ໑໖ ເປັນໂລກິຍະ ທາດ ໒ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ສັດຈະ ໒ ເປັນໂລກິຍະ ສັດຈະ ໒ ເປັນໂລກຸດຕະຣະ

ອິນຊີ ໑໐ ເປັນໂລກິຍະ ອິນຊີ ໓ ເປັນໂລກຸດຕະຣະ ອິນຊີ ໙ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ອະກຸສົນເຫດ ໓ ເປັນໂລກິຍະ ເຫດ ໖ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ກະວະລິງກາຣາຫານເປັນໂລກິຍະ ອາຫານ ໓ ທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ຜັດສະ ໖ ເປັນໂລກິຍະ ມະໂນວິນຍານທາດສໍາຜັດທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ເວທະນາ ໖ ຯລຯ ສັນຍາ ໖ ຯລຯ ເຈຕະນາ ໖ ຯລຯ ຈິດ ໖ ເປັນໂລກິຍະ ມະໂນວິນຍານທາດທີ່ເປັນໂລກິຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

## ໔. ທໍາມະຫັດສະນະວາຣະ

## (ວາຣະວ່າດ້ວຍການສະແດງທໍາ)

### ໑. ການທາດ

#### (ທາດໃນການມະພູມ)

[໑໐໐໗] ໃນຂະນະເກີດໃນການທາດ ຂັນເທົ່າໃດ?ຜາກົດ ຯລຯ ຈິດເທົ່າໃດ?ຜາກົດໃນຂະນະເກີດໃນການທາດ ຂັນ ໕ ຜາກົດແກ່ສັດທຸກຈໍາພວກ ອາຍະຕະນະ ໑໑ ຜາກົດແກ່ສັດບາງພວກ ອາຍະຕະນະ ໑໐ ຜາກົດແກ່ສັດບາງພວກ ອາຍະຕະນະ ໑໐ ເຫຼົ່າອື່ນອີກຜາກົດແກ່ສັດບາງພວກ ອາຍະຕະນະ ໙ ຜາກົດແກ່ສັດບາງພວກ ອາຍະຕະນະ ໗ ຜາກົດແກ່ສັດບາງພວກ ທາດ ໑໑ ຜາກົດແກ່ສັດບາງພວກ ທາດ ໑໐ ຜາກົດແກ່ສັດບາງພວກ ທາດ ໑໐ ເຫຼົ່າອື່ນອີກ ຜາກົດແກ່ສັດບາງພວກ ທາດ ໙ ຜາກົດແກ່ສັດບາງພວກ ທາດ ໗ ຜາກົດແກ່ສັດບາງພວກ ສັດຈະ ໑ ຜາກົດແກ່ສັດທຸກຈໍາພວກ

ອິນຊີ ໑໔ ຜາກົດແກ່ສັດບາງພວກ ອິນຊີ ໑໓ ຜາກົດແກ່ສັດບາງພວກ ອິນຊີ ໑໓ ເຫຼົ່າອື່ນອີກ ຜາກົດແກ່ສັດບາງພວກ ອິນຊີ ໑໔ ຜາກົດແກ່ສັດບາງພວກ ອິນຊີ ໑໐ ຜາກົດແກ່ສັດບາງພວກ ອິນຊີ ໙ ຜາກົດແກ່ສັດບາງພວກ ອິນຊີ ໙ ເຫຼົ່າອື່ນອີກ ຜາກົດແກ່ສັດບາງພວກ ອິນຊີ ໘ ຜາກົດແກ່ສັດບາງພວກ ອິນຊີ ໘ ເຫຼົ່າອື່ນອີກຜາກົດແກ່ສັດບາງພວກ ອິນຊີ ໗ ຜາກົດແກ່ສັດບາງພວກ ອິນຊີ ໕ ຜາກົດແກ່ສັດບາງພວກ ອິນຊີ ໔ ຜາກົດແກ່ສັດບາງພວກ

ເຫດ ໓ ຜາກົດແກ່ສັດບາງພວກ ເຫດ ໔ ຜາກົດແກ່ສັດບາງພວກ ອະເຫຕຸກະວິບາກຜາກົດແກ່ສັດບາງພວກ

ອາຫານ ໔ ຜາກົດແກ່ສັດທຸກຈໍາພວກ ຜັດສະ ໑ ຜາກົດແກ່ສັດທຸກຈໍາພວກ

ເວທະນາ ໑ ສັນຍາ ໑ ເຈຕະນາ ໑ ຈິດ ໑ ຜາກົດແກ່ສັດທຸກຈໍາພວກ

[໑໐໐໘] ໃນຂະນະເກີດໃນກາມທາດ ຂັນ ໕ ເຫຼົ່າໃດ?ຜາກົດແກ່ສັດທຸກຈຳພວກ

ຮູບຂັນ ເວທະນາຂັນ ສັນຍາຂັນ ສັງຂານຂັນ ວິນຍານຂັນ ໃນຂະນະເກີດໃນກາມທາດ ຂັນ ໕ ເຫຼົ່ານີ້ຜາກົດແກ່ສັດທຸກຈຳພວກ

[໑໐໐໙] ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໑ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໑ ຄື

໑. ຈັກຂາຍະຕະນະ
໒. ໂສຕາຍະຕະນະ
໓. ຄັນທາຍະຕະນະ
໔. ຣະສາຍະຕະນະ
໕. ໂຜດຖັບພາຍະຕະນະ
໖. ຮູປາຍະຕະນະ
໗. ຄານາຍະຕະນະ
໘. ຊິວຫາຍະຕະນະ
໙. ກາຍາຍະຕະນະ
໑໐. ມະນາຍະຕະນະ
໑໑. ທຳມາຍະຕະນະ

ຜາກົດແກ່ເທວະດາຊັ້ນກາມາວະຈອນ ມະນຸດຜູ້ເກີດໃນສະໄໝຕົ້ນກັບ ເຜດ ອະສຸຣະກາຍ ສັດເດຍຣັດສານຜູ້ເປັນໂອປະປາຕິກະສັດແລະສັດນະຣົກ ເຊິ່ງມີອາຍະຕະນະຄົບບໍລິບູນ ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໑ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໐ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໐ ຄື

໑. ຮູປາຍະຕະນະ
໒. ຄານາຍະຕະນະ
໓. ຊິວຫາຍະຕະນະ
໔. ກາຍາຍະຕະນະ
໕. ມະນາຍະຕະນະ
໖. ໂສຕາຍະຕະນະ
໗. ຄັນທາຍະຕະນະ
໘. ຣະສາຍະຕະນະ
໙. ໂຜດຖັບພາຍະຕະນະ
໑໐. ທຳມາຍະຕະນະ

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງມີ ຕາບອດມາແຕ່ກຳເນີດ ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໐ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໐ ອື່ນອີກ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໐ ຄື

໑. ຈັກຂາຍະຕະນະ
໒. ຄານາຍະຕະນະ
໓. ຊິວຫາຍະຕະນະ
໖. ຮູປາຍະຕະນະ
໗. ຄັນທາຍະຕະນະ
໘. ຣະສາຍະຕະນະ

| | |
|---|---|
| ໗. ກາຍາຍະຕະນະ | ໙. ໂຜດຖັບພາຍະຕະນະ |
| ໘. ມະນາຍະຕະນະ | ໑໐. ທຳມາຍະຕະນະ |

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງມີຫູໜວກມາແຕ່ກຳເນີດ ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໐ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ອາຍະຕະນະ ໙ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ອາຍະຕະນະ ໙ ຄື

| | |
|---|---|
| ໑. ຣູປາຍະຕະນະ | ໒. ຄານາຍະຕະນະ |
| ໓. ຄັນທາຍະຕະນະ | ໔. ຊິວຫາຍະຕະນະ |
| ໕. ຣະສາຍະຕະນະ | ໖. ກາຍາຍະຕະນະ |
| ໗. ໂຜດຖັບພາຍະຕະນະ | ໘. ມະນາຍະຕະນະ |
| ໙. ທຳມາຍະຕະນະ | |

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງມີຕາບອດແລະຫູໜວກມາແຕ່ກຳເນີດ ໃນຂະນະເກີດໃນກາມທາດ ອາຍະຕະນະ ໙ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ອາຍະຕະນະ ໗ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ອາຍະຕະນະ ໗ ຄື

| | |
|---|---|
| ໑. ຣູປາຍະຕະນະ | ໒. ຄັນທາຍະຕະນະ |
| ໓. ຣະສາຍະຕະນະ | ໔. ກາຍາຍະຕະນະ |
| ໕. ໂຜດຖັບພາຍະຕະນະ | ໖. ມະນາຍະຕະນະ |
| ໗. ທຳມາຍະຕະນະ | |

ຜາກົດແກ່ສັດຜູ້ເກີດໃນທ້ອງ ໃນຂະນະເກີດໃນກາມທາດ ອາຍະຕະນະ ໗ ເຫຼົ່ານີ້ຜາກົດແກ່ສັດພວກນີ້ (໒)

[໑໐໑໐] ໃນຂະນະເກີດໃນກາມທາດ ທາດ ໑໑ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ທາດ ໑໑ ຄື

| | |
|---|---|
| ໑. ຈັກຂຸທາດ | ໒. ຣູບທາດ |
| ໓. ໂສຕະທາດ | ໔. ຄານະທາດ |
| ໕. ຄັນທະທາດ | ໖. ຊິວຫາທາດ |

໗. ຣະສະທາດ ໘. ກາຍະທາດ

໙. ໂຜດຖັບພະທາດ ໑໐. ມະໂນວິນຍານທາດ

໑໑. ທຳມະທາດ

ຜາກົດແກ່ເທວະດາຊັ້ນະການາວະຈອນ ມະນຸດຜູ້ເກີດໃນສະໄໝຕົ້ນກັບ ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງມີອາຍະຕະນະຄົບບໍລິບູນ ໃນຂະນະເກີດໃນກາມທາດ ທາດ ໑໑ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ທາດ ໑໐ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ທາດ ໑໐ ຄື

໑. ຣູປະທາດ ໒. ໂສຕະທາດ

໓. ຄານະທາດ ໔. ຄັນທະທາດ

໕. ຊິວຫາທາດ ໖. ຣະສະທາດ

໗. ກາຍະທາດ ໘. ໂຜດຖັບພະທາດ

໙. ມະໂນວິນຍານທາດ ໑໐. ທຳມະທາດ

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງມີຕາບອດມາແຕ່ກຳເນີດ ໃນຂະນະເກີດໃນກາມທາດ ທາດ ໑໐ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ອາຍະຕະນະ ໑໐ ອື່ນອີກ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ທາດ ໑໐ ຄື

໑. ຈັກຂຸທາດ ໒. ຣູປະທາດ

໓. ຄານະທາດ ໔. ຄັນທະທາດ

໕. ຊິວຫາທາດ ໖. ຣະສະທາດ

໗. ກາຍະທາດ ໘. ໂຜດຖັບພະທາດ

໙. ມະໂນວິນຍານທາດ ໑໐. ທຳມະທາດ

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງມີຫູໜວກມາແຕ່ກຳເນີດ ໃນຂະນະເກີດໃນກາມທາດ ທາດ ໑໐ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ທາດ ໙ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ທາດ ໙ ຄື

໑. ຣູປະທາດ ໒. ຄານະທາດ

໓. ຄັນທະທາດ ໔. ຊິວຫາທາດ

໕. ຣົດທາດ　　　　໖. ກາຍະທາດ

໗. ໂຜດຖັບພະທາດ　　　　໘. ມະໂນວິນຍານທາດ

໙. ທຳມະທາດ

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງມີຕາບອດແລະຫູໜວກມາແຕ່ກຳເນີດ ໃນຂະນະເກີດໃນກາມທາດ ທາດ ໙ ເຫຼົ່ານີ້ຜາກົດ ແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ທາດ ໗ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ທາດ ໗ ຄື

໑. ຣູປະທາດ　　　　໔. ຄັນທະທາດ

໒. ຣະສະທາດ　　　　໕. ກາຍະທາດ

໕. ໂຜດຖັບພະທາດ　　　　໖. ມະໂນວິນຍານທາດ

໗. ທຳມະທາດ

ຜາກົດແກ່ສັດຜູ້ເກີດໃນທ້ອງ ໃນຂະນະເກີດໃນກາມທາດ ທາດ ໗ ເຫຼົ່ານີ້ຜາກົດ ແກ່ສັດພວກນີ້ (໒)

[໑໐໑໑] ໃນຂະນະເກີດໃນກາມທາດ ສັດຈະ ໑ ຂໍ້ໃດ?ຜາກົດແກ່ສັດທຸກຈຳພວກ

ສັດຈະ ໑ ຂໍ້ນີ້ຄື ທຸກຂະສັດ ໃນຂະນະເກີດໃນກາມທາດ ສັດຈະນີ້ຜາກົດແກ່ສັດທຸກຈຳພວກ (໕)

[໑໐໑໔] ໃນຂະນະເກີດໃນກາມທາດ ອິນຊີ ໑໕ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ອິນຊີ ໑໕ ຄື

໑. ຈັກຂຸນຊີ　　　　໔. ໂສຕິນຊີ

໒. ຄານິນຊີ　　　　໕. ຊິວຫິນຊີ

໕. ກາຍິນຊີ　　　　໖. ມະນິນຊີ

໗. ອິດຖິນຊີ ຫຼື ປຸຣິສິນຊີ　　　　໘. ຊີວິຕິນຊີ

໙. ໂສມະນັດສິນຊີ ຫຼື ອຸເປກຂິນຊີ　　　　໑໐. ສັດທິນຊີ

໑໑. ວິຣິຍິນຊີ　　　　໑໔. ສະຕິນຊີ

໑໒. ສະມາທິນຊີ　　　　໑໕. ປັນຍິນຊີ

ຜາກົດແກ່ເທວະດາຊັ້ນກາມາວະຈອນຜູ້ເປັນສະເຫຕຸກະສັດ ສຳປະຍຸດດ້ວຍຍານ ໃນຂະນະເກີດໃນກາມທາດ ອິນຊີ ໑໕ ເຫຼົ່ານີ້ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນການທາດ ອິນຊີ ໑໓ ຜາກົດແກ່ສັດພວກໃດ?
ໃນຂະນະເກີດໃນການທາດ ອິນຊີ ໑໓ ຄື

໑. ຈັກຂຸນຊີ
໓. ຄານິນຊີ
໕. ກາຍິນຊີ
໗. ອິດຖີນຊີ ຫຼື ປຸຣິສິນຊີ
໙. ໂສມະນັດສິນຊີ ຫຼື ອຸເປກຂິນຊີ
໑໑. ວິຣິຍິນຊີ
໑໓. ສະມາທິນຊີ

໒. ໂສຕິນຊີ
໔. ຊີວຫິນຊີ
໖. ມະນິນຊີ
໘. ຊີວິຕິນຊີ
໑໐. ສັດທິນຊີ
໑໒. ສະຕິນຊີ

ຜາກົດແກ່ເທວະດາຊັ້ນກາມາວະຈອນຜູ້ເປັນສະເຫຕຸກະສັດ ວິບປະຍຸດຈາກຍານໃນຂະນະເກີດໃນການທາດ ອິນຊີ ໑໓ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນການທາດ ອິນຊີ ໑໓ ອື່ນອີກ ຜາກົດແກ່ສັດພວກໃດ?
ໃນຂະນະເກີດໃນການທາດ ອິນຊີ ໑໓ ອື່ນອີກ ຄື

໑. ຈັກຂຸນຊີ
໓. ຄານິນຊີ
໕. ກາຍິນຊີ
໗. ອິດຖີນຊີ ຫຼື ປຸຣິສິນຊີ
໙. ໂສມະນັດສິນຊີ ຫຼື ອຸເປກຂິນຊີ
໑໑. ວິຣິຍິນຊີ
໑໓. ສະມາທິນຊີ

໒. ໂສຕິນຊີ
໔. ຊີວຫິນຊີ
໖.ມະນິນຊີ
໘. ຊີວິຕິນຊີ
໑໐. ສັດທິນຊີ
໑໒. ສະຕິນຊີ

ຜາກົດແກ່ມະນຸດຜູ້ເກີດໃນສະໄໝຕົ້ນກັບ ຜູ້ເປັນສະເຫຕຸກະສັດ ສຳປະຍຸດດ້ວຍຍານໃນຂະນະເກີດໃນການທາດ ອິນຊີ ໑໓ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນການທາດ ອິນຊີ ໑໒ ຜາກົດແກ່ສັດພວກໃດ?
ໃນຂະນະເກີດໃນການທາດ ອິນຊີ ໑໒ ຄື

໑. ຈັກຂຸນຊີ
໓. ຄານິນຊີ
໕. ກາຍິນຊີ

໒. ໂສຕິນຊີ
໔. ຊີວຫິນຊີ
໖. ມະນິນຊີ

| | |
|---|---|
| ໗. ຊີວິຕິນຊີ | ໘. ໂສມະນັດສິນຊີ ຫຼື ອຸເປກຂິນຊີ |
| ໙. ສັດທິນຊີ | ໑໐. ວິຣິຍິນຊີ |
| ໑໑. ສະຕິນຊີ | ໑໒. ສະມາທິນຊີ |

ຜາກົດແກ່ມະນຸດຜູ້ເກີດໃນສະໄໝຕົ້ນກັບ ຜູ້ເປັນສະເຫຕຸກະສັດ ວິບປະຍຸດຈາກຍານ ໃນຂະນະເກີດໃນການທາດ ອິນຊີ ໑໒ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນການທາດ ອິນຊີ ໑໐ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນການທາດ ອິນຊີ ໑໐ ຄື

| | |
|---|---|
| ໑. ກາຍິນຊີ | ໒. ມະນິນຊີ |
| ໓. ອິດຖິນຊີ ຫຼື ປຸຣິສິນຊີ | ໔. ຊີວິຕິນຊີ |
| ໕. ໂສມະນັດສິນຊີ ຫຼື ອຸເປກຂິນຊີ | ໖. ສັດທິນຊີ |
| ໗. ວິຣິຍິນຊີ | ໘. ສະຕິນຊີ |
| ໙. ສະມາທິນຊີ | ໑໐. ປັນຍິນຊີ |

ຜາກົດແກ່ສັດຜູ້ເກີດໃນທ້ອງ ຜູ້ເປັນສະເຫຕຸກະສັດ ສຳປະຍຸດດ້ວຍຍານ ໃນຂະນະເກີດໃນການທາດ ອິນຊີ ໑໐ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນການທາດ ອິນຊີ ໙ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນການທາດ ອິນຊີ ໙ ຄື

| | |
|---|---|
| ໑. ກາຍິນຊີ | ໒. ມະນິນຊີ |
| ໓. ອິດຖິນຊີ ຫຼື ປຸຣິສິນຊີ | ໔. ຊີວິຕິນຊີ |
| ໕. ໂສມະນັດສິນຊີ ຫຼື ອຸເປກຂິນຊີ | ໖. ສັດທິນຊີ |
| ໗. ວິຣິຍິນຊີ | ໘. ສະຕິນຊີ |
| ໙. ສະມາທິນຊີ | |

ຜາກົດແກ່ສັດຜູ້ເກີດໃນທ້ອງ ຜູ້ເປັນສະເຫຕຸກະສັດ ວິບປະຍຸດຈາກຍານ ໃນຂະນະເກີດໃນການທາດ ອິນຊີ ໙ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນການທາດ ອິນຊີ ໙ ອື່ນອີກ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນການທາດ ອິນຊີ ໙ ອື່ນອີກ ຄື

| | |
|---|---|
| ໑. ຈັກຂຸນຊີ | ໒. ໂສຕິນຊີ |
| ໓. ຄານິນຊີ | ໔. ຊິວຫິນຊີ |

໕. ກາຍິນຊີ　　　໖. ມະນິນຊີ
໗. ອິດຖິນຊີ ຫຼື ປຸຣິສິນຊີ　　　໘. ຊີວິຕິນຊີ
໙. ອຸເປກຂິນຊີ

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງມີອາຍະຕະນະຄົບບໍລິບູນ ໃນຂະນະທີ່ເກີດໃນກາມທາດ ອິນຊີ ໙ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ອິນຊີ ໘ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ອິນຊີ ໘ ຄື

໑. ໂສຕິນຊີ　　　໒. ຄານິນຊີ
໓. ຊິວຫິນຊີ　　　໔. ກາຍິນຊີ
໕. ມະນິນຊີ　　　໖. ອິດຖິນຊີ ຫຼື ປຸຣິສິນຊີ
໗. ຊີວິຕິນຊີ　　　໘. ອຸເປກຂິນຊີ

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງມີ ຕາບອດມາແຕ່ກຳເນີດ ໃນຂະນະເກີດໃນກາມທາດ ອິນຊີ ໘ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ອິນຊີ ໘ ອື່ນອີກ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ອິນຊີ ໘ ອື່ນອີກ ຄື

໑. ຈັກຂຸນຊີ　　　໒. ຄານິນຊີ
໓. ຊິວຫິນຊີ　　　໔. ກາຍິນຊີ
໕. ມະນິນຊີ　　　໖. ອິດຖິນຊີ ຫຼື ປຸຣິສິນຊີ
໗. ຊີວິຕິນຊີ　　　໘. ອຸເປກຂິນຊີ

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຣົກ ເຊິ່ງ ມີຫູໜວກມາແຕ່ກຳເນີດ ໃນຂະນະເກີດໃນກາມທາດ ອິນຊີ ໘ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນກາມທາດ ອິນຊີ ໗ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນກາມທາດ ອິນຊີ ໗ ຄື

໑. ຄານິນຊີ　　　໒. ຊິວຫິນຊີ
໓. ກາຍິນຊີ　　　໔. ມະນິນຊີ
໕. ອິດຖິນຊີ ຫຼື ປຸຣິສິນຊີ　　　໖. ຊີວິຕິນຊີ
໗. ອຸເປກຂິນຊີ

ຜາກົດແກ່ເຜດ ອະສຸຣະກາຍ ສັດເດຍຣັດສານ ຜູ້ເປັນໂອປະປາຕິກະສັດ ແລະສັດນະຮົກ ເຊິ່ງມີຕາບອດແລະຫູໜວກມາແຕ່ກຳເນີດ ໃນຂະນະເກີດໃນການທາດ ອິນຊີ ໗ ເຫຼົ່ານີ້ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນການທາດ ອິນຊີ ໕ ຜາກົດແກ່ສັດພວກໃດ?
ໃນຂະນະເກີດໃນການທາດ ອິນຊີ ໕ ຄື

໑. ກາຍິນຊີ ໔. ມະນິນຊີ
໒. ອິດຖິນຊີ ຫຼື ປຸຣິສິນຊີ ໔. ຊີວິຕິນຊີ
໕. ອຸເປກຂິນຊີ

ຜາກົດແກ່ສັດຜູ້ເກີດໃນທ້ອງ ເວັ້ນນະປຸງສະກະສັດ ຜູ້ເປັນອະເຫຕຸກະ ໃນຂະນະເກີດໃນການທາດ ອິນຊີ ໕ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນການທາດ ອິນຊີ ໔ ຜາກົດແກ່ສັດພວກໃດ?
ໃນຂະນະເກີດໃນການທາດ ອິນຊີ ໔ ຄື

໑. ກາຍິນຊີ ໔. ມະນິນຊີ
໒. ຊີວິຕິນຊີ ໔. ອຸເປກຂິນຊີ

ຜາກົດແກ່ສັດຜູ້ເກີດໃນທ້ອງ ຜູ້ເປັນອະເຫຕຸກະເປັນນະປຸງສະກະສັດ ໃນຂະນະເກີດໃນການທາດ ອິນຊີ ໔ ຜາກົດແກ່ສັດພວກນີ້

[໑໐໑໒] ໃນຂະນະເກີດໃນການທາດ ເຫດ ໒ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນການທາດ ເຫດ ໒ ຄື ວິປາກະເຫດ ຄື ອະໂລພະ ວິປາກະເຫດ ຄື ອະໂທສະ ແລະວິປາກະເຫດ ຄື ອະໂມຫະ ຜາກົດແກ່ເທວະດາຊັ້ນກາມາວະຈອນ ມະນຸດຜູ້ເກີດໃນສະໄໝຕົ້ນກັບ ສັດຜູ້ເກີດໃນທ້ອງ ເຊິ່ງເປັນສະເຫຕຸກະສັດ ສຳປະຍຸດດ້ວຍຍານ ໃນຂະນະເກີດໃນການທາດ ເຫດ ໒ ຜາກົດແກ່ສັດພວກນີ້

ໃນຂະນະເກີດໃນການທາດ ເຫດ ໔ ຜາກົດແກ່ສັດພວກໃດ?

ໃນຂະນະເກີດໃນການທາດ ເຫດ ໔ ຄື ວິປາກະເຫດ ຄື ອະໂລພະ ແລະວິປາກະເຫດ ຄື ອະໂທສະ ຜາກົດແກ່ເທວະດາຊັ້ນກາມາວະຈອນ ມະນຸດຜູ້ເກີດໃນສະໄໝຕົ້ນກັບ ສັດຜູ້ເກີດໃນທ້ອງ ເຊິ່ງເປັນສະເຫຕຸກະສັດ ວິບປະຍຸດຈາກຍານ ໃນຂະນະເກີດໃນການທາດ ເຫດ ໔ ຜາກົດແກ່ສັດພວກນີ້ ອະເຫຕຸກະວິບາກ ຜາກົດແກ່ສັດທີ່ເຫຼືອຈາກນັ້ນ (໒)

[໑໐໑໔] ໃນຂະນະເກີດໃນກາມທາດ ອາຫານ ໔ ເຫຼົ່າໃດ? ຜາກົດແກ່ສັດທຸກຈຳພວກ ອາຫານ ໔ ຄື

໑. ກະວະລິງກາຣາຫານ ໒. ຜັດສາຫານ
໓. ມະໂນສັນເຈຕະນາຫານ ໔. ວິນຍານາຫານ

ໃນຂະນະເກີດໃນກາມທາດ ອາຫານ ໔ ຜາກົດແກ່ສັດທຸກຈຳພວກ (໗)

ໃນຂະນະເກີດໃນກາມທາດ ຜັດສະ ໑ ຂໍ້ໃດ?ຜາກົດແກ່ສັດທຸກຈຳພວກ

ຜັດສະ ໑ ຂໍ້ນີ້ ຄື ມະໂນວິນຍານທາດສຳຜັດ ໃນຂະນະເກີດໃນກາມທາດ ຜັດສະ ໑ ຂໍ້ນີ້ຜາກົດແກ່ສັດທຸກຈຳພວກ (໘)

ໃນຂະນະເກີດໃນກາມທາດ ເວທະນາ ໑ ຯລຯ ສັນຍາ ໑ ຯລຯ ເຈຕະນາ ໑ ຯລຯ ຈິດ ໑ ຢ່າງໃດຜາກົດແກ່ສັດທຸກຈຳພວກ

ຈິດ ໑ ຄື ມະໂນວິນຍານທາດ

ໃນຂະນະເກີດໃນກາມທາດ ຈິດ ໑ ນີ້ຜາກົດແກ່ສັດທຸກຈຳພວກ (໙-໑໒)

## ໒. ຣູບທາດ

### (ທາດໃນຣູບປະພູມ)

[໑໐໑໕] ໃນຂະນະເກີດໃນຣູບທາດ ຂັນເທົ່າໃດ?ຜາກົດ ຯລຯ ຈິດເທົ່າໃດ?ຜາກົດໃນຂະນະເກີດໃນຣູບທາດ ຂັນ ໕ ອາຍະຕະນະ ໕ ທາດ ໕ ສັດຈະ ໑ ອິນຊີ ໑໐ ເຫດ ໓ ອາຫານ ໓ ຜັດສະ ໑ ເວທະນາ ໑ ສັນຍາ ໑ ເຈຕະນາ ໑ ຈິດ ໑ ຜາກົດແກ່ເທວະດາ ເວັ້ນອະສັນຍະສັດຕະພົມ

[໑໐໑໖] ໃນຂະນະເກີດໃນຣູບທາດ ຂັນ ໕ ເຫຼົ່າໃດ?ຜາກົດ ຂັນ ໕ ຄື

໑. ຣູບຂັນ ໒. ເວທະນາຂັນ
໓. ສັນຍາຂັນ ໔. ສັງຂານຂັນ
໕. ວິນຍານຂັນ

ໃນຂະນະເກີດໃນຣູບທາດ ຂັນ ໕ ເຫຼົ່ານີ້ຜາກົດ (໑)

ໃນຂະນະເກີດໃນຣູບທາດ ອາຍະຕະນະ ໕ ເຫຼົ່າໃດ? ຜາກົດ ອາຍະຕະນະ ໕ ຄື

໑. ຈັກຂາຍະຕະນະ　　໔. ຣູປາຍະຕະນະ
໓. ໂສຕາຍະຕະນະ　　໔. ມະນາຍະຕະນະ
໕. ທຳມາຍະຕະນະ

ໃນຂະນະເກີດໃນຣູບທາດ ອາຍະຕະນະ ໕ ເຫຼົ່ານີ້ຜາກົດ (໔)
ໃນຂະນະເກີດໃນຣູບທາດ ທາດ ໕ ເຫຼົ່າໃດ? ຜາກົດ
ທາດ ໕ ເຫຼົ່ານີ້ຄື

໑. ຈັກຂຸທາດ　　໔. ຣູບທາດ
໓. ໂສຕະທາດ　　໔. ມະໂນວິນຍານທາດ
໕. ທຳມະທາດ

ໃນຂະນະເກີດໃນຣູບທາດ ທາດ ໕ ເຫຼົ່ານີ້ຜາກົດ (໓)
ໃນຂະນະເກີດໃນຣູບທາດ ສັດຈະ ໑ ຂໍ້ໃດ?ຜາກົດ
ສັດຈະ ໑ ຂໍ້ນີ້ຄື ທຸກຂະສັດ ໃນຂະນະເກີດໃນຣູບທາດສັດຈະ ໑ ຂໍ້ນີ້ຜາກົດ (໔)
ໃນຂະນະເກີດໃນຣູບທາດ ອິນຊີ ໑໐ ເຫຼົ່າໃດ?ຜາກົດ
ອິນຊີ ໑໐ ເຫຼົ່ານີ້ ຄື

໑. ຈັກຂຸນຊີ　　໔. ໂສຕິນຊີ
໓. ມະນິນຊີ　　໔. ຊີວິຕິນຊີ
໕. ໂສມະນັດສິນຊີ ຫຼື ອຸເປກຂິນຊີ　　໖. ສັດທິນຊີ
໗. ວິຣິຍິນຊີ　　໘. ສະຕິນຊີ
໙. ສະມາທິນຊີ　　໑໐. ປັນຍິນຊີ

ໃນຂະນະເກີດໃນຣູບທາດ ອິນຊີ ໑໐ ເຫຼົ່ານີ້ຜາກົດ (໕)
ໃນຂະນະເກີດໃນຣູບທາດ ເຫດ ໓ ເຫຼົ່າໃດ? ຜາກົດ
ເຫດ ໓ ຄື ວິປາກະເຫດ ຄື ອະໂລພະ ວິປາກະເຫດ ຄື ອະໂທສະ ແລະວິປາກະເຫດ ຄື ອະໂມຫະ ໃນຂະນະເກີດໃນຣູບທາດ ເຫດ ໓ ເຫຼົ່ານີ້ຜາກົດ (໖)
ໃນຂະນະເກີດໃນຣູບທາດ ອາຫານ ໓ ເຫຼົ່າໃດ?ຜາກົດ
ອາຫານ ໓ ຄື

໑. ຜັດສາຫານ
໔. ມະໂນສັນເຈຕະນາຫານ
໓. ວິນຍານາຫານ

ໃນຂະນະເກີດໃນຣູບທາດ ອາຫານ ๓ ເຫຼົ່ານີ້ຜາກົດ (໗)

ໃນຂະນະເກີດໃນຣູບທາດ ຜັດສະ ๑ ຢ່າງໃດຜາກົດ

ຜັດສະ ๑ ຄື ມະໂນວິນຍານທາດສຳຜັດ ໃນຂະນະເກີດໃນຣູບທາດ ຜັດສະ ๑ ນີ້ຜາກົດ (໘)

ໃນຂະນະເກີດໃນຣູບທາດ ເວທະນາ ๑ ໆລໆ ສັນຍາ ๑ ໆລໆ ເຈຕະນາ ๑ ໆລໆ ຈິດ ๑ ຢ່າງໃດຜາກົດ

ຈິດ ๑ ຄື ມະໂນວິນຍານທາດ

ໃນຂະນະທີ່ເກີດໃນຣູບທາດ ຈິດ ๑ ນີ້ຜາກົດ (໙-๑໔)

## ๓. ອະສັນຍະສັດ

### (ສັດທີ່ບໍ່ມີສັນຍາ)

[๑໐๑໗] ໃນຂະນະເກີດ ຂັນເທົ່າໃດ?ຜາກົດ ໆລໆ ຈິດເທົ່າໃດ?ຜາກົດແກ່ອະສັນຍະສັດຕະພົມ ໃນຂະນະເກີດ ຂັນ ๑ ຄື ຣູບຂັນ

ອາຍະຕະນະ ໔ ຄື ຣູປາຍະຕະນະ ແລະທຳມາຍະຕະນະ

ທາດ ໔ ຄື ຣູບທາດ ແລະທຳມະທາດ

ສັດຈະ ๑ ຄື ທຸກຂະສັດ

ອິນຊີ ๑ ຄື ຣູບຊີວິຕິນຊີ

ຜາກົດແກ່ອະສັນຍະສັດຕະພົມ ອະສັນຍະສັດຕະພົມ ບໍ່ມີເຫດ ບໍ່ມີອາຫານ ບໍ່ມີຜັດສະ ບໍ່ມີເວທະນາ ບໍ່ມີສັນຍາ ບໍ່ມີເຈຕະນາ ບໍ່ມີຈິດຜາກົດ

## ៥. ອະຣູບທາດ

### (ທາດໃນອະຣູບພູມ)

[๑໐๑໘] ໃນຂະນະເກີດໃນອະຣູບທາດ ຂັນເທົ່າໃດ?ຜາກົດ ໆລໆ ຈິດເທົ່າໃດ?ຜາກົດ

ໃນຂະນະເກີດໃນອະຣູບທາດ ຂັນ ៥ ອາຍະຕະນະ ໔ ທາດ ໔ ສັດຈະ ๑ ອິນຊີ ໘ ເຫດ ๓ ອາຫານ ๓ ຜັດສະ ๑ ເວທະນາ ๑ ສັນຍາ ๑ ເຈຕະນາ ๑ ຈິດ ๑ ຜາກົດ

[๑໐๑໙] ໃນຂະນະເກີດໃນອະຣູບທາດ ຂັນ ៥ ເຫຼົ່າໃດ? ຜາກົດ ຂັນ ៥ ຄື

| | |
|---|---|
| ๑. ເວທະນາຂັນ | ໔. ສັນຍາຂັນ |
| ๓. ສັງຂານຂັນ | ៥. ວິນຍານຂັນ |

ໃນຂະນະເກີດໃນອະຣູບທາດ ຂັນ ໔ ເຫຼົ່ານີ້ຜາກົດ (໑)
ໃນຂະນະເກີດໃນອະຣູບທາດ ອາຍະຕະນະ ໒ ເຫຼົ່າໃດ? ຜາກົດ
ອາຍະຕະນະ ໒ ຄື ມະນາຍະຕະນະ ແລະທຳມາຍະຕະນະ
ໃນຂະນະເກີດໃນອະຣູບທາດ ອາຍະຕະນະ ໒ ເຫຼົ່ານີ້ຜາກົດ (໒)
ໃນຂະນະເກີດໃນອະຣູບທາດ ທາດ ໒ ເຫຼົ່າໃດ? ຜາກົດ
ທາດ ໒ ຄື ມະໂນວິນຍານທາດ ແລະທຳມະທາດ
ໃນຂະນະເກີດໃນອະຣູບທາດ ທາດ ໒ ເຫຼົ່ານີ້ຜາກົດ (໓)
ໃນຂະນະເກີດໃນອະຣູບທາດ ສັດຈະ ໑ ຂໍ້ໃດ? ຜາກົດ
ສັດຈະ ໑ ຂໍ້ນີ້ຄື ທຸກຂະສັດ
ໃນຂະນະເກີດໃນອະຣູບທາດ ສັດຈະ ໑ ຂໍ້ນີ້ຜາກົດ (໔)
ໃນຂະນະເກີດໃນອະຣູບທາດ ອິນຊີ ໘ ເຫຼົ່າໃດ? ຜາກົດ
ອິນຊີ ໘ ຄື

໑. ມະນິນຊີ
໓. ອຸເປກຂິນຊີ
໕. ວິຣິຍິນຊີ
໗. ສະມາທິນຊີ
໒. ຊີວິຕິນຊີ
໔. ສັດທິນຊີ
໖. ສະຕິນຊີ
໘. ປັນຍິນຊີ

ໃນຂະນະເກີດໃນອະຣູບທາດ ອິນຊີ ໘ ເຫຼົ່ານີ້ຜາກົດ (໕)
ໃນຂະນະເກີດໃນອະຣູບທາດ ເຫດ ໓ ເຫຼົ່າໃດ? ຜາກົດ
ເຫດ ໓ ຄື ວິປາກະເຫດ ຄື ອະໂລພະ ວິປາກະເຫດ ຄື ອະໂທສະ ແລະວິປາກະເຫດ ຄື ອະໂມຫະ
ໃນຂະນະເກີດໃນອະຣູບທາດ ເຫດ ໓ ເຫຼົ່ານີ້ຜາກົດ (໖)
ໃນຂະນະເກີດໃນອະຣູບທາດ ອາຫານ ໓ ເຫຼົ່າໃດ? ຜາກົດ
ອາຫານ ໓ ຄື

໑. ຜັດສາຫານ
໒. ມະໂນສັນເຈຕະນາຫານ
໓. ວິນຍານາຫານ

ໃນຂະນະເກີດໃນອະຣູບທາດ ອາຫານ ໓ ເຫຼົ່ານີ້ຜາກົດ (໗)
ໃນຂະນະເກີດໃນອະຣູບທາດ ຜັດສະ ໑ ຢ່າງໃດຜາກົດ
ຜັດສະ ໑ ຄື ມະໂນວິນຍານາທາດສຳຜັດ

ໃນຂະນະເກີດໃນອະຮູບທາດ ຜັດສະ ໑ ນີ້ຜາກົດ (໗)

ໃນຂະນະເກີດໃນອະຮູບທາດ ເວທະນາ ໑ ຯລຯ ສັນຍາ ໑ ຯລຯ ເຈຕະນາ ໑ ຯລຯ ຈິດ ໑ ຢ່າງໃດຜາກົດ

ຈິດ ໑ ຄື ມະໂນວິນຍານທາດ

ໃນຂະນະເກີດໃນອະຮູບທາດ ຈິດ ໑ ນີ້ຜາກົດ (໙-໑໔)

## ໕. ພູມັນຕະຣະທັດສະນະວາຣະ

### (ວາຣະວ່າດ້ວຍການສະແດງລະຫວ່າງພູມ)

[໑໐໔໐] ສະພາວະທຳທີ່ເປັນກາມາວະຈອນ ສະພາວະທຳທີ່ບໍ່ເປັນກາມາວະຈອນ ສະພາວະທຳທີ່ເປັນອະຮູບປາວະຈອນ ສະພາວະທຳທີ່ບໍ່ເປັນອະຮູບປາວະຈອນ ສະພາວະທຳທີ່ເປັນອະຮູບປາວະຈອນ ສະພາວະທຳທີ່ບໍ່ເປັນອະຮູບປາວະຈອນ ສະພາວະທຳທີ່ນັບເນື່ອງໃນວັດຕະທຸກ ສະພາວະທຳທີ່ບໍ່ນັບເນື່ອງໃນວັດຕະທຸກ

ສະພາວະທຳທີ່ເປັນກາມາວະຈອນ ເປັນແນວໃດ?

ຂັນ ທາດ ອາຍະຕະນະ ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ທ່ອງທ່ຽວຢູ່ໃນພູມນີ້ ທີ່ນັບເນື່ອງໃນພູມນີ້ ໃນລະຫວ່າງນີ້ ຄື ເບື້ອງລຸ່ມກຳນົດເອົາອະເວຈີນະຣົກເປັນບ່ອນສຸດ ເບື້ອງເທິງກຳນົດເອົາເຫຼົ່າເທວະດາຊັ້ນປະຣະນິມມິຕະວະສະວັດຕີເປັນບ່ອນສຸດ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກາມາວະຈອນ

ສະພາວະທຳທີ່ບໍ່ເປັນກາມາວະຈອນ ເປັນແນວໃດ?

ສະພາວະທຳທີ່ເປັນອະຮູບປາວະຈອນ ທີ່ເປັນອະຮູບປາວະຈອນ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນກາມາວະຈອນ

ສະພາວະທຳທີ່ເປັນອະຮູບປາວະຈອນ ເປັນແນວໃດ?

ສະພາວະທຳຄືຈິດ ແລະເຈຕະສິກຂອງບຸກຄົນຜູ້ເຂົ້າສະມາບັດ ຜູ້ເກີດໃນຮູບພູມ ຫຼື ພຣະອະຣະຫັນຜູ້ຢູ່ເປັນສຸກໃນປັດຈຸບັນ ທີ່ທ່ອງທ່ຽວຢູ່ໃນພູມນີ້ ນັບເນື່ອງໃນພູມນີ້ ໃນລະຫວ່າງນີ້ ຄື ເບື້ອງລຸ່ມກຳນົດເອົາພົມໂລກເປັນບ່ອນສຸດ (ຊັ້ນພົມປາຣິສັດຊາ) ເບື້ອງເທິງກຳນົດເອົາພົມຊັ້ນອະກະນິດຖະພົບເປັນບ່ອນສຸດ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອະຮູບປາວະຈອນ

ສະພາວະທຳທີ່ບໍ່ເປັນອະຮູບປາວະຈອນ ເປັນແນວໃດ?

ສະພາວະທຳທີ່ເປັນກາມາວະຈອນ ທີ່ເປັນອະຮູບປາວະຈອນ ທີ່ບໍ່ນັບເນື່ອງໃນວັດ ຕະທຸກ ສະພາວະ ທຳເຫຼົ່ານີ້ຊື່ວ່າ ບໍ່ເປັນອະຮູບປາວະຈອນ

ສະພາວະທຳທີ່ເປັນອະຣູບປາວະຈອນ ເປັນແນວໃດ?

ສະພາວະທຳຄືຈິດແລະເຈຕະສິກຂອງບຸກຄົນຜູ້ເຂົ້າສະມາບັດ ຜູ້ເກີດໃນອະຣູບພູມ ຫຼືພຣະອະຣະຫັນຜູ້ຢູ່ເປັນສຸກໃນປັດຈຸບັນ ທີ່ທ່ອງທ່ຽວຢູ່ໃນພູມນີ້ ນັບເນື່ອງໃນພູມນີ້ໃນລະຫວ່າງນີ້ ຄື ເບື້ອງລຸ່ມກຳນົດເອົາພົມຜູ້ເຂົ້າເຖິງຊັ້ນອາກາສານັນຈາຍະຕະນະພົບເປັນບ່ອນສຸດ ເບື້ອງເທິງກຳນົດເອົາເຫຼົ່າພົມຜູ້ເຂົ້າເຖິງຊັ້ນເນວະສັນຍານາສັນຍາຍະຕະນະພົບເປັນບ່ອນສຸດ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະຣູບປາວະຈອນ

ສະພາວະທຳທີ່ບໍ່ເປັນອະຣູບປາວະຈອນ ເປັນແນວໃດ?

ສະພາວະທຳທີ່ເປັນກາມາວະຈອນ ທີ່ເປັນອະຣູບປາວະຈອນ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳ ເຫຼົ່ານີ້ຊື່ວ່າບໍ່ເປັນອະຣູບປາວະຈອນ

ສະພາວະທຳທີ່ນັບເນື່ອງໃນວັດຕະທຸກ ເປັນແນວໃດ?

ສະພາວະທຳ ຄື ກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເປັນອາລົມຂອງອາສະວະ ສະພາວະທຳທີ່ເປັນກາມາວະຈອນ ສະພາວະທຳທີ່ເປັນອະຣູບປາວະຈອນ ສະພາວະທຳທີ່ເປັນອະຣູບປາວະຈອນ ໄດ້ແກ່ ຣູບຂັນ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳ ເຫຼົ່ານີ້ຊື່ວ່າ ນັບເນື່ອງໃນວັດຕະທຸກ

ສະພາວະທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ເປັນແນວໃດ?

ມັກ ຜົນແຫ່ງມັກ ທາດທີ່ປັດໄຈບໍ່ປຸງແຕ່ງ (ນິບພານ) ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ນັບເນື່ອງໃນວັດຕະທຸກ

## ໖. ອຸບປາທະກະກຳມະອາຍຸບປະມານະວາຣະ

## (ວາຣະວ່າດ້ວຍກຳເປັນເຫດໃຫ້ເກີດແລະປະມານອາຍຸຂອງສັດ)

### ໑. ອຸບປາທະກະກຳ

### (ກຳເປັນເຫດໃຫ້ເກີດ)

[໑໐໔໑] ທີ່ຊື່ວ່າ ເທວະດາ ໄດ້ແກ່

ເທວະດາ ໓ ຈຳພວກ ຄື

໑. ສົມມຸດຕິເທວະດາ (ເທວະດາໂດຍສົມມຸດ)
໒. ອຸບປັດຕິເທວະດາ (ເທວະດາໂດຍອຸບັດ)
໓. ວິສຸດທິເທວະດາ (ເທວະດາໂດຍຄວາມບໍລິສຸດ)

ພຣະຣາຊາ ພຣະຣາດຊະເທວີ ພຣະຣາຊະກຸມານ ຮຽກວ່າ ສົມມຸດຕິເທວະດາ
ເທວະດາເບື້ອງເທິງນັບແຕ່ເທວະດາຊັ້ນຈາຕຸມະຫາຣາດຂຶ້ນໄປຮຽກວ່າ ອຸບປັດຕິເທວະດາ
ພຣະອະຣະຫັນທັງຫຼາຍຮຽກວ່າ ວິສຸດທິເທວະດາ

ພວກມະນຸດຜູ້ໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວໄປເກີດບ່ອນໃດ?
ພວກມະນຸດໃຫ້ທານ ສະມາທານສິນ ຮັກສາອຸໂປສົດແລ້ວ ບາງພວກໄປເກີດເປັນສະຫາຍຂອງກະສັດມະຫາສານ ບາງພວກໄປເກີດເປັນສະຫາຍຂອງພາມມະຫາສານ ບາງພວກໄປເກີດເປັນສະຫາຍຂອງຄະລຶຫະບໍດີມະຫາສານ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນຈາຕຸມະຫາຣາດ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນຕາວະຕຶງສາ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນຍາມາ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນດຸສິດ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນນິມມານະຣະດີ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນປະຣະນິມມິຕະວະສະວັດຕີ

## ໘. ອາຍຸບປະມານະ

### (ປະມານອາຍຸ)

[໑໐໘໘] ອາຍຸຂອງມະນຸດ ມີປະມານເທົ່າໃດ?
ມີປະມານ ໑໐໐ ປີ ຕ່ຳກວ່ານັ້ນແດ່ ເກີນກວ່ານັ້ນແດ່ກໍມີ (໑)

[໑໐໘໙] ອາຍຸຂອງເທວະດາຊັ້ນຈາຕຸມະຫາຣາດ ມີປະມານເທົ່າໃດ?
໕໐ ປີຂອງມະນຸດ ນັບເປັນວັນໜຶ່ງຄືນໜຶ່ງຂອງເທວະດາຊັ້ນຈາຕຸມະຫາຣາດ ໓໐ ຣາຕີໂດຍຣາຕີນັ້ນເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໕໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນຈາຕຸມະຫາຣາດ
ນັບຢ່າງປີມະນຸດ ມີປະມານເທົ່າໃດ?
ມີປະມານ ໙ ລ້ານປີ (໒)

ອາຍຸຂອງເທວະດາຊັ້ນຕາວະຕຶງສາ ມີປະມານເທົ່າໃດ?
໑໐໐ ປີຂອງມະນຸດນັບເປັນວັນໜຶ່ງ ຄືນໜຶ່ງຂອງເທວະດາຊັ້ນຕາວະຕຶງສາ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໒ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໑,໐໐໐ ປີທິບໂດຍປີນັ້ນເປັນປະມານອາຍຸຂອງເທວະດາຊັ້ນຕາວະຕຶງສາ
ນັບຢ່າງປີມະນຸດ ມີປະມານເທົ່າໃດ?
ມີປະມານ ໓ ໂກດ ໖ ລ້ານປີ (໓)

ອາຍຸຂອງເທວະດາຊັ້ນຍາມາ ມີປະມານເທົ່າໃດ?

໔໐໐ ປີຂອງມະນຸດນັບເປັນວັນໜຶ່ງຄືນໜຶ່ງຂອງເທວະດາຊັ້ນຍາມາ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໔ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໔,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນຍາມາ

ນັບຢ່າງປີມະນຸດ ມີປະມານເທົ່າໃດ?

ມີປະມານ ໑໔ ໂກດ ໔ ລ້ານປີ (໔)

ອາຍຸຂອງເທວະດາຊັ້ນດຸສິດ ມີປະມານເທົ່າໃດ?

໘໐໐ ປີຂອງມະນຸດນັບເປັນວັນໜຶ່ງຄືນໜຶ່ງຂອງເທວະດາຊັ້ນດຸສິດ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໔ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໘,໐໐໐ ປີທິບໂດຍປີນັ້ນ ເປັນປະມານອາຍຸຂອງເທວະດາຊັ້ນດຸສິດ

ນັບຢ່າງປີມະນຸດ ມີປະມານເທົ່າໃດ?

ມີປະມານ ໕໗ ໂກດ ໖ ລ້ານປີ (໕)

ອາຍຸຂອງເທວະດາຊັ້ນນິມມານະຣະດີ ມີປະມານເທົ່າໃດ?

໘໐໐ ປີຂອງມະນຸດນັບເປັນວັນໜຶ່ງຄືນໜຶ່ງຂອງເທວະດາຊັ້ນນິມມານະຣະດີ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໔ ເດືອນໂດຍເດືອນນັ້ນ ເປັນ ໑ ປີ ໘,໐໐໐ ປີທິບ ໂດຍປີນັ້ນເປັນປະມານອາຍຸຂອງເທວະດາຊັ້ນນິມມານະຣະດີ

ນັບຢ່າງປີມະນຸດ ມີປະມານເທົ່າໃດ?

ມີປະມານ ໔໓໐ ໂກດ ໔ ລ້ານປີ (໖)

ອາຍຸຂອງເທວະດາຊັ້ນປະຣະນິມມິຕະວະສະວັດຕີ ມີປະມານເທົ່າໃດ?

໑,໖໐໐ ປີຂອງມະນຸດນັບເປັນວັນໜຶ່ງຄືນໜຶ່ງຂອງເທວະດາຊັ້ນປະຣະນິມມິຕະວະສະວັດຕີ ໓໐ ຣາຕີໂດຍຣາຕີນັ້ນ ເປັນ ໑ ເດືອນ ໑໔ ເດືອນໂດຍເດືອນນັ້ນເປັນ ໑ ປີ ໑໖,໐໐໐ ປີທິບເປັນປະມານອາຍຸຂອງເທວະດາຊັ້ນປະຣະນິມມິຕະວະສະວັດຕີ

ນັບຢ່າງປີມະນຸດ ມີປະມານເທົ່າໃດ?

ມີປະມານ ໙໔໑ ໂກດ ໖ ລ້ານປີ (໗)

ເທວະດາຊັ້ນກາມາວະຈອນສະຫວັນ ໖ ຊັ້ນພຽບພ້ອມດ້ວຍກາມມະຄຸນທຸກຢ່າງ

ອາຍຸຂອງເທວະດາຊັ້ນກາມາວະຈອນສະຫວັນ ໖ ຊັ້ນ ນັບລວມກັນທັງໝົດເປັນເທົ່າໃດ?

ເປັນ ໑,໔໔໘ ໂກດ ໕ ລ້ານປີ ໂດຍນັບຢ່າງປີຂອງມະນຸດ

[໑໐໘໔] ບຸກຄົນຈະເລີນປະຖົມຊານໄດ້ຢ່າງສາມັນ ໄປເກີດບ່ອນໃດ?

ບຸກຄົນຈະເລີນປະຖົມຊານໄດ້ຢ່າງສາມັນແລ້ວ ໄປເກີດເປັນສະຫາຍຂອງເທວະດາຊັ້ນພົມປາຣິສັດຊາ

ອາຍຸຂອງເທວະດາ ເຫຼົ່ານັ້ນມີປະມານເທົ່າໃດ?

ມີປະມານເທົ່າສ່ວນທີ ໓ ແຫ່ງກັບ (໙)

ບຸກຄົນຈະເລີນປະຖົມຊານໄດ້ຢ່າງກາງ ໄປເກີດບ່ອນໃດ?

ໄປເກີດເປັນສະຫາຍຂອງເທວະດາຊັ້ນພົມປຸໂຣຫິຕາ

ອາຍຸຂອງເທວະດາ ເຫຼົ່ານັ້ນມີປະມານເທົ່າໃດ?

ມີປະມານເຄິ່ງກັບ (໙)

ບຸກຄົນຈະເລີນປະຖົມຊານໄດ້ຢ່າງປະນີດ ໄປເກີດບ່ອນໃດ?

ບຸກຄົນຈະເລີນປະຖົມຊານໄດ້ຢ່າງປະນີດແລ້ວ ໄປເກີດເປັນສະຫາຍຂອງເທວະດາຊັ້ນມະຫາພົມ

ອາຍຸຂອງເທວະດາ ເຫຼົ່ານັ້ນມີປະມານເທົ່າໃດ?

ມີປະມານ ໑ ກັບ (໑໐)

[໑໐໘໕] ບຸກຄົນຈະເລີນທຸຕິຍະຊານໄດ້ຢ່າງສາມັນ ໄປເກີດບ່ອນໃດ?

ບຸກຄົນຜູ້ຈະເລີນທຸຕິຍະຊານໄດ້ຢ່າງສາມັນແລ້ວ ໄປເກີດເປັນສະຫາຍຂອງເທວະດາຊັ້ນປະຣິດຕາພາ

ອາຍຸຂອງເທວະດາ ເຫຼົ່ານັ້ນມີປະມານເທົ່າໃດ?

ມີປະມານ ໒ ກັບ (໑໑)

ບຸກຄົນຈະເລີນທຸຕິຍະຊານໄດ້ຢ່າງກາງ ໄປເກີດບ່ອນໃດ?

ບຸກຄົນຈະເລີນທຸຕິຍະຊານໄດ້ຢ່າງກາງແລ້ວ ໄປເກີດເປັນສະຫາຍຂອງເທວະດາຊັ້ນ ອັບປະມານາພາ

ອາຍຸຂອງເທວະດາ ເຫຼົ່ານັ້ນມີປະມານເທົ່າໃດ?

ມີປະມານ ໔ ກັບ (໑໒)

ບຸກຄົນຈະເລີນທຸຕິຍະຊານໄດ້ຢ່າງປະນີດ ໄປເກີດບ່ອນໃດ?

ບຸກຄົນຈະເລີນທຸຕິຍະຊານໄດ້ຢ່າງປະນີດແລ້ວໄປເກີດເປັນສະຫາຍຂອງເທວະດາຊັ້ນອາພັດສະຣາ

ອາຍຸຂອງເທວະດາ ເຫຼົ່ານັ້ນມີປະມານເທົ່າໃດ?

ມີປະມານ ໘ ກັບ (໑໓)

[໑໐໘໖] ບຸກຄົນຈະເລີນຕະຕິຍະຊານໄດ້ຢ່າງສາມັນ ໄປເກີດບ່ອນໃດ?

ບຸກຄົນຈະເລີນຕະຕິຍະຊານໄດ້ຢ່າງສາມັນແລ້ວ ໄປເກີດເປັນສະຫາຍຂອງເທວະດາຊັ້ນປະຣິດຕະສຸພາ

ອາຍຸຂອງເທວະດາ ເຫຼົ່ານັ້ນມີປະມານເທົ່າໃດ?

ມີປະມານ ໑໖ ກັບ (໑໔)

ບຸກຄົນຈະເລີນຕະຕິຍະຊານໄດ້ຢ່າງກາງ ໄປເກີດບ່ອນໃດ?

ບຸກຄົນຈະເລີນຕະຕິຍະຊານໄດ້ຢ່າງກາງ ໄປເກີດເປັນສະຫາຍຂອງເທວະດາຊັ້ນອັບປະມານະສຸພາ

ອາຍຸຂອງເທວະດາ ເຫຼົ່ານັ້ນມີປະມານເທົ່າໃດ?

ມີປະມານ ໓໒ ກັບ (໑໕)

ບຸກຄົນຈະເລີນຕະຕິຍະຊານໄດ້ຢ່າງປະນີດ ໄປເກີດບ່ອນໃດ?

ບຸກຄົນຈະເລີນຕະຕິຍະຊານໄດ້ຢ່າງປະນີດແລ້ວ ໄປເກີດເປັນສະຫາຍຂອງເທວະດາຊັ້ນສຸພະກິນຫາ

ອາຍຸຂອງເທວະດາ ເຫຼົ່ານັ້ນມີປະມານເທົ່າໃດ?

ມີປະມານ ໖໔ ກັບ (໑໖)

[໑໐໘໗] ບຸກຄົນຈະເລີນຈະຕຸດຖະຊານແລ້ວ ບາງພວກໄປເກີດເປັນສະຫາຍຂອງອະສັນຍະສັດຕະ ເທວະດາບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນເວຫັບຜະລາ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນອະວິຫາ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນອະຕັບປາ ບາງພວກໄປເກີດ ເປັນສະຫາຍຂອງເທວະດາຊັ້ນສຸທັດສາ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນສຸທັດສີ ບາງພວກໄປເກີດເປັນສະຫາຍຂອງເທວະດາຊັ້ນອະກະນິດຖາ ບາງພວກໄປເກີດເປັນສະຫາຍຂອງເທວະດາຜູ້ເຂົ້າເຖິງອາກາສານັນຈາຍະຕະນະພົບ ບາງພວກໄປເກີດເປັນສະຫາຍຂອງເທວະດາຜູ້ເຂົ້າເຖິງວິນຍານັນຈາຍະຕະນະພົບ ບາງພວກໄປເກີດເປັນສະຫາຍຂອງເທວະດາຜູ້ເຂົ້າເຖິງອາກິນຈັນຍາຍະຕະນະພົບ ບາງພວກໄປເກີດເປັນສະຫາຍຂອງເທວະດາຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພົບ ຍ້ອນມີອາລົມຕ່າງກັນ ຍ້ອນມີມະນະສິການຕ່າງກັນ ຍ້ອນມີສັນທະຕ່າງກັນ ຍ້ອນມີປະນິທານຕ່າງກັນ ຍ້ອນມີອະທິໂມກຕ່າງກັນ ຍ້ອນມີອະພິນິຫານຕ່າງກັນ ຍ້ອນມີປັນຍາຕ່າງກັນອາຍຸຂອງອະສັນຍະສັດຕະເທວະດາ ແລະເທວະດາຊັ້ນເວຫັບຜະລາ ມີປະມານເທົ່າໃດ?

ມີປະມານ ໕໐໐ ກັບ (໑໗-໑໘)

ອາຍຸຂອງເທວະດາຊັ້ນອະວິຫາ ມີປະມານເທົ່າໃດ?

ມີປະມານ ໑,໐໐໐ ກັບ (໑໙)
ອາຍຸຂອງເທວະດາຊັ້ນອະຕັບປາ ມີປະມານເທົ່າໃດ?
ມີປະມານ ໒,໐໐໐ ກັບ (໒໐)
ອາຍຸຂອງເທວະດາຊັ້ນສຸທັດສາ ມີປະມານເທົ່າໃດ?
ມີປະມານ ໔,໐໐໐ ກັບ (໒໑)
ອາຍຸຂອງເທວະດາຊັ້ນສຸທັດສີ ມີປະມານເທົ່າໃດ?
ມີປະມານ ໗,໐໐໐ ກັບ (໒໒)
ອາຍຸຂອງເທວະດາຊັ້ນອະກະນິດຖາ ມີປະມານເທົ່າໃດ?
ມີປະມານ ໑໖,໐໐໐ ກັບ (໒໓)

[໑໐໒໗] ອາຍຸຂອງເທວະດາຜູ້ເຂົ້າເຖິງອາກາສານັນຈາຍະຕະນະພົບ ມີປະມານເທົ່າໃດ?
ມີປະມານ ໒໐,໐໐໐ ກັບ (໒໔)
ອາຍຸຂອງເທວະດາຜູ້ເຂົ້າເຖິງວິນຍານັນຈາຍະຕະນະພົບ ມີປະມານເທົ່າໃດ?
ມີປະມານ ໔໐,໐໐໐ ກັບ (໒໕)
ອາຍຸຂອງເທວະດາຜູ້ເຂົ້າເຖິງອາກິນຈັນຍາຍະຕະນະພົບ ມີປະມານເທົ່າໃດ?
ມີປະມານ ໖໐,໐໐໐ ກັບ (໒໖)
ອາຍຸຂອງເທວະດາຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພົບ ມີປະມານເທົ່າໃດ?
ມີປະມານ ໘໔,໐໐໐ ກັບ (໒໗)

[໑໐໒໙] ເຫຼົ່າສັດຜູ້ອັນອຳນາດແຫ່ງບຸນສົ່ງເສີມແລ້ວ
ໄປສູ່ກາມະພົບແລະຣູບພົບຫຼືໄປເຖິງພະວັກຄະພົມແດ່
ແຕ່ຍັງກັບໄປສູ່ທຸກຄະຕິພູມໄດ້ອີກ
ເຫຼົ່າສັດທີ່ມີອາຍຸຍືນເຖິງພຽງນັ້ນກໍຍັງຈຸຕິໄດ້ຍ້ອນໝົດອາຍຸ

ບໍ່ວ່າພົບໃດ ໆ ທີ່ຊື່ວ່າທ່ຽງບໍ່ມີ ພຣະຜູ້ມີພຣະພາກເຈົ້າຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ ໄດ້ຕັດໄວ້ແລ້ວແນວນີ້

ຍ້ອນແນວນັ້ນແລ ເຫຼົ່ານັກປາດຜູ້ມີປັນຍາສະຫຼຽວສະຫຼາດຮອບຄອບຄຳນຶງເຖິງຄວາມຈິງຂໍ້ນີ້ ຈຶ່ງຈະເລີນມັກອັນສູງສຸດ ເພື່ອພົ້ນຈາກຊະຣາມໍຣະນະ

ເມື່ອຈະເລີນມັກທີ່ບໍລິສຸດສະອາດເຊິ່ງມີປົກກະຕິຍັງສັດໃຫ້ຢັ່ງເຖິງນິບພານແລ້ວ ຈຶ່ງເປັນຜູ້ປາສະຈາກອາສະວະ ປະຣິນິບພານຍ້ອນກຳນົດຮູ້ອາສະວະທັງປວງຢ່າງນີ້ແລ

## ໗. ອະພິນເຍີຍຍາທິວາຣະ

## (ວາຣະວ່າດ້ວຍທຳທີ່ເພິ່ງຮູ້ຍິ່ງເປັນຕົ້ນ)

[໑໐໖໐] ບັນດາຂັນ ໕ ຂັນເທົ່າໃດ? ເພິ່ງຮູ້ຍິ່ງ ເທົ່າໃດເພິ່ງກຳນົດຮູ້ ເທົ່າໃດເພິ່ງລະ ເທົ່າໃດເພິ່ງຈະເລີນ ເທົ່າໃດເພິ່ງເຮັດໃຫ້ແຈ້ງ ເທົ່າໃດບໍ່ເພິ່ງລະ ເທົ່າໃດບໍ່ເພິ່ງຈະເລີນ ເທົ່າໃດບໍ່ເພິ່ງເຮັດໃຫ້ແຈ້ງ ຯລຯ ບັນດາຈິດ ໗ ຈິດເທົ່າໃດ? ເພິ່ງຮູ້ຍິ່ງ ເທົ່າໃດເພິ່ງກຳນົດຮູ້ ເທົ່າໃດເພິ່ງລະ ເທົ່າໃດເພິ່ງຈະເລີນ ເທົ່າໃດເພິ່ງເຮັດໃຫ້ແຈ້ງ ເທົ່າໃດບໍ່ເພິ່ງລະ ເທົ່າໃດບໍ່ເພິ່ງຈະເລີນ ເທົ່າໃດບໍ່ເພິ່ງເຮັດໃຫ້ແຈ້ງ

[໑໐໖໑] ຮູບຂັນເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງ ຂັນ ໔ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ທີ່ເພິ່ງລະກໍມີ ທີ່ເພິ່ງຈະເລີນກໍມີ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ ທີ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງກໍມີ (໑)

ອາຍະຕະນະ ໑໐ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງອາຍະຕະນະ ໒ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ທີ່ເພິ່ງລະກໍມີ ທີ່ເພິ່ງຈະເລີນກໍມີ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ ທີ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງກໍມີ (໒)

ທາດ ໑໖ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງທາດ ໒ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ທີ່ເພິ່ງລະກໍມີ ທີ່ເພິ່ງຈະເລີນກໍມີ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ ທີ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງກໍມີ (໓)

ສະມຸທະຍະສັດເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ເພິ່ງລະ ແຕ່ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງ ມັກຄະສັດເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ເພິ່ງຈະເລີນ ແຕ່ບໍ່ເພິ່ງເຮັດໃຫ້ແຈ້ງນິໂຣທະສັດ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ແຕ່ເພິ່ງເຮັດໃຫ້ແຈ້ງທຸກຂະສັດເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ທີ່ເພິ່ງລະ ແຕ່ບໍ່ເພິ່ງຈະເລີນກໍມີ ທີ່ບໍ່ເພິ່ງເຮັດໃຫ້ແຈ້ງ ແລະບໍ່ເພິ່ງລະກໍມີ (໔)

ອິນຊີ ໙ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງໂທມະນັດສິນຊີເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ເພິ່ງລະ ແຕ່ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງອະນັນຍາຕັນຍັດສາມິຕິນຊີເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ເພິ່ງຈະເລີນ ແຕ່ບໍ່ເພິ່ງເຮັດໃຫ້ແຈ້ງອັນຍິນຊີ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ທີ່ເພິ່ງຈະເລີນກໍມີ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ

ອັນຍາຕາວິນຊີເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ແຕ່ເພິ່ງເຮັດໃຫ້ແຈ້ງອິນຊີ ໖ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ທີ່ເພິ່ງຈະເລີນກໍມີ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ ທີ່ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງກໍມີ

ອິນຊີ ໖ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ທີ່ເພິ່ງລະກໍມີ ທີ່ເພິ່ງຈະເລີນກໍມີ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ ທີ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງກໍມີ (໕)

ອະກຸສົນເຫດ ໓ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ເພິ່ງລະ ແຕ່ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງ ກຸສົນເຫດ ໓ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ບໍ່ເພິ່ງລະ ທີ່ເພິ່ງຈະເລີນກໍມີ ທີ່ບໍ່ເພິ່ງເຮັດໃຫ້ແຈ້ງ ແລະບໍ່ເພິ່ງຈະເລີນກໍມີ

ອັບພະຍາກະຕະເຫດ ໓ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ ທີ່ບໍ່ເພິ່ງເຮັດໃຫ້ແຈ້ງກໍມີ (໖)

ກະວະລິງກາຣາຫານເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງອາຫານ ໓ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ທີ່ເພິ່ງລະກໍມີ ທີ່ເພິ່ງຈະເລີນກໍມີ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ ທີ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງກໍມີ (໗)

ຜັດສະ ໖ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງມະໂນວິນຍານທາດສຳຜັດເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ທີ່ເພິ່ງລະກໍມີ ທີ່ເພິ່ງຈະເລີນກໍມີ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ ທີ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງກໍມີ (໘)

ເວທະນາ ໖ ຯລຯ ສັນຍາ ໖ ຯລຯ ເຈຕະນາ ໖ ຯລຯ ຈິດ ໖ ເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ແຕ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງມະໂນວິນຍານທາດເພິ່ງຮູ້ຍິ່ງ ເພິ່ງກຳນົດຮູ້ ທີ່ເພິ່ງລະກໍມີ ທີ່ເພິ່ງຈະເລີນກໍມີ ທີ່ເພິ່ງເຮັດໃຫ້ແຈ້ງກໍມີ ທີ່ບໍ່ເພິ່ງລະ ບໍ່ເພິ່ງຈະເລີນ ບໍ່ເພິ່ງເຮັດໃຫ້ແຈ້ງກໍມີ (໙-໑໒)

## ໗. ສາຣຳມະນານາຣຳມະນະວາຣະ

## (ວາຣະວ່າດ້ວຍທຳທີ່ຮັບຮູ້ອາລົມໄດ້ແລະບໍ່ໄດ້)

[໑໐໓໒] ບັນດາຂັນ ໕ ຂັນເທົ່າໃດ? ຮັບຮູ້ອາລົມໄດ້ ເທົ່າໃດຮັບຮູ້ອາລົມບໍ່ໄດ້ ຯລຯ ບັນດາຈິດ ໗ ຈິດເທົ່າໃດ? ຮັບຮູ້ອາລົມໄດ້ ເທົ່າໃດຮັບຮູ້ອາລົມບໍ່ໄດ້

[໑໐໓໓] ຮູບຂັນຮັບຮູ້ອາລົມບໍ່ໄດ້ ຂັນ ໔ ຮັບຮູ້ອາລົມໄດ້ (໑)

ອາຍະຕະນະ ໑໐ ຮັບຮູ້ອາລົມບໍ່ໄດ້ ມະນາຍະຕະນະຮັບຮູ້ອາລົມໄດ້ ທຳມາຍະຕະນະທີ່ຮັບຮູ້ອາລົມໄດ້ກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ (໒)

ທາດ ໑໐ ຮັບຮູ້ອາລົມບໍ່ໄດ້ ທາດ ໗ ຮັບຮູ້ອາລົມໄດ້ ທຳມະທາດທີ່ຮັບຮູ້ອາລົມໄດ້ກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ (໓)

ສັດຈະ ໘ ຮັບຮູ້ອາລົມໄດ້ ນິໂຣທະສັດຮັບຮູ້ອາລົມບໍ່ໄດ້ ທຸກຂະສັດທີ່ຮັບຮູ້ອາລົມໄດ້ກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ (໔)

ອິນຊີ ໗ ຮັບຮູ້ອາລົມບໍ່ໄດ້ ອິນຊີ ໑໔ ຮັບຮູ້ອາລົມໄດ້ ຊີວິຕິນຊີທີ່ຮັບຮູ້ອາລົມໄດ້ກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ ເຫດ ໙ ຮັບຮູ້ອາລົມໄດ້ ກະວະລິງກາຣາຫານຮັບຮູ້ອາລົມບໍ່ໄດ້ ອາຫານ ໓ ຮັບຮູ້ອາລົມໄດ້ ຜັດສະ ໗ ເວທະນາ ໗ ສັນຍາ ໗ ເຈຕະນາ ໗ ແລະຈິດ ໗ ຮັບຮູ້ອາລົມໄດ້ (໕-໑໘)

[໑໐໓໔] ບັນດາຂັນ ໕ ຂັນເທົ່າໃດ? ມີທຳທີ່ຮັບຮູ້ອາລົມໄດ້ເປັນອາລົມເທົ່າໃດມີທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມ ເທົ່າໃດທີ່ຮັບຮູ້ອາລົມບໍ່ໄດ້ ຯລຯ ບັນດາຈິດ ໗ ຈິດເທົ່າໃດ? ມີທຳທີ່ຮັບຮູ້ອາລົມໄດ້ເປັນອາລົມ ເທົ່າໃດມີທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມ ເທົ່າໃດຮັບຮູ້ອາລົມບໍ່ໄດ້

[໑໐໓໕] ຮູບຂັນຮັບຮູ້ອາລົມບໍ່ໄດ້ ຂັນ ໔ ທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ (໑)

ອາຍະຕະນະ ໑໐ ຮັບຮູ້ອາລົມບໍ່ໄດ້ ມະນາຍະຕະນະທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ ທຳມາຍະຕະນະມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ (໒)

ທາດ ໑໐ ຮັບຮູ້ອາລົມບໍ່ໄດ້ ທາດ ໖ ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມ ມະໂນວິນຍານທາດທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ ທຳມະທາດທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ (໓)

ນິໂຣທະສັດຮັບຮູ້ອາລົມບໍ່ໄດ້ ມັກຄະສັດມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມ ສະມຸທະຍະສັດທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ ທຸກຂະສັດທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ (໔)

ອິນຊີ ໗ ຮັບຮູ້ອາລົມບໍ່ໄດ້ ອິນຊີ ໕ ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມ ອິນຊີ ໙ ທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ ຊີວິຕິນຊີມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ ທີ່ຮັບຮູ້ອາລົມບໍ່ໄດ້ກໍມີ (໕)

ເຫດ ໙ ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ

ກະວະລິງກາຣາຫານຮັບຮູ້ອາລົມບໍ່ໄດ້ ອາຫານ ໓ ທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ

ຜັດສະ ໖ ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມ ມະໂນວິນຍານທາດສຳຜັດ ທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ

ເວທະນາ ໖ ສັນຍາ ໖ ເຈຕະນາ ໖ ແລະຈິດ ໖ ມີສະພາວະທຳຮັບຮູ້ອາລົມບໍ່ໄດ້ເປັນອາລົມ ມະໂນວິນຍານທາດທີ່ມີສະພາວະທຳທີ່ຮັບຮູ້ອາລົມໄດ້ເປັນອາລົມກໍມີ ທີ່ມີສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ເປັນອາລົມກໍມີ (໖-໑໘)

## ໙. ທິດຖະສຸຕາທິທັດສະນະວາຣະ

## (ວາຣະວ່າດ້ວຍການສະແດງສະພາວະທຳທີ່ເຫັນໄດ້ແລະສະດັບໄດ້ເປັນຕົ້ນ)

[໑໐໓໖] ບັນດາຂັນ ໕ ຂັນເທົ່າໃດ? ເປັນສະພາວະທຳທີ່ເຫັນໄດ້ ເທົ່າໃດເປັນສະພາວະທຳທີ່ຟັງໄດ້ ເທົ່າໃດເປັນສະພາວະທຳທີ່ຮູ້ໄດ້ ເທົ່າໃດເປັນສະພາວະທຳທີ່ເຂົ້າໃຈໄດ້ ເທົ່າໃດເປັນສະພາວະທຳທີ່ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແລະເຂົ້າໃຈບໍ່ໄດ້ ໗ລ໗ ບັນດາຈິດ ໆ

ຈິດເທົ່າໃດ? ເປັນສະພາວະທຳທີ່ເຫັນໄດ້ ເທົ່າໃດເປັນສະພາວະທຳທີ່ຟັງໄດ້ ເທົ່າໃດເປັນສະພາວະທຳ ທີ່ຮູ້ໄດ້ ເທົ່າໃດເປັນສະພາວະທຳທີ່ເຂົ້າໃຈໄດ້ ເທົ່າໃດເປັນສະພາວະທຳທີ່ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແລະເຂົ້າໃຈບໍ່ໄດ້

[໑໐໓໗] ຮູບຂັນທີ່ເຫັນໄດ້ກໍມີ ທີ່ຟັງໄດ້ກໍມີ ທີ່ຮູ້ໄດ້ກໍມີ ທີ່ເຂົ້າໃຈໄດ້ກໍມີ ທີ່ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແລະເຂົ້າໃຈບໍ່ໄດ້ກໍມີ ຂັນ ໔ ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້

ຮູປາຍະຕະນະ ເຫັນໄດ້ ແຕ່ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້ ສັດທາຍະຕະນະ ເຫັນບໍ່ໄດ້ ແຕ່ຟັງໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະ ເຫັນບໍ່ໄດ້ ຟັງບໍ່ໄດ້ ແຕ່ຮູ້ໄດ້ ເຂົ້າໃຈໄດ້ ອາຍະຕະນະ ໆ ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້

ຮູບທາດ ເຫັນໄດ້ ແຕ່ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້ ສັດທະທາດ ເຫັນບໍ່ໄດ້ ແຕ່ຟັງໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້ ຄັນທະທາດ ຣະສະທາດແລະໂຜດຖັບພະທາດ ເຫັນບໍ່ໄດ້ ຟັງບໍ່ໄດ້ ແຕ່ຮູ້ໄດ້ ເຂົ້າໃຈໄດ້ ທາດ ໑໓ ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້

ສັດຈະ ໒ ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້ ທຸກຂະສັດ ທີ່ເຫັນໄດ້ກໍມີ ທີ່ຟັງໄດ້ກໍມີ ທີ່ຮູ້ໄດ້ກໍມີ ທີ່ເຂົ້າໃຈໄດ້ກໍມີ ທີ່ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້ກໍມີ

ອິນຊີ ໒໒ ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້

ເຫດ ໙ ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້

ອາຫານ ໔ ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້

ຜັດສະ ໆ ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້

ເວທະນາ ໆ ສັນຍາ ໆ ເຈຕະນາ ໆ ແລະຈິດ ໆ ເຫັນບໍ່ໄດ້ ຟັງບໍ່ໄດ້ ຮູ້ບໍ່ໄດ້ ແຕ່ເຂົ້າໃຈໄດ້

## ໑໐. ຕິກາທິທັດສະນະວາຣະ

## (ວາຣະວ່າດ້ວຍການສະແດງລວບລວມຕິກະມາຕິກາເປັນຕົ້ນ)

### ໑. ກຸສະລະຕິກະ

[໑໐໒໗] ບັນດາຂັນ ໕ ຂັນເທົ່າໃດ? ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນ ອັບພະຍາກະຕະ ໗໒໗ ບັນດາຈິດ ໆ ຈິດເທົ່າໃດ? ເປັນກຸສົນ ເທົ່າໃດເປັນອະກຸສົນ ເທົ່າໃດເປັນອັບພະຍາກະຕະ

ຮູບຂັນເປັນອັບພະຍາກະຕະ ຂັນ ໔ ທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ອາຍະຕະນະ ໑໐ ເປັນອັບພະຍາກະຕະ ອາຍະຕະນະ ໒ ທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ທາດ ໑໖ ເປັນອັບພະຍາກະຕະ ທາດ ໒ ທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ສະມຸທະຍະສັດເປັນອະກຸສົນ ມັກຄະສັດເປັນກຸສົນ ນິໂຣທະສັດເປັນອັບພະຍາກະຕະ ທຸກຂະສັດທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ອິນຊີ ໑໐ ເປັນອັບພະຍາກະຕະ ໂທມະນັດສິນຊີເປັນອະກຸສົນ ອະນັນຍາຕັນຍັດສາມິຕິນຊີເປັນກຸສົນ ອິນຊີ ໔ ທີ່ເປັນກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ ອິນຊີ ໖ ທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ກຸສົນເຫດ ໓ ເປັນກຸສົນ ອະກຸສົນເຫດ ໓ ເປັນອະກຸສົນ ອັບພະຍາກະຕະເຫດ ໓ ເປັນອັບພະຍາກະຕະ

ກະວະລິງການຣາຫານເປັນອັບພະຍາກະຕະ ອາຫານ ໓ ທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ຜັດສະ ໖ ເປັນອັບພະຍາກະຕະ ມະໂນວິນຍານທາດສຳຜັດທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

ເວທະນາ ໖ ສັນຍາ ໖ ເຈຕະນາ ໖ ແລະຈິດ ໖ ເປັນອັບພະຍາກະຕະ ມະໂນວິນຍານທາດ ທີ່ເປັນກຸສົນກໍມີ ທີ່ເປັນອະກຸສົນກໍມີ ທີ່ເປັນອັບພະຍາກະຕະກໍມີ

## ໔. ເວທະນາຕິກະ

[໑໐໘໗] ບັນດາຂັນ ໕ ຂັນເທົ່າໃດ? ສຳປະຍຸດດ້ວຍສຸກຂະເວທະນາ ເທົ່າໃດສຳປະຍຸດດ້ວຍທຸກຂະເວທະນາ ເທົ່າໃດສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຯລຯ ບັນດາຈິດ ໆ ຈິດເທົ່າໃດ? ສຳປະຍຸດດ້ວຍສຸກຂະເວທະນາ ເທົ່າໃດສຳປະຍຸດດ້ວຍທຸກຂະເວທະນາ ເທົ່າໃດສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ

ຂັນ ໔ ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ຂັນ ໓ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍ ທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ (໑)

ອາຍະຕະນະ ໑໐ ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ມະນາຍະຕະນະທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດ ດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທຳມາຍະຕະນະທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ (໔)

ທາດ ໑໐ ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ທາດ ໕ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ກາຍະວິນຍານ ທາດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ມະໂນວິນຍານທາດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທຳມະທາດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ (໓)

ສັດຈະ ໔ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ນິໂຣທະສັດກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວ

ທະນາ ຫຼື ສຳປະຍຸດ ດ້ວຍອະທຸກຂະມະສຸຂະເວທະນາ ທຸກຂະສັດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ (໔)

ອິນຊີ ໑໔ ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ອິນຊີ ໒ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ອິນຊີ ໓ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ຊີວິຕິນຊີທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸກຂະເວທະນາກໍມີ ທີ່ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ກໍມີ (໕)

ອະກຸສົນເຫດຄືໂທສະສຳປະຍຸດດ້ວຍທຸກຂະເວທະນາ ເຫດ ໗ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ ອະກຸສົນເຫດຄືໂມຫະທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ (໖)

ກະວະລິງການຣາຫານກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼືສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ອາຫານ ໓ ທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ (໗)

ຜັດສະ ໕ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ກາຍະວິນຍານທາດສຳຜັດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ມະໂນວິນຍານທາດສຳຜັດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາກໍມີ (໘)

ເວທະນາ ໗ ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ

ສັນຍາ ໕ ເຈຕະນາ ໕ ແລະຈິດ ໕ ສຳປະຍຸດດ້ວຍ ອະທຸກຂະມະສຸຂະເວທະນາ ກາຍະວິນຍານທາດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ມະ

ໂນວິນຍານທາດທີ່ສຳປະຍຸດດ້ວຍສຸກຂະເວທະນາກໍມີ ທີ່ສຳປະຍຸດດ້ວຍທຸກຂະເວທະນາກໍມີ ທີ່ສຳປະຍຸດ ດ້ວຍອະທຸກຂະມະສຸຂະເວທະນາກໍມີ (໗-໑໘)

## ໓. ວິປາກະຕິກະ

[໑໐໔໐] ບັນດາຂັນ ໕ ຂັນເທົ່າໃດ? ເປັນວິບາກ ເທົ່າໃດເປັນເຫດໃຫ້ເກີດວິບາກ ເທົ່າໃດບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ฯລฯ ບັນດາຈິດ ໆ ຈິດເທົ່າໃດ? ເປັນວິບາກ ເທົ່າໃດເປັນເຫດໃຫ້ເກີດວິບາກ ເທົ່າໃດບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກ

ຮູບຂັນບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກ ຂັນ ໔ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ (໑)

ອາຍະຕະນະ ໑໐ ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ອາຍະຕະນະ ໒ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ (໒)

ທາດ ໑໐ ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ທາດ ໕ ເປັນວິບາກ ມະໂນທາດທີ່ເປັນວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ ທາດ ໒ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ (໓)

ສັດຈະ ໒ ເປັນເຫດໃຫ້ເກີດວິບາກ ນິໂຣທະສັດບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ທຸກຂະສັດທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ (໔)

ອິນຊີ ໆ ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ອິນຊີ ໓ ເປັນວິບາກ ອິນຊີ ໒ ເປັນເຫດໃຫ້ເກີດວິບາກ ອັນຍິນຊີທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ອິນຊີ ໗ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ (໕)

ເຫດ ໖ ເປັນເຫດໃຫ້ເກີດວິບາກ ອັບພະຍາກະຕະເຫດ ໓ ທີ່ເປັນວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ (໖)

ກະວະລິງກາຣາຫານບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ອາຫານ ໓ ທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

ຜັດສະ ໕ ເປັນວິບາກ ມະໂນທາດສຳຜັດທີ່ເປັນວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ ມະໂນວິນຍານທາດສຳຜັດທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

ເວທະນາ ໕ ສັນຍາ ໕ ເຈຕະນາ ໕ ແລະຈິດ ໕ ເປັນວິບາກ ມະໂນທາດທີ່ເປັນວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ

ມະໂນວິນຍານທາດທີ່ເປັນວິບາກກໍມີ ທີ່ເປັນເຫດໃຫ້ເກີດວິບາກກໍມີ ທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກກໍມີ (໗-໑໘)

## ໔. ອຸປາທິນນະຕິກະ

[໑໐໔໑] ບັນດາຂັນ ໕ ຂັນເທົ່າໃດ? ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານ ເທົ່າໃດທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ເທົ່າໃດທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານ ຯລຯ

ບັນດາຈິດ ໗ ຈິດເທົ່າໃດ? ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານ ເທົ່າໃດທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເທົ່າໃດ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ແລະບໍ່ເປັນອາລົມຂອງອຸປາທານ

ຮູບຂັນທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ຂັນ ໔ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ (໑)

ອາຍະຕະນະ ໕ ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານ ສັດທາຍະຕະນະກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ອາຍະຕະນະ ໔ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ອາຍະຕະນະ ໔ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ (໔)

ທາດ ໑໐ ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານ ສັດທະທາດກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ທາດ ໕ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນ

ປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທາດ ໔ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ (໓)

ສະມຸທະຍະສັດ ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ສັດຈະ ໔ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານທຸກຂະສັດທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖື ແລະເປັນອາລົມຂອງອຸປາ ທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ (໔)

ອິນຊີ ໗ ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານ ໂທມະນັດສິນຊີກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ອິນຊີ ໓ ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ແລະບໍ່ເປັນອາລົມຂອງອຸປາທານ ອິນຊີ ໗ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ

ອະກຸສົນເຫດ ໓ ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ກຸສົນເຫດ ໓ ທີ່ກໍາອັນປະກອບດ້ວຍຕັນຫາທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີອັບພະຍາກະຕະເຫດ ໓ ທີ່ກໍາອັນປະກອບດ້ວຍຕັນຫາແລະ ທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ (໕)

ກະວະລິງກາຣາຫານທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ອາຫານ ໓ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ (໖)

ຜັດສະ ໕ ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານ ມະໂນທາດສໍາຜັດທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ ເປັນອາລົມຂອງອຸປາທານກໍມີມະໂນວິນຍານທາດສໍາຜັດທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍ

ມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ

ເວທະນາ ໕ ສັນຍາ ໕ ເຈຕະນາ ໕ ແລະຈິດ ໕ ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖືແລະເປັນອາລົມຂອງອຸປາທານ ມະໂນທາດທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ມະໂນວິນຍານທາດທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖືແລະເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານກໍມີ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແລະບໍ່ເປັນອາລົມຂອງອຸປາທານກໍມີ (ກ-໑໘)

## ໕. ວິຕັກກະຕິກະ

[໑໐໕໘] ບັນດາຂັນ ໕ ຂັນເທົ່າໃດ?ມີທັງວິຕົກແລະວິຈານ ເທົ່າໃດບໍ່ມີວິຕົກມີພຽງວິຈານ ເທົ່າໃດບໍ່ມີທັງວິຕົກແລະວິຈານ ໗ລ໗ ບັນດາຈິດ ກ ຈິດເທົ່າໃດ? ມີທັງວິຕົກແລະວິຈານ ເທົ່າໃດບໍ່ມີວິຕົກມີພຽງວິຈານ ເທົ່າໃດບໍ່ມີທັງວິຕົກແລະວິຈານ

ຮູບຂັນ ບໍ່ມີທັງວິຕົກແລະວິຈານ ຂັນ ໓ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ສັງຂານຂັນທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທີ່ກ່າວບໍ່ໄດ້ວ່າ ມີທັງວິຕົກແລະວິຈານບໍ່ມີວິຕົກມີພຽງວິຈານ ຫຼື ບໍ່ມີທັງວິຕົກແລະວິຈານກໍມີ (໑)

ອາຍະຕະນະ ໑໐ ບໍ່ມີທັງວິຕົກແລະວິຈານ ມະນາຍະຕະນະທີ່ມີທັງວິຕົກແລະວິຈານ ກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທຳມາຍະຕະນະທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທີ່ກ່າວບໍ່ໄດ້ວ່າມີທັງວິຕົກແລະວິຈານ ບໍ່ມີວິຕົກມີພຽງວິຈານ ຫຼື ບໍ່ມີທັງວິຕົກແລະວິຈານກໍມີ (໘)

ທາດ ໑໕ ບໍ່ມີທັງວິຕົກແລະວິຈານ ມະໂນທາດມີທັງວິຕົກແລະວິຈານ ມະໂນວິນຍານທາດທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທຳມະທາດທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທີ່ກ່າວບໍ່ໄດ້ວ່າ ມີທັງວິຕົກແລະວິຈານ ບໍ່ມີວິຕົກມີພຽງວິຈານ ຫຼື ບໍ່ມີທັງວິຕົກ ແລະວິຈານກໍມີ (໓)

ສະມຸທະຍະສັດມີທັງວິຕົກແລະວິຈານ ນິໂຣທະສັດບໍ່ມີທັງວິຕົກແລະວິຈານ ມັກຄະສັດທີ່ມີທັງວິຕົກ ແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທຸກຂະສັດທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ທີ່ກ່າວບໍ່ໄດ້ວ່າ ມີທັງວິຕົກແລະວິຈານ ບໍ່ມີວິຕົກມີພຽງວິຈານ ຫຼື ບໍ່ມີທັງວິຕົກແລະວິຈານກໍມີ (໔)

ອິນຊີ ໗ ບໍ່ມີທັງວິຕົກແລະວິຈານ ໂທມະນັດສິນຊີມີທັງວິຕົກແລະວິຈານ ອຸເປກຂິນຊີທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ ອິນຊີ ໑໑ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ (໕)

ອະກຸສົນເຫດ ໓ ມີທັງວິຕົກແລະວິຈານ ເຫດ ໖ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

ກະວະລິງກາຣາຫານບໍ່ມີທັງວິຕົກແລະວິຈານ ອາຫານ ໓ ທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ບໍ່ມີທັງວິຕົກແລະວິຈານກໍມີ

ຜັດສະ ໕ ບໍ່ມີທັງວິຕົກແລະວິຈານ ມະໂນທາດສໍາຜັດມີທັງວິຕົກແລະວິຈານ ມະໂນວິນຍານທາດສໍາຜັດທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ

ເວທະນາ ໕ ສັນຍາ ໕ ເຈຕະນາ ໕ ແລະຈິດ ໕ ບໍ່ມີທັງວິຕົກແລະວິຈານ ມະໂນທາດມີທັງວິຕົກແລະວິຈານ ມະໂນວິນຍານທາດທີ່ມີທັງວິຕົກແລະວິຈານກໍມີ ທີ່ບໍ່ມີວິຕົກມີພຽງວິຈານກໍມີ ທີ່ບໍ່ມີທັງວິຕົກແລະວິຈານກໍມີ (໖-໑໘)

## ໑. ຣູປະທຸກະ

[໑໐໔໓] ບັນດາຂັນ ໕ ຂັນເທົ່າໃດ? ເປັນຣູບ ເທົ່າໃດບໍ່ເປັນຣູບ ຯລຯ ບັນດາຈິດ ໗ ຈິດເທົ່າໃດ? ເປັນຣູບ ເທົ່າໃດ ບໍ່ເປັນຣູບ

ຣູບຂັນເປັນຣູບ ຂັນ ໔ ບໍ່ເປັນຣູບ

ອາຍະຕະນະ ໑໐ ເປັນຣູບ ມະນາຍະຕະນະບໍ່ເປັນຣູບ ທໍາມາຍະຕະນະທີ່ເປັນຣູບກໍມີ ທີ່ບໍ່ເປັນຣູບກໍມີ

ທາດ ໑໐ ເປັນຣູບ ທາດ ໗ ບໍ່ເປັນຣູບ ທໍາມະທາດທີ່ເປັນຣູບກໍມີ ທີ່ບໍ່ເປັນຣູບກໍມີ

ສັດຈະ ໓ ບໍ່ເປັນຣູບ ທຸກຂະສັດທີ່ເປັນຣູບກໍມີ ທີ່ບໍ່ເປັນຣູບກໍມີ

ອິນຊີ ໗ ເປັນຣູບ ອິນຊີ ໑໔ ບໍ່ເປັນຣູບ ຊີວິຕິນຊີທີ່ເປັນຣູບກໍມີ ທີ່ບໍ່ເປັນຣູບກໍມີ

ເຫດ ໙ ບໍ່ເປັນຣູບ

ກະວະລິງກາຣາຫານເປັນຣູບ ອາຫານ ໓ ບໍ່ເປັນຣູບ

ຜັດສະ ໗ ບໍ່ເປັນຣູບ

ເວທະນາ ໗ ສັນຍາ ໗ ເຈຕະນາ ໗ ແລະຈິດ ໗ ບໍ່ເປັນຣູບ

## ໘. ໂລກິຍະທຸກະ

[໑໐໔໔] ບັນດາຂັນ ໕ ຂັນເທົ່າໃດ? ເປັນໂລກິຍະ ເທົ່າໃດເປັນໂລກຸດຕະຣະ ບັນດາອາຍະຕະນະ ໑໒ ອາຍະຕະນະເທົ່າໃດ? ເປັນໂລກິຍະ ເທົ່າໃດເປັນໂລກຸດຕະຣະ ບັນດາທາດ ໑໘ ທາດເທົ່າໃດເປັນໂລກິຍະ ເທົ່າໃດເປັນໂລກຸດຕະຣະ

ບັນດາສັດຈະ ໔ ສັດຈະເທົ່າໃດ? ເປັນໂລກີຍະ ເທົ່າໃດເປັນໂລກຸດຕະຣະ ຯລຯ ບັນດາຈິດ ໆ ຈິດເທົ່າໃດ? ເປັນໂລກີຍະ ເທົ່າໃດເປັນໂລກຸດຕະຣະ

ຮູບຂັນເປັນໂລກີຍະ ຂັນ ໔ ທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ອາຍະຕະນະ ໑໐ ເປັນໂລກີຍະ ອາຍະຕະນະ ໒ ທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ທາດ ໑໖ ເປັນໂລກີຍະ ທາດ ໒ ທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ສັດຈະ ໒ ເປັນໂລກີຍະ ສັດຈະ ໒ ເປັນໂລກຸດຕະຣະ

ອິນຊີ ໑໐ ເປັນໂລກີຍະ ອິນຊີ ໓ ເປັນໂລກຸດຕະຣະ ອິນຊີ ໙ ທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ອະກຸສົນເຫດ ໓ ເປັນໂລກີຍະ ເຫດ ໖ ທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ກະວະລິງກາຣາຫານເປັນໂລກີຍະ ອາຫານ ໓ ທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ຜັດສະ ໖ ເປັນໂລກີຍະ ມະໂນວິນຍານທາດສໍາຜັດທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ເວທະນາ ໖ ເປັນໂລກີຍະ ເວທະນາທີ່ເກີດຈາກມະໂນວິນຍານທາດສໍາຜັດ ທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ສັນຍາ ໖ ເປັນໂລກີຍະ ສັນຍາເກີດຈາກມະໂນວິນຍານທາດສໍາຜັດທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ເຈຕະນາ ໖ ເປັນໂລກີຍະ ເຈຕະນາທີ່ເກີດຈາກມະໂນວິນຍານທາດສໍາຜັດທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

ຈິດ ໖ ເປັນໂລກີຍະ ມະໂນວິນຍານທາດທີ່ເປັນໂລກີຍະກໍມີ ທີ່ເປັນໂລກຸດຕະຣະກໍມີ

## ສະຫຼຸບຫົວຂໍ້ທໍາທີ່ສະແດງມາ

ອະພິນຍາ ສາຣໍາມະນະ ໒ ທິດຖະ ກຸສະລະ ເວທະນາ
ວິປາກະ ອຸປາທິນນະ ວິຕັກກະ ຮູບ ແລະໂລກີຍະ ດັ່ງນີ້ແລ

**ທໍາມະຫະທະຍະວິພັງ ຈົບບໍລິບູນ**

**ວິພັງຄະປະກອນ ຈົບ**